# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໐

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໔

## ອັງຄຸດຕະຣະນິກາຍ ເອກກະນິບາດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໔໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໔ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

## ໑. ປະຖົມປັນນາດ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔໐

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໔

## ອັງຄຸດຕະຣະນິກາຍ ເອກກະນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

## ໑. ຣູປາທິວັກ

### ໝວດວ່າດ້ວຍຣູບເປັນຕົ້ນທີ່ຄອບງໍາຈິດບຸຣຸດແລະສະຕີ

[໑] ຂ້າພະເຈົ້າ ໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເຮົາບໍ່ເຫັນຮູບອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງໍາຈິດຂອງບຸຣຸດຢູ່ໄດ້ຄືຮູບຂອງສະຕີນີ້ ພິກຂຸທັງຫຼາຍ ຮູບຂອງສະຕີຍ່ອມຄອບງໍາຈິດຂອງບຸຣຸດຢູ່ໄດ້ (໑)

[໔] ເຮົາບໍ່ເຫັນສຽງອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງໍາຈິດຂອງບຸຣຸດຢູ່ໄດ້ ຄື ສຽງຂອງສະຕີນີ້ ສຽງຂອງສະຕີ ຍ່ອມຄອບງໍາຈິດຂອງບຸຣຸດຢູ່ໄດ້ (໔)

[໓] ເຮົາບໍ່ເຫັນກິ່ນອື່ນ ແມ່ນແນວໜຶ່ງ ທີ່ຈະຄອບງໍາຈິດຂອງບຸຣຸດຢູ່ໄດ້ ຄື ກິ່ນຂອງສະຕີນີ້ ກິ່ນຂອງສະຕີ ຍ່ອມຄອບງໍາຈິດຂອງບຸຣຸດຢູ່ໄດ້ (໓)

[໔] ເຮົາບໍ່ເຫັນຣົດອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງຳຈິດຂອງບຸຣຸດຢູ່ໄດ້ ຄື ຣົດຂອງສະຕີນີ້ ຣົດຂອງສະຕີຍ່ອມຄອບງຳຈິດຂອງບຸຣຸດຢູ່ໄດ້ (໔)

[໕] ເຮົາບໍ່ເຫັນໂຜດຖັບພະ (ການສຳຜັດທາງກາຍ) ອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງຳຈິດຂອງບຸຣຸດຢູ່ໄດ້ ຄື ໂຜດຖັບພະຂອງສະຕີນີ້ ໂຜດຖັບພະຂອງສະຕີ ຍ່ອມຄອບງຳຈິດຂອງບຸຣຸດຢູ່ໄດ້ (໕)

[໖] ເຮົາບໍ່ເຫັນຮູບອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງຳຈິດຂອງສະຕີຢູ່ໄດ້ ຄື ຮູບຂອງບຸຣຸດນີ້ ຮູບຂອງບຸຣຸດ ຍ່ອມຄອບງຳຈິດຂອງສະຕີຢູ່ໄດ້ (໖)

[໗] ເຮົາບໍ່ເຫັນສຽງອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງຳຈິດຂອງສະຕີຢູ່ໄດ້ ຄື ສຽງບຸຣຸດນີ້ ສຽງຂອງບຸຣຸດຍ່ອມຄອບງຳຈິດຂອງສະຕີຢູ່ໄດ້ (໗)

[໘] ເຮົາບໍ່ເຫັນກິ່ນອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງຳຈິດຂອງສະຕີຢູ່ໄດ້ ຄື ກິ່ນຂອງບຸຣຸດນີ້ ກິ່ນຂອງບຸຣຸດ ຍ່ອມຄອບງຳຈິດຂອງສະຕີຢູ່ໄດ້ (໘)

[໙] ເຮົາບໍ່ເຫັນຣົດອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງຳຈິດຂອງສະຕີຢູ່ໄດ້ ຄື ຣົດຂອງບຸຣຸດນີ້ ຣົດຂອງບຸຣຸດ ຍ່ອມຄອບງຳຈິດຂອງສະຕີຢູ່ໄດ້ (໙)

[໑໐] ເຮົາບໍ່ເຫັນໂຜດຖັບພະອື່ນ ແມ່ນວ່າແນວໜຶ່ງ ທີ່ຈະຄອບງຳຈິດຂອງສະຕີຢູ່ໄດ້ຄື ໂຜດຖັບພະຂອງບຸຣຸດນີ້ ໂຜດຖັບພະຂອງບຸຣຸດ ຍ່ອມຄອບງຳຈິດຂອງສະຕີຢູ່ໄດ້ (໑໐)

**ຮູປາທິວັກທີ ໑ ຈົບ**

# ໒. ນີວະຣະນະປະຫານະວັກ

## ໝວດວ່າດ້ວຍທຳເປັນເຫດລະນິວອນ

[໑໑] ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ພິກຂຸທັງຫຼາຍ ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ການສັນທະ (ຄວາມພໍໃຈໃນການ) ທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຄື ສຸພະນິມິດນີ້ ເມື່ອມະນະສິການສຸພະນິມິດໂດຍບໍ່ແຍບຄາຍ ການສັນທະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະ ທີ່ເກີດຂຶ້ນແລ້ວ ກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ (໑)

[໑໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ທີ່ເປັນເຫດໃຫ້ພະຍາບາດ (ຄວາມຄິດຮ້າຍ) ທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປ ເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນຄື ປະຕິຄະນິມິດ ນີ້ ເມື່ອມະນະສິການປະຕິຄະນິມິດໂດຍບໍ່ແຍບຄາຍ ພະຍາບາດທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ (໔)

[໑໓] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ທີ່ເປັນເຫດໃຫ້ຖີນະມິດທະ (ຄວາມທໍ້ຖອຍແລະງ່ວງເຫງົາ) ທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນຄືຄວາມບໍ່ຍິນດີ ຄວາມຂີ້ຄ້ານ ຄວາມເມື່ອຍຂົບຂອງຮ່າງກາຍ ຄວາມເມົາ ອາຫານ ແລະ ຄວາມທີ່ຈິດທໍ້ຖອຍນີ້ເມື່ອມີຈິດທໍ້ຖອຍ ຖີນະມິດທະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະ ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ (໓)

[໑໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ທີ່ເປັນເຫດໃຫ້ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) ທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຄື ຄວາມບໍ່ສະຫງົບແຫ່ງຈິດນີ້ ເມື່ອມີຈິດບໍ່ສະຫງົບ ອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວ ກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ (໔)

[໑໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ທີ່ເປັນເຫດໃຫ້ວິຈິກິດສາ (ຄວາມລັງເລສົງໄສ) ທີ່ ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປ ເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຄື ອະໂຍນິໂສມະນະສິການ (ການມະນະສິການໂດຍບໍ່ແຍບຄາຍ) ນີ້ເມື່ອມະນະສິການໂດຍບໍ່ແຍບຄາຍ ວິຈິກິດສາທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວ ກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ (໕)

[໑໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກາມສັນທະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້ຄືອະສຸພະນິມິດ ນີ້ເມື່ອມະນະສິການອະສຸພະນິມິດໂດຍແຍບຄາຍ ກາມສັນທະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍລະໄດ້ (໖)

[໑໗] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ທີ່ເປັນເຫດໃຫ້ພະຍາບາດທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້ ຄື ເມດຕາເຈໂຕວິມຸດຕິນີ້ ເມື່ອມະນະສິການເມດຕາເຈໂຕວິມຸດຕິ ໂດຍແຍບຄາຍ ພະຍາບາດທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍລະໄດ້ (໗)

[໑໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ທີ່ເປັນເຫດໃຫ້ຖີນະມິດທະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້ ຄື ຄວາມລິເລີ່ມ ຄວາມພາກພຽນ ຄວາມບາກບັ່ນນີ້ເມື່ອຜາຣົບຄວາມພຽນແລ້ວ ຖີນະມິດທະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍລະໄດ້ (໘)

[໑໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດຂຶ້ນ ກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວ ກໍລະໄດ້ຄືຄວາມສະງົບແຫ່ງຈິດນີ້ ເມື່ອມີຈິດສະງົບແລ້ວ ອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍລະໄດ້ (໙)

[໒໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ວິຈິກິດສາທີ່ຍັງບໍ່ເກີດຂຶ້ນ ກໍບໍ່ເກີດຂຶ້ນຫຼືທີ່ເກີດຂຶ້ນແລ້ວ ກໍລະໄດ້ຄືໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ) ນີ້ ເມື່ອມະນະສິການໂດຍແຍບຄາຍ ວິຈິກິດສາທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍລະໄດ້ (໑໐)

**ນີວະຣະນະປະຫານະວັກທີ ໒ ຈົບ**

# ໓. ອະກຳມະນີຍະວັກ

## ໝວດວ່າດ້ວຍຈິດທີ່ບໍ່ຄວນແກ່ການໃຊ້ງານ

[໒໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ຈະເລີນແລ້ວ ຍ່ອມບໍ່ຄວນແກ່ການໃຊ້ງານ ຄື ຈິດນີ້ຈິດທີ່ບໍ່ໄດ້ຈະເລີນແລ້ວຍ່ອມບໍ່ຄວນແກ່ການໃຊ້ງານ (໑)

[໒໒] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ຈະເລີນແລ້ວ ຍ່ອມຄວນແກ່ການໃຊ້ງານຄືຈິດນີ້ຈິດທີ່ໄດ້ຈະເລີນແລ້ວ ຍ່ອມຄວນແກ່ການໃຊ້ງານ (໒)

[໒໓] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ຈະເລີນແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຈິດນີ້ ຈິດທີ່ບໍ່ໄດ້ຈະເລີນແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໓)

[໒໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ຈະເລີນແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍຄືຈິດນີ້ ຈິດທີ່ໄດ້ຈະເລີນແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໔)

[໒໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ຈະເລີນ ບໍ່ຜາກົດແຈ້ງແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຈິດນີ້ ຈິດທີ່ບໍ່ໄດ້ຈະເລີນ ບໍ່ຜາກົດແຈ້ງແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໕)

[໒໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ຈະເລີນຜາກົດຊັດແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍຄືຈິນີ້ ຈິດທີ່ໄດ້ຈະເລີນຜາກົດຊັດແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໖)

[໔໗] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ຈະເລີນບໍ່ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຈິດນີ້ ຈິດທີ່ບໍ່ໄດ້ຈະເລີນບໍ່ໄດ້ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໗)

[໔໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍຄືຈິດນີ້ ຈິດທີ່ໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໘)

[໔໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ຍ່ອມນຳທຸກາມາໃຫ້ຄືຈິດນີ້ ຈິດທີ່ບໍ່ໄດ້ຈະເລີນບໍ່ໄດ້ເຮັດໃຫ້ຫຼາຍແລ້ວ ຍ່ອມນຳທຸກາມາໃຫ້ (໙)

[໓໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມນຳສຸກາມາໃຫ້ຄືຈິດນີ້ ຈິດທີ່ໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມນຳສຸກາມາໃຫ້ (໑໐)

**ອະກຳມະນີຍະວັກທີ່ ໓ ຈົບ**

# ໔. ອະທັນຕະວັກ

## ໝວດວ່າດ້ວຍຈິດທີ່ບໍ່ໄດ້ເຝິກ

[໓໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ເຝິກແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຈິດນີ້ ຈິດທີ່ບໍ່ໄດ້ເຝິກແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑)

[໓໒] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ເຝິກແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍຄືຈິດນີ້ຈິດທີ່ໄດ້ເຝິກແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໒)

[໓໓] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ຄຸ້ມຄອງແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຈິດນີ້ ຈິດທີ່ບໍ່ໄດ້ຄຸ້ມຄອງແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໓)

[໓໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ຄຸ້ມຄອງແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍຄືຈິດນີ້ ຈິດທີ່ໄດ້ຄຸ້ມຄອງແລ້ວຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໔)

[໓໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ຖືຮັກສາແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຈິດນີ້ ຈິດທີ່ບໍ່ໄດ້ຖືຮັກສາແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໕)

[໓໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ຖືຮັກສາແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍຄືຈິດນີ້ ຈິດທີ່ໄດ້ຖືຮັກສາແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໖)

[໓໗] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ສັງລວມແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຈິດນີ້ ຈິດທີ່ບໍ່ໄດ້ສັງລວມແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໗)

[໓໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ສັງລວມແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍຄືຈິດນີ້ຈິດທີ່ໄດ້ສັງລວມແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໘)

[໓໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ບໍ່ໄດ້ເຝິກ ບໍ່ໄດ້ຄຸ້ມຄອງ ບໍ່ໄດ້ຖືຮັກສາ ບໍ່ໄດ້ສັງລວມແລ້ວ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຈິດນີ້ ຈິດທີ່ບໍ່ໄດ້ເຝິກ ບໍ່ໄດ້ຄຸ້ມຄອງ ບໍ່ໄດ້ຖືຮັກສາ ບໍ່ໄດ້ສັງລວມແລ້ວຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໙)

[໔໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ໄດ້ເຝິກ ໄດ້ຄຸ້ມຄອງ ໄດ້ຖືຮັກສາ ໄດ້ສັງລວມແລ້ວຍ່ອມເປັນໄປເພື່ອປະໂຫຍດຫຼາຍຄືຈິດນີ້ຈິດທີ່ໄດ້ເຝິກ ໄດ້ຄຸ້ມຄອງ ໄດ້ຖືຮັກສາ ໄດ້ສັງລວມແລ້ວຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໐)

**ອະທັນຕະວັກທີ ໔ ຈົບ**

# ໕. ປະນິຫິຕະອັດສະວັກ

## ໝວດວ່າດ້ວຍຜົນແຫ່ງຈິດທີ່ຕັ້ງໄວ້ຜິດແລະຖືກ

[໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍ ທີ່ເດືອຍເຂົ້າສາລີຫຼືເດືອຍເຂົ້າໜຽວທີ່ບຸກຄົນຕັ້ງໄວ້ບໍ່ກົງ ຈັກບໍ່ປັກມື ຫຼື ຕີນທີ່ໄປກະທົບເຂົ້າ ຫຼື ເຮັດໃຫ້ເລືອດອອກໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຕັ້ງເດືອຍເຂົ້າໄວ້ບໍ່ກົງ ແມ່ນສັນໃດ ເປັນໄປບໍ່ໄດ້ເລີຍທີ່ພິກຂຸອົງນັ້ນມີຈິດທີ່ຕັ້ງໄວ້ຜິດຈັກທຳລາຍອະວິດຊາ (ຄວາມບໍ່ຮູ້ແຈ້ງ) ໃຫ້ວິດຊາ (ຄວາມຮູ້ແຈ້ງ) ເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຕັ້ງຈິດໄວ້ຜິດ ສັນນັ້ນຄືກັນ (໑)

[໔໒] ເປັນໄປໄດ້ທີ່ເດືອຍເຂົ້າສາລີຫຼືເດືອຍເຂົ້າໜຽວທີ່ບຸກຄົນຕັ້ງໄວ້ກົງຈັກປັກມື ຫຼືຕີນທີ່ໄປກະທົບເຂົ້າ ຫຼືເຮັດໃຫ້ເລືອດອອກ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຕັ້ງເດືອຍເຂົ້າໄວ້ກົງ ແມ່ນສັນໃດ ເປັນໄປໄດ້ທີ່ພິກຂຸອົງນັ້ນມີຈິດທີ່ຕັ້ງໄວ້ຖືກຈັກທຳລາຍອະວິດຊາ ໃຫ້ວິດຊາເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຕັ້ງຈິດໄວ້ຖືກ ຄືກັນສັນນັ້ນ (໒)

[໔໓] ເຮົາກໍານົດຈິດ (ຂອງຜູ້ອື່ນ) ດ້ວຍຈິດ (ຂອງຕົນ) ແນວນີ້ ແລ້ວຍ່ອມຮູ້ແຈ້ງບຸກຄົນລາງຄົນໃນໂລກນີ້ ຜູ້ມີຈິດອັນໂທສະປະທຸດສະຮ້າຍແລ້ວ ຖ້າບຸກຄົນນີ້ຕາຍໃນສະໄໝນີ້ຍ່ອມດໍາລົງຢູ່ໃນນະຣົກຄືຖືກນໍາໄປຝັງໄວ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນວ່າຈິດຂອງບຸກຄົນນັ້ນ ຖືກໂທສະປະທຸດສະຮ້າຍ ກໍຍ້ອນເຫດທີ່ຈິດຍັງຄິດປະທຸດສະຮ້າຍ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ (ພາວະຫຼືທີ່ອັນປາສະຈາກຄວາມຈະເລີນ) ທຸກຄະຕິ (ພາວະຫຼືທີ່ຊົ່ວ) ວິນິບາດ (ທີ່ອັນມີແຕ່ຄວາມຮ້ອນຮົນ) ນະຣົກ (໓)

[໔໔] ເຮົາກໍານົດຈິດ (ຂອງຜູ້ອື່ນ)ດ້ວຍຈິດ(ຂອງຕົນ)ແນວນີ້ແລ້ວຍ່ອມຮູ້ແຈ້ງບຸກຄົນລາງຄົນໃນໂລກນີ້ຜູ້ມີຈິດຜ່ອງໃສ ຖ້າບຸກຄົນນີ້ຕາຍໃນສະໄໝນີ້ຍ່ອມດໍາລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນວ່າຈິດຂອງເຂົາຜ່ອງໃສ ກໍຍ້ອນເຫດ ທີ່ຈິດຜ່ອງໃສ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ (໔)

[໔໕] ແມ່ນໍ້າທີ່ຂຸ່ນມົວ ບໍ່ໃສສະອາດ ເປັນຕົມ ບຸກຄົນຜູ້ມີຕາດີ ຢືນຢູ່ເທິງຝັ່ງ ແນມບໍ່ເຫັນຫອຍໂຂ່ງ ແລະຫອຍກາບແດ່ ກ້ອນຫີນ ແລະກະເບື້ອງຖ້ວຍແດ່ ຝູງປາທີ່ລອຍໄປແລະຢຸດຢູ່ແດ່ ໃນແມ່ນໍ້ານັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນນໍ້າຂຸ່ນມົວ ແມ່ນສັນໃດ ພິກຂຸອົງນັ້ນ ກໍຄືກັນສັນນັ້ນ ເປັນໄປບໍ່ໄດ້ເລີຍ ທີ່ຈັກຮູ້ປະໂຫຍດຕົນ ຮູ້ປະໂຫຍດຜູ້ອື່ນ ຮູ້ປະໂຫຍດທັງສອງຫຼືຈັກເຮັດ ໃຫ້ແຈ້ງ ເຊິ່ງຍານທັດສະນະທີ່ປະເສີດອັນສາມາດ ອັນວິເສດຍິ່ງກວ່າທໍາຂອງມະນຸດ ດ້ວຍຈິດທີ່ຂຸ່ນມົວ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຈິດຂຸ່ນມົວ (໕)

[໔໖] ແມ່ນໍ້າທີ່ບໍ່ຂຸ່ນມົວ ໃສສະອາດ ບຸກຄົນຜູ້ມີຕາດີຢືນຢູ່ເທິງຝັ່ງ ເພິ່ງແນມເຫັນຫອຍໂຂ່ງແລະຫອຍກາບແດ່ ກ້ອນຫີນແລະກະເບື້ອງຖ້ວຍແດ່ ຝູງປາທີ່ລອຍໄປແລະຢຸດຢູ່ແດ່ ໃນແມ່ນໍ້ານັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນນໍ້າບໍ່ຂຸ່ນມົວ ແມ່ນສັນໃດ ພິກຂຸອົງນັ້ນ ກໍຄືກັນສັນນັ້ນ ເປັນໄປໄດ້ທີ່ຈັກຮູ້ປະໂຫຍດຕົນ ຮູ້ປະໂຫຍດຜູ້ອື່ນ ຮູ້ປະໂຫຍດທັງສອງ ຫຼື ຈັກເຮັດໃຫ້ແຈ້ງເຊິ່ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທໍາຂອງມະນຸດ ດ້ວຍຈິດທີ່ບໍ່ຂຸ່ນມົວ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຈິດບໍ່ຂຸ່ນມົວ (໖)

[໔໗] ບັນດິດກ່າວວ່າຕົ້ນຈັນເປັນຕົ້ນໄມ້ທີ່ເລີດກວ່າຕົ້ນໄມ້ທຸກຊະນິດ ຍ້ອນເປັນຂອງອ່ອນແລະໃຊ້ງານໄດ້ດີ ແມ່ນສັນໃດ ເຮົາບໍ່ເຫັນທໍາອື່ນ ແມ່ນແນວໜຶ່ງທີ່ໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ເປັນຂອງອ່ອນແລະຄວນແກ່ການໃຊ້ງານຄືຈິດນີ້ຈິດທີ່ໄດ້ຈະເລີນເຮັດໃຫ້ຫຼາຍແລ້ວຍ່ອມເປັນຂອງອ່ອນແລະຄວນແກ່ການໃຊ້ງານ (໗)

[໔໘] ເຮົາບໍ່ເຫັນທໍາອື່ນ ແມ່ນແນວໜຶ່ງທີ່ປ່ຽນແປງໄວຄືຈິດນີ້ ຈິດນີ້ປ່ຽນແປງໄດ້ໄວຈົນປຽບທຽບກັບອັນໃດບໍ່ໄດ້ງ່າຍ ໆ (໘)

[໔໙] ຈິດນີ້ຜຸດຜ່ອງ ແຕ່ຈິດນີ້ເອງເສົ້າໝອງໄດ້ ຍ້ອນອຸປະກິເລດທີ່ເກີດຂຶ້ນພາຍຫຼັງ (໙)

[໕໐] ຈິດນີ້ຜຸດຜ່ອງ ແລະຈິດນີ້ເອງ ສາມາດລຸດພົ້ນໄດ້ຈາກອຸປະກິເລດທີ່ເກີດຂຶ້ນພາຍຫຼັງ (໑໐)

**ປະນິຫິຕະອັດສະວັກທີ ໕ ຈົບ**

# ໖. ອັດສະຣາສັງຄາຕະວັກ

## ໝວດວ່າດ້ວຍຜົນແຫ່ງຈິດຊົ່ວລັດນີ້ວມືດຽວ

[໕໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍຈິດນີ້ຜຸດຜ່ອງ ແຕ່ຈິດນີ້ເອງເສົ້າໝອງ ຍ້ອນອຸປະກິເລດທີ່ເກີດຂຶ້ນພາຍຫຼັງ ປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມບໍ່ຮູ້ຈິດນັ້ນຕາມຄວາມເປັນຈິງ ຍ້ອນເຫດນັ້ນ ເຮົາຈຶ່ງກ່າວວ່າ “ປຸຖຸຊົນຜູ້ບໍ່ໄດ້ສະດັບຍ່ອມບໍ່ມີການອົບຮົມຈິດ” (໑)

[໕໒] ຈິດນີ້ຜຸດຜ່ອງ ແລະຈິດນີ້ອງ ສາມາດລຸດພົ້ນໄດ້ຈາກອຸປະກິເລດທີ່ເກີດຂຶ້ນມາພາຍຫຼັງ ອະຣິຍະສາວົກຜູ້ໄດ້ສະດັບຍ່ອມຮູ້ຈິດນັ້ນຕາມຄວາມເປັນຈິງ ຍ້ອນເຫດນັ້ນ ເຮົາຈຶ່ງກ່າວວ່າ “ອະຣິຍະສາວົກຜູ້ໄດ້ສະດັບຍ່ອມມີການອົບຮົມຈິດ” (໒)

[໕໓] ຖ້າພິກຂຸເສບເມດຕາຈິດ ແມ່ນຊົ່ວລັດນີ້ວມືດຽວ ພິກຂຸນີ້ເຮົາຮຽກວ່າ ຢູ່ບໍ່ຫ່າງຈາກຊານ ເຮັດຕາມຄຳສອນຂອງພຣະສາດສະດາ ປະຕິບັດຕາມໂອວາດ ສັນອາຫານບິນທະບາດຂອງຊາວບ້ານ ບໍ່ສູນເປົ່າ ບໍ່ຈຳເປັນຕ້ອງເວົ້າເຖິງພິກຂຸຜູ້ເຮັດເມດຕາຈິດນັ້ນໃຫ້ຫຼາຍ (໓)

[໕໔] ຖ້າພິກຂຸຈະເລີນເມດຕາຈິດແມ່ນຊົ່ວລັດນີ້ວມືດຽວ ພິກຂຸນີ້ເຮົາຮຽກວ່າ ຢູ່ບໍ່ຫ່າງຈາກຊານ ເຮັດຕາມຄຳສອນຂອງພຣະສາດສະດາ ປະຕິບັດຕາມໂອວາດ ສັນອາຫານບິນທະບາດຂອງຊາວບ້ານບໍ່ສູນເປົ່າ ບໍ່ຈຳເປັນຕ້ອງເວົ້າເຖິງພິກຂຸຜູ້ເຮັດເມດຕາຈິດນັ້ນໃຫ້ຫຼາຍ (໔)

[໕໕] ຖ້າພິກຂຸມະນະສິການເມດຕາຈິດແມ່ນຊົ່ວລັດນີ້ວມືດຽວ ພິກຂຸນີ້ເຮົາຮຽກວ່າ ຢູ່ບໍ່ຫ່າງຈາກຊານ ເຮັດຕາມຄຳສອນຂອງພຣະສາດສະດາ ປະຕິບັດຕາມໂອວາດ ສັນອາຫານບິນທະບາດຂອງຊາວບ້ານບໍ່ສູນເປົ່າ ບໍ່ຈຳເປັນຕ້ອງເວົ້າເຖິງພິກຂຸຜູ້ເຮັດເມດຕາຈິດນັ້ນໃຫ້ຫຼາຍ (໕)

[໕໖] ອະກຸສົນທຳທັງຫຼາຍທີ່ເປັນສ່ວນອະກຸສົນ ທີ່ເປັນຝ່າຍອະກຸສົນທັງໝົດ ມີໃຈເປັນຫົວໜ້າ ໃຈເກີດກ່ອນທຳເຫຼົ່ານັ້ນ ອະກຸສົນທຳທັງຫຼາຍເກີດຂຶ້ນຮ່ວມກັນພາຍຫຼັງ (໖)

[໕໗] ກຸສົນທຳທັງຫຼາຍ ທີ່ເປັນສ່ວນກຸສົນ ທີ່ເປັນຝ່າຍກຸສົນທັງໝົດ ມີໃຈເປັນຫົວໜ້າ ໃຈເກີດກ່ອນທຳເຫຼົ່ານັ້ນ ກຸສົນທຳທັງຫຼາຍເກີດຂຶ້ນຮ່ວມກັນພາຍຫຼັງ (໗)

[໕໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ເປັນເຫດໃຫ້ກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປຄືຄວາມຜະໝາດນີ້ ເມື່ອຜະໝາດແລ້ວ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໘)

[໕໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼືເປັນເຫດໃຫ້ອະກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປຄືຄວາມບໍ່ຜະໝາດນີ້ ເມື່ອບໍ່ຜະໝາດແລ້ວ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະອະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໙)

[໖໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ເປັນເຫດໃຫ້ກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປຄືຄວາມຂີ້ຄ້ານນີ້ ເມື່ອຂີ້ຄ້ານອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໑໐)

**ອັດສະຣາສັງຄາຕະວັກທີ ໖ ຈົບ**

# ໗. ວິຣິຍາຣຳພາທິວັກ

## ໝວດວ່າດ້ວຍການຜາຣົບຄວາມພຽນເປັນຕົ້ນ

[໖໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ເປັນເຫດໃຫ້ອະກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປຄືການຜາຣົບຄວາມພຽນນີ້ ເມື່ອຜາຣົບຄວາມພຽນ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະອະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໑)

[໖໒] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ເປັນເຫດໃຫ້ກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ຄວາມມັກຫຼາຍນີ້ເມື່ອມັກຫຼາຍ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໒)

[໖໓] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼືເປັນເຫດໃຫ້ອະກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ຄວາມມັກໜ້ອຍນີ້ເມື່ອມັກໜ້ອຍ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະອະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໓)

[໖໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ເປັນເຫດໃຫ້ກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ຄວາມບໍ່ສັນໂດດນີ້ເມື່ອບໍ່ສັນໂດດ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໔)

[໖໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼືເປັນເຫດໃຫ້ອະກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ຄວາມສັນໂດດນີ້ ເມື່ອສັນໂດດ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະອະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໕)

[໖໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼືເປັນເຫດໃຫ້ກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປຄືອະໂຍນິໂສມະນະສິການ (ການມະນະສິການໂດຍບໍ່ແຍບຄາຍ)ນີ້ເມື່ອມະນະສິການໂດຍບໍ່ແຍບຄາຍ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໖)

[໖໗] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼືເປັນເຫດໃຫ້ອະກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ) ນີ້ເມື່ອມະນະສິການໂດຍແຍບຄາຍ ກຸສົນທຳທີ່ຍັງບໍ່ເກີດຂຶ້ນ ກໍເກີດຂຶ້ນ ແລະອະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໗)

[໖໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ເປັນເຫດໃຫ້ກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ຄວາມບໍ່ມີສຳປະຊັນຍະ (ຄວາມຮູ້ແຈ້ງ) ນີ້ເມື່ອບໍ່ມີສຳປະຊັນຍະ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໘)

[໖໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼືເປັນເຫດໃຫ້ອະກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ຄວາມມີສຳປະຊັນຍະນີ້ ເມື່ອມີສຳປະຊັນຍະ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະອະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໙)

[໗໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍ ເກີດຂຶ້ນ ຫຼືເປັນເຫດໃຫ້ກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ຄວາມມິປາປະມິດ (ມິດຊົ່ວ) ນີ້ ເມື່ອມີປາປະມິດ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໑໐)

**ວີຣິຍາຣຳພາທິວັກທີ ໗ ຈົບ**

# ໗. ກັນລະຍານະມິດຕາທິວັກ

## ໝວດວ່າດ້ວຍກັນລະຍານະມິດເປັນຕົ້ນ

[ກ໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ເປັນເຫດໃຫ້ອະກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປຄືຄວາມມີກັນລະຍານະມິດ (ມິດດີ) ນີ້ ເມື່ອມີກັນລະຍານະມິດ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະອະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໑)

[ກ໒] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ເປັນເຫດໃຫ້ກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ການປະກອບອະກຸສົນທຳສະເໝີ ໆ ແລະການບໍ່ປະກອບກຸສົນທຳສະເໝີ ໆ ນີ້ຍ້ອນການປະກອບອະກຸສົນທຳສະເໝີ ໆ ແລະການບໍ່ປະກອບກຸສົນທຳສະເໝີ ໆ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໒)

[ກ໓] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼືເປັນເຫດໃຫ້ອະກຸສົນທຳທີ່ເກີດຂຶ້ນແລ້ວເສື່ອມໄປ ຄື ການປະກອບກຸສົນທຳສະເໝີ ໆ ແລະການບໍ່ປະກອບອະກຸສົນທຳສະເໝີ ໆ ນີ້ ຍ້ອນການປະກອບກຸສົນທຳສະເໝີ ໆ ແລະການບໍ່ປະກອບອະກຸສົນທຳສະເໝີ ໆ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະອະກຸສົນທຳທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໓)

[ກ໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້) ທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ເປັນເຫດໃຫ້ໂພດຊົງທີ່ເກີດຂຶ້ນແລ້ວ ບໍ່ເຖິງຄວາມຈະເລີນເຕັມທີ່ຄືອະໂຍນິໂສມະນະສິການ (ການມະນະສິການໂດຍບໍ່ແຍບຄາຍ)ນີ້ເມື່ອມະນະສິການໂດຍບໍ່ແຍບຄາຍ ໂພດຊົງທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍບໍ່ເຖິງຄວາມຈະເລີນເຕັມທີ່ (໔)

[ກ໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ໂພດຊົງທີ່ຍັງບໍ່ເກີດຂຶ້ນ ກໍເກີດຂຶ້ນຫຼືເປັນເຫດໃຫ້ໂພດຊົງທີ່ເກີດຂຶ້ນແລ້ວເຖິງຄວາມຈະເລີນເຕັມທີ່ ຄື ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ) ນີ້ ເມື່ອມະນະສິການໂດຍແຍບຄາຍ ໂພດຊົງທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍເຖິງຄວາມຈະເລີນເຕັມທີ່ (໕)

[໗໖] ຄວາມເສື່ອມຍາດເປັນເລື້ອງເລັກໜ້ອຍ ແຕ່ຄວາມເສື່ອມປັນຍາຊົ່ວຮ້າຍກວ່າຄວາມເສື່ອມທັງຫຼາຍ (໖)

[໗໗] ຄວາມຈະເລີນດ້ວຍຍາດເປັນເລື້ອງເລັກໜ້ອຍ ແຕ່ຄວາມຈະເລີນດ້ວຍປັນຍາຍອດຍັ່ງມກວ່າຄວາມຈະເລີນທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍຈັກຈະເລີນດ້ວຍຄວາມຈະເລີນທາງປັນຍາ" ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ (໗)

[໗໘] ຄວາມເສື່ອມໂພຄະຊັບເປັນເລື້ອງເລັກໜ້ອຍ ແຕ່ຄວາມເສື່ອມປັນຍາຊົ່ວຮ້າຍກວ່າຄວາມເສື່ອມທັງຫຼາຍ (໘)

[໗໙] ຄວາມຈະເລີນດ້ວຍໂພຄະຊັບເປັນເລື້ອງເລັກໜ້ອຍ ແຕ່ຄວາມຈະເລີນດ້ວຍປັນຍາປະເສີດກວ່າຄວາມຈະເລີນທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍ ຈັກຈະເລີນດ້ວຍຄວາມຈະເລີນທາງປັນຍາ" ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ (໙)

[໘໐] ຄວາມເສື່ອມຍົດເປັນເລື້ອງເລັກໜ້ອຍ ແຕ່ຄວາມເສື່ອມປັນຍາຊົ່ວຮ້າຍກວ່າຄວາມເສື່ອມທັງຫຼາຍ (໑໐)

**ກັນລະຍານະມິດຕາທິວັກ ທີ ໘ ຈົບ**

# ໙. ປະມາທາທິວັກ

## ໝວດວ່າດ້ວຍຄວາມຜະໝາດເປັນຕົ້ນ

[໘໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມຈະເລີນດ້ວຍຍົດເປັນເລື້ອງເລັກໜ້ອຍ ແຕ່ຄວາມຈະເລີນດ້ວຍປັນຍາປະເສີດກວ່າຄວາມຈະເລີນທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາທັງຫຼາຍ ຈັກຈະເລີນດ້ວຍຄວາມຈະເລີນທາງປັນຍາ" ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ (໑)

[໘໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືຄວາມຜະໝາດນີ້ຄວາມຜະໝາດຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໘)

[໘໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍຄື ຄວາມບໍ່ຜະໝາດນີ້ຄວາມບໍ່ຜະໝາດຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໙)

[໗໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ຄວາມຂີ້ຄ້ານນີ້ຄວາມຂີ້ຄ້ານ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໔)

[໗໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ການຜາຣົບຄວາມພຽນນີ້ການຜາຣົບຄວາມພຽນ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໕)

[໗໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ຄວາມມັກຫຼາຍນີ້ຄວາມມັກຫຼາຍ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໖)

[໗໗] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ຄວາມມັກໜ້ອຍນີ້ຄວາມມັກໜ້ອຍຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໗)

[໗໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ຄວາມບໍ່ສັນໂດດນີ້ ຄວາມບໍ່ສັນໂດດຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໘)

[໗໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ຄວາມສັນໂດດນີ້ຄວາມສັນໂດດຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໙)

[໘໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ອະໂຍນິໂສມະນະສິການ (ການມະນະສິການໂດຍບໍ່ແຍບຄາຍ) ນີ້ ອະໂຍນິໂສມະນະສິການຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑໐)

[໘໑] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ) ນີ້ ໂຍນິໂສມະນະສິການ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໑)

[໘໒] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ຄວາມບໍ່ມີສຳປະຊັນຍະນີ້ ຄວາມບໍ່ມີສຳປະຊັນຍະຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑໒)

[໘໓] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ຄວາມມີສຳປະຊັນຍະນີ້ ຄວາມມີສຳປະຊັນຍະຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໓)

[໘໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ຄວາມມີປາປະມິດນີ້ ຄວາມມີປາປະມິດຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑໔)

[໙໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ຄວາມມີກັນລະຍານະມິດນີ້ ຄວາມມີກັນລະຍານະມິດຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໕)

[໙໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄືການປະກອບອະກຸສົນທຳສະເໝີ ໆ ແລະການບໍ່ປະກອບກຸສົນທຳສະເໝີ ໆ ນີ້ການປະກອບອະກຸສົນທຳສະເໝີ ໆ ແລະການບໍ່ປະກອບກຸສົນທຳສະເໝີ ໆ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑໖)

[໙໗] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ການປະກອບກຸສົນທຳສະເໝີ ໆ ແລະການບໍ່ປະກອບອະກຸສົນທຳສະເໝີ ໆ ນີ້ ການປະກອບກຸສົນທຳສະເໝີ ໆ ແລະການບໍ່ປະກອບອະກຸສົນທຳສະເໝີ ໆ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໗)

**ປະມາທາທິວັກທີ ໙ ຈົບ**

# ໑໐. ທຸຕິຍະປະມາທາທິວັກ

## ໝວດວ່າດ້ວຍຄວາມຜະໝາດເປັນຕົ້ນ ໝວດທີ ໔

[໙໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍຄື ຄວາມຜະໝາດນີ້ ຄວາມຜະໝາດຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑)

[໙໙] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ຄວາມບໍ່ຜະໝາດນີ້ ຄວາມບໍ່ຜະໝາດຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໒)

[໑໐໐] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ຄວາມຂີ້ຄ້ານນີ້ ຄວາມຂີ້ຄ້ານຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໓)

[໑໐໑] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ການຜາຣົບຄວາມພຽນນີ້ ການຜາຣົບຄວາມພຽນຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໔)

[໑໐໔] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງ ຯລຯ ຄວາມມັກຫຼາຍ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໕)

[໑໐໕] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງ ຯລຯ ຄວາມມັກໜ້ອຍ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໖)

[໑໐໖] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງ ຯລຯ ຄວາມບໍ່ສັນໂດດຍ່ອມເປັນໄປ ເພື່ອບໍ່ແມ່ນປະໂຫຍດຫຼາຍ (໗)

[໑໐໕] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງ ຯລຯ ຄວາມສັນໂດດ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໘)

[໑໐໖] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງ ຯລຯ ອະໂຍນິໂສມະນະສິການຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໙)

[໑໐໗] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງ ຯລຯ ໂຍນິໂສມະນະສິການ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໐)

[໑໐໘] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງ ຯລຯ ຄວາມບໍ່ມີສໍາປະຊັນຍະ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑໑)

[໑໐໙] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງ ຯລຯ ຄວາມມີສໍາປະຊັນຍະ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໒)

[໑໑໐] ຍ້ອນເວົ້າເຖິງອົງປະກອບພາຍນອກ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ຄວາມມີປາປະມິດນີ້ ຄວາມມີປາປະມິດຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑໓)

[໑໑໑] ຍ້ອນເວົ້າເຖິງອົງປະກອບພາຍນອກ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ຄວາມມີກັນລະຍານະມິດນີ້ ຄວາມມີກັນລະຍານະມິດຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໔)

[໑໑໒] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງທີ່ເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ ຄື ການປະກອບອະກຸສົນທໍາສະເໝີ ໆ ແລະການບໍ່ປະກອບກຸສົນທໍາສະເໝີ ໆ ນີ້ການປະກອບອະກຸສົນທໍາສະເໝີ ໆ ແລະການບໍ່ປະກອບກຸສົນທໍາສະເໝີ ໆ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດຫຼາຍ (໑໕)

[໑໑໓] ຍ້ອນເວົ້າເຖິງອົງປະກອບພາຍໃນ ເຮົາບໍ່ເຫັນອົງປະກອບອື່ນແມ່ນແນວໜຶ່ງທີ່ເປັນໄປເພື່ອປະໂຫຍດຫຼາຍ ຄື ການປະກອບກຸສົນທຳສະເໝີ ໆ ແລະການບໍ່ປະກອບອະກຸສົນທຳສະເໝີ ໆ ນີ້ການປະກອບກຸສົນທຳສະເໝີ ໆ ແລະການບໍ່ປະກອບອະກຸສົນທຳສະເໝີ ໆ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ (໑໖)

[໑໑໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳຄື ຄວາມຜະໝາດນີ້ ຄວາມຜະໝາດ ຍ່ອມເປັນໄປເພື່ອຄວາມເສື່ອມສູນກຫາຍໄປແຫ່ງສັດທຳ (໑໗)

[໑໑໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ ຄື ຄວາມບໍ່ຜະໝາດນີ້ຄວາມບໍ່ຜະໝາດຍ່ອມເປັນໄປເພື່ອຄວາມ ດຳລົງໝັ້ນບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ (໑໘)

[໑໑໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອຄວາມເສື່ອມສູນ ຫາຍໄປແຫ່ງສັດທຳ ຄື ຄວາມຂີ້ຄ້ານນີ້ຄວາມຂີ້ຄ້ານຍ່ອມເປັນໄປເພື່ອຄວາມເສື່ອມສູນ ຫາຍໄປແຫ່ງສັດທຳ (໑໙)

[໑໑໗] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ ຄື ການຜາຮົບຄວາມພຽນນີ້ ການຜາຮົບຄວາມພຽນ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ (໒໐)

[໑໑໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ຄວາມມັກຫຼາຍ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ (໒໑)

[໑໑໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ຄວາມມັກໜ້ອຍ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ (໒໒)

[໑໒໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ຄວາມບໍ່ສັນໂດດຍ່ອມເປັນໄປເພື່ອຄວາມເສື່ອມສູນ ຫາຍໄປແຫ່ງສັດທຳ (໒໓)

[໑໒໑] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ຄວາມສັນໂດດຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ (໒໔)

[໑໒໒] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ອະໂຍນິໂຍມະນະສິການຍ່ອມເປັນໄປເພື່ອຄວາມເສື່ອມສູນ ຫາຍໄປແຫ່ງສັດທຳ (໒໕)

[໑໔໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ໂຍນິໂສມະນະສິການຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ (໔໖)

[໑໔໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ຄວາມບໍ່ມີສຳປະຊັນຍະຍ່ອມເປັນໄປເພື່ອຄວາມເສື່ອມສູນ ຫາຍໄປແຫ່ງສັດທຳ (໔໗)

[໑໔໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ຄວາມມີສຳປະຊັນຍະຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ (໔໘)

[໑໔໖] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ຄວາມມີປາປະມິດຍ່ອມເປັນໄປເພື່ອຄວາມເສື່ອມສູນ ຫາຍໄປແຫ່ງສັດທຳ (໔໙)

[໑໔໗] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ຄວາມມີກັນລະຍານະມິດຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ (໕໐)

[໑໔໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງ ໆລໆ ການປະກອບອະກຸສົນທຳສະເໝີ ໆ ແລະການບໍ່ປະກອບກຸສົນທຳສະເໝີ ໆ ຍ່ອມເປັນໄປເພື່ອຄວາມເສື່ອມສູນ ຫາຍໄປແຫ່ງສັດທຳ (໕໑)

[໑໔໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ ຄື ການປະກອບກຸສົນທຳສະເໝີ ໆ ແລະການບໍ່ປະກອບ ອະກຸສົນທຳສະເໝີ ໆ ນີ້ການປະກອບກຸສົນທຳສະເໝີ ໆ ແລະການບໍ່ປະກອບອະກຸສົນທຳສະເໝີ ໆ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ (໕໔)

**(ຈະຕຸກໂກຕິກະ ຈົບ)**

[໑໕໐] ພິກຂຸພວກທີ່ສະແດງອະທຳວ່າ "ເປັນທຳ" ຊື່ວ່າ ປະຕິບັດເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນເພື່ອທຸກແກ່ເທວະດາ ແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນ ຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ແລະເຮັດໃຫ້ສັດທຳນີ້ສູນຫາຍໄປ (໕໕)

[໑໕໑-໑໕໙] ພິກຂຸພວກທີ່ສະແດງທຳວ່າ "ເປັນອະທຳ" ໆລໆ ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ "ເປັນວິໄນ" ໆລໆ ສະແດງວິໄນວ່າ "ບໍ່ແມ່ນວິໄນ" ໆລໆ ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້" ໆລໆ ສະແດງສິ່ງທີ່ຕະຖາຄົດພາສິດໄວ້ ກ່າວໄວ້ວ່າ "ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້" ໆລໆ ສະແດງກຳທີ່ຕະຖາ

ຄົດບໍ່ໄດ້ປະພຶດປະຕິບັດມາວ່າ "ຕະຖາຄົດໄດ້ປະພຶດປະຕິບັດມາ" ຯລຯ ສະແດງກຳທີ່ຕະຖາຄົດໄດ້ປະພຶດປະຕິບັດມາວ່າ "ຕະຖາຄົດບໍ່ໄດ້ປະພຶດປະຕິບັດມາ" ຯລຯ ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ "ຕະຖາຄົດໄດ້ບັນຍັດໄວ້" ຯລຯ ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າ "ຕະຖາຄົດບໍ່ໄດ້ບັນຍັດໄວ້" ຊື່ວ່າ ປະຕິບັດເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນ ຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ແລະເຮັດໃຫ້ສັດທຳນີ້ສູນຫາຍໄປ (໔໘)

**ທຸຕິຍະປະມາທາທິວັກທີ ໑໐ ຈົບ**

# ໑໑. ອະທຳມະວັກ

## ໝວດວ່າດ້ວຍທຳແລະອະທຳ

[໑໔໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸພວກທີ່ສະແດງອະທຳວ່າ "ເປັນອະທຳ" ຊື່ວ່າ ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນຍ່ອມປະສົບບຸນຫຼວງຫຼາຍ ແລະດຳລົງສັດທຳນີ້ໄວ້ໄດ້ (໑)

[໑໔໑-໑໔໙] ພິກຂຸພວກທີ່ສະແດງທຳວ່າ "ເປັນທຳ" ຯລຯ ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ "ບໍ່ແມ່ນວິໄນ" ຯລຯ ສະແດງວິໄນວ່າ "ເປັນວິໄນ" ຯລຯ ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້" ຯລຯ ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ໄດ້ກ່າວໄວ້" ຯລຯ ສະແດງກຳທີ່ຕະຖາຄົດບໍ່ໄດ້ປະພຶດປະຕິບັດມາວ່າ "ຕະຖາຄົດບໍ່ໄດ້ປະພຶດປະຕິບັດມາ" ຯລຯ ສະແດງກຳທີ່ຕະຖາຄົດໄດ້ປະພຶດປະຕິບັດມາວ່າ "ຕະຖາຄົດໄດ້ປະພຶດປະຕິບັດມາ" ຯລຯ ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ "ຕະຖາຄົດບໍ່ໄດ້ບັນຍັດໄວ້" ຯລຯ ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້" ຊື່ວ່າ ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນ ຍ່ອມປະສົບບຸນຫຼວງຫຼາຍ ແລະດຳລົງສັດທຳນີ້ໄວ້ໄດ້ (໑໐)

**ອະທຳມະວັກທີ ໑໑ ຈົບ**

# ໑໘. ອະນາປັດຕິວັກ

## ໝວດວ່າດ້ວຍອາບັດແລະອະນາບັດ

[໑໕໐-໑໕໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸພວກທີ່ສະແດງສິ່ງທີ່ບໍ່ເປັນອາບັດວ່າ "ເປັນອາບັດ" ຯລຯ ສະແດງອາບັດວ່າ "ບໍ່ເປັນອາບັດ" ຯລຯ ສະແດງອາບັດເບົາວ່າ "ເປັນອາບັດໜັກ" ຯລຯ ສະແດງອາບັດໜັກວ່າ "ເປັນອາບັດເບົາ" ຯລຯ ສະແດງອາບັດຊົ່ວຫຍາບວ່າ "ເປັນອາບັດບໍ່ຊົ່ວຫຍາບ" ຯລຯ ສະແດງອາບັດບໍ່ຊົ່ວຫຍາບວ່າ "ເປັນອາບັດຊົ່ວຫຍາບ" ຯລຯ ສະແດງອາບັດທີ່ມີສ່ວນເຫຼືອວ່າ "ເປັນອາບັດບໍ່ມີສ່ວນເຫຼືອ" ຯລຯ ສະແດງອາບັດທີ່ບໍ່ມີສ່ວນເຫຼືອວ່າ "ເປັນອາບັດມີສ່ວນເຫຼືອ" ຯລຯ ສະແດງອາບັດທີ່ເຮັດຄືນໄດ້ວ່າ "ເປັນອາບັດທີ່ເຮັດຄືນບໍ່ໄດ້" ຯລຯ ສະແດງອາບັດທີ່ເຮັດຄືນບໍ່ໄດ້ວ່າ "ເປັນອາບັດທີ່ເຮັດຄືນໄດ້" ຊື່ວ່າ ປະຕິບັດເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນ ຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ແລະເຮັດໃຫ້ສັດທຳນີ້ສູນຫາຍໄປ (໑໐)

[໑໖໐] ພິກຂຸພວກທີ່ສະແດງສິ່ງທີ່ບໍ່ເປັນອາບັດວ່າ "ບໍ່ເປັນອາບັດ" ຊື່ວ່າ ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນ ຍ່ອມປະສົບບຸນຫຼວງຫຼາຍ ແລະດຳລົງສັດທຳນີ້ໄວ້ໄດ້ (໑໑)

[໑໖໑] ພິກຂຸພວກທີ່ສະແດງອາບັດວ່າ "ເປັນອາບັດ" ຊື່ວ່າ ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນ ຍ່ອມປະສົບບຸນຫຼວງຫຼາຍ ແລະດຳລົງສັດທຳນີ້ໄວ້ໄດ້ (໑໘)

[໑໖໘-໑໖໙] ພິກຂຸພວກທີ່ສະແດງອາບັດເບົາວ່າ "ເປັນອາບັດເບົາ" ຯລຯ ສະແດງອາບັດໜັກວ່າ "ເປັນອາບັດໜັກ" ຯລຯ ສະແດງອາບັດຊົ່ວຫຍາບວ່າ "ເປັນອາບັດຊົ່ວຫຍາບ" ຯລຯ ສະແດງ ອາບັດບໍ່ຊົ່ວຫຍາບວ່າ "ເປັນອາບັດບໍ່ຊົ່ວຫຍາບ" ຯລຯ ສະແດງອາບັດທີ່ມີສ່ວນເຫຼືອວ່າ "ເປັນອາບັດທີ່ມີສ່ວນເຫຼືອ" ຯລຯ ສະແດງອາບັດທີ່ບໍ່ມີສ່ວນເຫຼືອວ່າ "ເປັນອາບັດທີ່ບໍ່ມີສ່ວນເຫຼືອ" ຯລຯ ສະແດງອາບັດທີ່ເຮັດຄືນໄດ້ວ່າ "ເປັນອາບັດທີ່ເຮັດຄືນໄດ້" ຯລຯ ສະແດງອາບັດທີ່ເຮັດຄືນບໍ່ໄດ້ວ່າ "ເປັນອາບັດທີ່ເຮັດຄືນບໍ່ໄດ້" ຊື່ວ່າ ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ

ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນ ຍ່ອມປະສົບບຸນຫຼວງຫຼາຍ ແລະດຳລົງສັດທຳນີ້ໄວ້ໄດ້ (໔໐)

**ອະນາປັດຕິວັກທີ ໑໔ ຈົບ**

# ໑໓. ເອກະປຸກຄະລະວັກ

## ໝວດວ່າດ້ວຍບຸກຄົນຜູ້ເປັນເອກ

[໑໗໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ເປັນເອກ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະມະນຸດທັງຫຼາຍ ບຸກຄົນຜູ້ເປັນເອກຄືໃຜ ຄື ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ບຸກຄົນຜູ້ເປັນເອກນີ້ແລ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ (໑)

[໑໗໑] ຄວາມຜາກົດແຫ່ງບຸກຄົນຜູ້ເປັນເອກຫາໄດ້ຍາກໃນໂລກ ບຸກຄົນຜູ້ເປັນເອກຄື ໃຜ ຄື ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຄວາມຜາກົດແຫ່ງບຸກຄົນຜູ້ເປັນເອກນີ້ແລ ຫາໄດ້ຍາກໃນໂລກ (໒)

[໑໗໒] ບຸກຄົນຜູ້ເປັນເອກ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເປັນອັດສະຣິຍະມະນຸດ ບຸກຄົນ ຜູ້ເປັນເອກຄືໃຜ ຄື ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ບຸກຄົນຜູ້ເປັນເອກນີ້ແລ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເປັນອັດສະຣິຍະມະນຸດ (໓)

[໑໗໓] ການຕາຍຂອງບຸກຄົນຜູ້ເປັນເອກ ເປັນເຫດໃຫ້ຄົນຈຳນວນຫຼາຍພອຍເດືອດຮ້ອນໄປນຳ ບຸກຄົນຜູ້ເປັນເອກຄືໃຜ ຄື ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ການຕາຍຂອງບຸກຄົນຜູ້ເປັນເອກນີ້ແລ ເປັນເຫດໃຫ້ຄົນຈຳນວນຫຼາຍພອຍເດືອດຮ້ອນໄປນຳ (໔)

[໑໗໔] ບຸກຄົນຜູ້ເປັນເອກ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນບໍ່ເປັນທີສອງ ບໍ່ມີສະຫາຍ ບໍ່ມີອັດຕະພາບໃດຄື ບໍ່ມີໃຜປຽບທຽບ ບໍ່ມີຜູ້ເຮັດກິດປຽບທຽບ ຫາບຸກຄົນປຽບທຽບບໍ່ໄດ້ ຫາຜູ້ສະເໝີບໍ່ໄດ້ ສະເໝີກັບບຸກຄົນຜູ້ຫາຜູ້ສະເໝີບໍ່ໄດ້ ເປັນຜູ້ເລີດ ກວ່າສັດສອງຕີນ ບຸກຄົນຜູ້ເປັນເອກຄືໃຜ ຄື ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ບຸກຄົນຜູ້ເປັນເອກນີ້ແລ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນບໍ່ເປັນທີ່ສອງ ບໍ່ມີສະຫາຍ ບໍ່ມີອັດຕະພາບໃດຄື ບໍ່ມີໃຜປຽບທຽບ ບໍ່ມີຜູ້

ເຮັດກິດປຽບທຽບ ຫາບຸກຄົນປຽບທຽບບໍ່ໄດ້ ຫາຜູ້ສະເໝີບໍ່ໄດ້ ສະເໝີກັບບຸກຄົນຜູ້ຫາຜູ້ສະເໝີບໍ່ໄດ້ ເປັນຜູ້ເລີດກວ່າສັດສອງຕີນ (໕)

[໑໗໕-໑໗໖] ຄວາມຜາກົດແຫ່ງບຸກຄົນຜູ້ເປັນເອກເປັນຄວາມຜາກົດແຫ່ງຈັກຂຸອັນຍິ່ງໃຫຍ່ ເປັນຄວາມຜາກົດແຫ່ງແສງສະຫວ່າງອັນຍິ່ງໃຫຍ່ ເປັນຄວາມຜາກົດແຫ່ງໂອພາດອັນຍິ່ງໃຫຍ່ ເປັນຄວາມຜາກົດແຫ່ງອະນຸດຕະຣິຍະ ໖ ເປັນການເຮັດໃຫ້ແຈ້ງປະຕິສຳພິທາ ໔ ເປັນການຮູ້ແຈ່ມແຈ້ງທາດຫຼາຍຊະນິດ ເປັນການຮູ້ແຈ້ງແຈ່ມທາດທີ່ແຕກຕ່າງກັນ ເປັນການເຮັດໃຫ້ແຈ້ງ ຜົນຄືວິດຊາ (ຄວາມຮູ້ແຈ້ງ) ແລະວິມຸດຕິ (ຄວາມລຸດພົ້ນ) ເປັນການເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ແລະອະຣະຫັດຕະຜົນ ບຸກຄົນຜູ້ເປັນເອກຄືໃຜ ຄືພຣະຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ ຍ້ອນຄວາມຜາກົດແຫ່ງບຸກຄົນຜູ້ເປັນເອກນີ້ແລ ຈຶ່ງມີຄວາມຜາກົດແຫ່ງຈັກຂຸອັນຍິ່ງໃຫຍ່ ມີຄວາມຜາກົດແຫ່ງແສງສະຫວ່າງອັນຍິ່ງໃຫຍ່ ມີຄວາມຜາກົດແຫ່ງໂອພາດອັນຍິ່ງໃຫຍ່ ມີຄວາມຜາກົດແຫ່ງອະນຸດຕະຣິຍະ ໖ ມີການເຮັດໃຫ້ແຈ້ງປະຕິສຳພິທາ ໔ ມີການຮູ້ແຈ່ມແຈ້ງທາດຫຼາຍຊະນິດ ມີການຮູ້ແຈ່ມແຈ້ງທາດທີ່ແຕກຕ່າງກັນ ມີການເຮັດໃຫ້ແຈ້ງຜົນຄືວິດຊາແລະວິມຸດຕິ ມີການເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ແລະອະຣະຫັດຕະຜົນ (໖-໑໗)

[໑໗໗] ເຮົາບໍ່ເຫັນບຸກຄົນອື່ນ ແມ່ນຄົນດຽວທີ່ເຜີຍແຜ່ໂດຍຖືກຕ້ອງ ເຊິ່ງທຳມະຈັກອັນປະເສີດທີ່ຕະຖາຄົດປະກາດໄວ້ແລ້ວ ຄື ສາຣີບຸດນີ້ ສາຣີບຸດ ຍ່ອມເຜີຍແຜ່ໂດຍຖືກຕ້ອງເຊິ່ງທຳມະຈັກອັນປະເສີດທີ່ຕະຖາຄົດປະກາດໄວ້ແລ້ວ (໑໘)

**ເອກະປຸກຄະລະວັກທີ ໑໓ ຈົບ**

# ໑໔. ເອຕະທັກຄະວັກ

## ໝວດວ່າດ້ວຍເອຕະທັກຄະ ໑

# ໑. ປະຖົມວັກ

## ໝວດທີ ໑

[໑໘໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອັນຍາໂກນທັນຍະ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ເປັນຣັດຕັນຍູ (໑)

[໑໗໙] ສາຣີບຸດ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ມີປັນຍາຫຼາຍ (໒)

[໑໘໐] ມະຫາໂມກຄັນລານະ ໆລໆ ຜູ້ມີລິດຫຼາຍ (໓)

[໑໘໑] ມະຫາກັດສະປະ ໆລໆ ຜູ້ຊົງທຸດົງ ແລະສັນເສີນຄຸນແຫ່ງທຸດົງ (໔)

[໑໘໒] ອະນຸຣຸດທະ ໆລໆ ຜູ້ມີຕາທິບ (໕)

[໑໘໓] ພັດທິຍະກາລີໂຄທາຍະບຸດ ໆລໆ ຜູ້ເກີດໃນຕະກູນສູງ (໖)

[໑໘໔] ລະກຸນຕະກະພັດທິຍະ ໆລໆ ຜູ້ມີສຽງມ່ວນ (໗)

[໑໘໕] ປິນໂທລະພາຣະທະວາຊະ ໆລໆ ຜູ້ບັນລືສີຫະນາດ (໘)

[໑໘໖] ປຸນນະມັນຕານີບຸດ ໆລໆ ຜູ້ເປັນທຳມະກະຖຶກ (໙)

[໑໘໗] ມະຫາກັດຈານະ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ອະທິບາຍຄວາມໝາຍແຫ່ງທຳທີ່ກ່າວໄວ້ໂດຍຫຍໍ້ໄດ້ພິດສະດານ (໑໐)

**ປະຖົມວັກ ຈົບ**

# ໑໔. ເອຕະທັກຄະວັກ

## ໒. ທຸຕິຍະວັກ

### ໝວດທີ ໒

[໑໘໘] ຈູລະປັນຖະກະ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ສາມາດເນຣະມິດກາຍມະໂນໄມ (໑)

[໑໘໙] ຈູລະປັນຖະກະ ໆລໆ ຜູ້ສະຫຼາດໃນເຈໂຕວິວັດ (໒)

[໒໐໐] ມະຫາປັນຖະກະ ໆລໆ ຜູ້ສະຫຼາດໃນສັນຍາວິວັດ (໓)

[໒໐໑] ສຸພູຕິ ໆລໆ ຜູ້ມີປົກກະຕິຢູ່ດ້ວຍຄວາມບໍ່ມີກິເລດ (໔)

[໒໐໒] ສຸພູຕິ ໆລໆ ຜູ້ເປັນທັກຂີໄນຍະບຸກຄົນ (໕)

[໒໐໓] ເຣວະຕະຂະທິຣະວະນິຍະ ໆລໆ ຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ (໖)

[໒໐໔] ກັງຂາເຣວະຕະ ໆລໆ ຜູ້ຍິນດີໃນຊານ (໗)

[໒໐໕] ໂສນະໂກລິວິສະ ໆລໆ ຜູ້ຜາຣົບຄວາມພຽນ (໘)

[໒໐໖] ໂສນະກຸຕິກັນນະ ໆລໆ ຜູ້ກ່າວຄຳເວົ້າມ່ວນ (໙)

[໒໐໗] ສີວະລີ ໆລໆ ຜູ້ມີລາບ (໑໐)

[໒໐໘] ວັກກະລີ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ລຸດພົ້ນດ້ວຍສັດທາ (໑໑)

**ທຸຕິຍະວັກ ຈົບ**

# ໑໔. ເອຕະທັກຄະວັກ

## ໓. ຕະຕິຍະວັກ

### ໝວດທີ ໓

[໔໐໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ຣາທຸນ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ໃຝ່ຕໍ່ການສຶກສາ (໑)

[໔໑໐] ຣັດຖະບານ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ບວດດ້ວຍສັດທາ (໒)

[໔໑໑] ກຸນທະທານະ ໆລໆ ຜູ້ຈັບສະຫຼາກໄດ້ກ່ອນ (໓)

[໔໑໒] ວັງຄີສະ ໆລໆ ຜູ້ມີປະຕິພານ (໔)

[໔໑໓] ອຸປະເສນະວັງຄັນຕະບຸດ ໆລໆ ຜູ້ເປັນທີ່ເຫຼື້ອມໃສຂອງຄົນໂດຍຮອບ (໕)

[໔໑໔] ທັບພະມັນລະບຸດ ໆລໆ ຜູ້ຈັດແຈງເສນາສະນະ (໖)

[໔໑໕] ປີລິນທະວັດສະ ໆລໆ ຜູ້ເປັນທີ່ຮັກທີ່ພໍໃຈຂອງເຫຼົ່າເທວະດາ (໗)

[໔໑໖] ພາຫິຍະທາຣຸຈີຣິຍະ ໆລໆ ຜູ້ຮູ້ແຈ້ງໄດ້ໄວ (໘)

[໔໑໗] ກຸມານກັດສະປະ ໆລໆ ຜູ້ສະແດງທຳໄດ້ວິຈິດ (໙)

[໔໑໘] ມະຫາໂກດຖິຕະ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ບັນລຸປະຕິສຳພິທາ (໑໐)

**ຕະຕິຍະວັກ ຈົບ**

# ໑໔. ເອຕະທັກຄະວັກ

## ໔. ຈະຕຸດຖະວັກ

### ໝວດທີ ໔

[໔໑໙] ອານົນ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ເປັນພະຫູສູດ (໑)

[໔໒໐] ອານົນ ໆລໆ ຜູ້ມີສະຕິ (໒)

[໔໒໑] ອານົນ ໆລໆ ຜູ້ມີຄະຕິ (໓)

[໔໒໒] ອານົນ ໆລໆ ຜູ້ມີທິຕິ (໔)

[໔໒໓] ອານົນ ໆລໆ ຜູ້ເປັນອຸປັດຖາກ (໕)

[໔໔໔] ອຸເວລະກັດສະປະ ໗ລ໗ ຜູ້ມີບໍລິວານຫຼາຍ (໖)
[໔໔໕] ກາລຸທາຍີ ໗ລ໗ ຜູ້ເຮັດໃຫ້ສະກຸນໃຫ້ເຫຼື້ອມໃສ (໗)
[໔໔໖] ພັກກຸລະ ໗ລ໗ ຜູ້ມີອາພາດໜ້ອຍ (໘)
[໔໔໗] ໂສພິຕະ ໗ລ໗ ຜູ້ຣະນຶກຊາດໄດ້ (໙)
[໔໔໘] ອຸບາລີ ໗ລ໗ ຜູ້ຊົງວິໄນ (໑໐)
[໔໔໙] ນັນທະກະ ໗ລ໗ ຜູ້ກ່າວສອນນາງພິກຂຸນີ (໑໑)
[໔໓໐] ນັນທະ ໗ລ໗ ຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍໄດ້ (໑໒)
[໔໓໑] ມະຫາກັບປີນະ ໗ລ໗ ຜູ້ກ່າວສອນພິກຂຸ (໑໓)
[໔໓໒] ສາຄະຕະ ໗ລ໗ ຜູ້ສະຫຼາດໃນເຕໂຊທາດ (໑໔)
[໔໓໓] ຣາທະ ໗ລ໗ ຜູ້ມີປະຕິພານແຈ່ມແຈ້ງ (໑໕)
[໔໓໔] ໂມຄະຣາດ ເລີດກວ່າພິກຂຸສາວົກທັງຫຼາຍຂອງເຮົາ ຜູ້ຊົງຈີວອນເສົ້າໝອງ (໑໖)

**ຈະຕຸດຖະວັກ ຈົບ**

# ໑໔. ເອຕະທັກຄະວັກ

## ໕. ປັນຈະມະວັກ

### ໝວດທີ ໕

[໔໓໕] ມະຫາປະຊາບໍດີໂຄຕະມີພິກຂຸນີ ເລີດກວ່າພິກຂຸນີສາວິກາທັງຫຼາຍຂອງເຮົາ ຜູ້ເປັນຣັດຕັນຍູ (໑)

[໔໓໖] ເຂມາ ໗ລ໗ ຜູ້ມີປັນຍາຫຼາຍ (໒)
[໔໓໗] ອຸບົນວັນນາ ໗ລ໗ ຜູ້ມີລິດຫຼາຍ (໓)
[໔໓໘] ປະຕາຈາຣາ ໗ລ໗ ຜູ້ຊົງວິໄນ (໔)
[໔໓໙] ທຳມະທິນນາ ໗ລ໗ ຜູ້ເປັນທຳມະກະຖຶກ (໕)
[໔໔໐] ນັນທາ ໗ລ໗ ຜູ້ຍິນດີໃນຊານ (໖)
[໔໔໑] ໂສນາ ໗ລ໗ ຜູ້ຜາຣົບຄວາມພຽນ (໗)
[໔໔໒] ສະກຸລາ ໗ລ໗ ຜູ້ມີຕາທິບ (໘)
[໔໔໓] ພັດທາກຸນທົນເກສາ ໗ລ໗ ຜູ້ຮູ້ແຈ້ງໄດ້ໄວ (໙)
[໔໔໔] ພັດທາກາປິລານີ ໗ລ໗ ຜູ້ຣະນຶກຊາດໄດ້ (໑໐)
[໔໔໕] ພັດທາກັດຈານາ ໗ລ໗ ຜູ້ບັນລຸອະພິນຍາໃຫຍ່ (໑໑)

[໔໔໖] ກິສາໂຄຕະມີ ຯລຯ ຜູ້ຊົງຈີວອນເສົ້າໝອງ (໑໔)

[໔໔໗] ສິງຄາລະມາຕາ ເລີດກວ່າພິກຂຸນີສາວິກາທັງຫຼາຍຂອງເຮົາ ຜູ້ລຸດພົ້ນດ້ວຍສັດທາ (໑໓)

**ປັນຈະມະວັກ ຈົບ**

# ໑໔. ເອຕະທັກຄະວັກ

## ໖. ສັດຖະວັກ

### ໝວດທີ ໖

[໔໔໘] ພໍ່ຄ້າຊື່ ຕະປຸດສະແລະພັນລິກະ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາ ຜູ້ເຖິງສະຣະນະກ່ອນ (໑)

[໔໔໙] ສຸທັດຕະອະນາຖະບິນດິກະຄະຫະບໍດີ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາ ຜູ້ຍິນດີຍິ່ງໃນການຖວາຍທານ (໒)

[໔໕໐] ຈິດຕະຄະຫະບໍດີ ຊາວເມືອງມັດສິກາສັນ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາຜູ້ເປັນທຳມະກະຖຶກ (໓)

[໔໕໑] ຫັດຖະກະອຸປາສົກ ຊາວນະຄອນອາລະວີ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາຜູ້ສົງເຄາະບໍລິສັດດ້ວຍສັງຄະຫະວັດຖຸ ໔ (໔)

[໔໕໒] ເຈົ້າສາກະຍະພຣະນາມວ່າ ມະຫານາມ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາຜູ້ຖວາຍຣົດອັນປະນີດ (໕)

[໔໕໓] ອຸກຄະຫະບໍດີ ຊາວນະຄອນເວສາລີ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາຜູ້ຖວາຍໂພຊະນະເປັນທີ່ໜ້າພໍໃຈ (໖)

[໔໕໔] ອຸກຄະຕະຄະຫະບໍດີ ຊາວຫັດຖີຄາມ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາຜູ້ອຸປັດຖາກພຣະສົງ (໗)

[໔໕໕] ສູຣະອຳພັດຖະ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາ ຜູ້ເຫຼື້ອມໃສທີ່ໜັກແໜ້ນ (໘)

[໔໕໖] ຊີວົກໂກມາຣະພັດ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາ ຜູ້ເຫຼື້ອມໃສສະເພາະບຸກຄົນ (໙)

[໔໕໗] ນະກຸລະປິຕາຄະຫະບໍດີ ເລີດກວ່າອຸປາສົກສາວົກທັງຫຼາຍຂອງເຮົາ ຜູ້ກ່າວຄຳເວົ້າທີ່ເຮັດໃຫ້ເກີດຄວາມຄຸ້ນເຄີຍ (໑໐)

**ສັດຖະວັກ ຈົບ**

# ໑໔. ເອຕະທັກຄະວັກ

## ໗. ສັດຕະມະວັກ

### ໝວດທີ ໗

[໔໕໗] ສຸຊາດາທິດາຂອງເສນານິກຸດຸມພີ ເລີດກວ່າອຸປາສິກາສາວິກາທັງຫຼາຍຂອງເຮົາ ຜູ້ເຖິງສະຣະນະກ່ອນ (໑)

[໔໕໘] ວິສາຂາມິຄາຣະມາຕາ ໆລໆ ຜູ້ຍິນດີຍິ່ງໃນການຖວາຍທານ (໒)

[໔໖໐] ຂຸດຂຸດຕະຣາ ໆລໆ ຜູ້ເປັນພະຫູສູດ (໓)

[໔໖໑] ສາມາວະດີ ໆລໆ ຜູ້ມີປີກກະຕິຢູ່ດ້ວຍ ເມດຕາ (໔)

[໔໖໒] ອຸດຕະຣານັນທະມາຕາ ໆລໆ ຜູ້ຍິນດີໃນຊານ (໕)

[໔໖໓] ສຸບປະວາສາໂກລິຍະທິດາ ໆລໆ ຜູ້ຖວາຍຣົດອັນປະນີດ (໖)

[໔໖໔] ສຸບປິຍາອຸປາສິກາ ໆລໆ ຜູ້ບຳລຸງພິກຂຸອາພາດ (໗)

[໔໖໕] ກາຕິຍານີ ໆລໆ ຜູ້ເຫຼື້ອມໃສທີ່ໜັກແໜ້ນ (໘)

[໔໖໖] ນະກຸລະມາຕາຄະຫະປະຕານີ ເລີດກວ່າອຸປາສິກາສາວິກາທັງຫຼາຍຂອງເຮົາ ຜູ້ກ່າວຄຳເວົ້າທີ່ເຮັດໃຫ້ເກີດຄວາມຄຸ້ນເຄີຍ (໙)

[໔໖໗] ກາລີອຸປາສິກາຊາວເມືອງກຸນຣະຄະຣະ ເລີດກວ່າອຸປາສິກາສາວິກາທັງຫຼາຍຂອງເຮົາ ຜູ້ເຫຼື້ອມໃສຍ້ອນໄດ້ຍິນໄດ້ຟັງສືບ ໆ ກັນມາ (໑໐)

**ສັດຕະມະວັກ ຈົບ**

**ເອຕະທັກຄະວັກທີ ໑໔ ຈົບ**

# ໑໕. ອັດຖານະປາລີ

## ບາລີວ່າດ້ວຍຄວາມເປັນໄປໄດ້ແລະເປັນໄປບໍ່ໄດ້

## ໑. ປະຖົມວັກ

### ໝວດທີ ໑

[໔໖໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເພິ່ງຢຶດຖືສັງຂານໃດ ໆ ໂດຍຄວາມເປັນສະພາວະທ່ຽງ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຢຶດຖືສັງຂານໃດ ໆ ໂດຍຄວາມເປັນສະພາວະທ່ຽງ (໑)

[໔໓໙] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເພິ່ງຍຶດຖືສັງຂານໃດ ໆ ໂດຍຄວາມເປັນສຸກ ແຕ່ເປັນໄປໄດ້ທີ່ປຸຖຸຊົນ ເພິ່ງຍຶດຖືສັງຂານໃດ ໆ ໂດຍຄວາມເປັນສຸກ (໔)

[໔໗໐] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເພິ່ງຍຶດຖືທຳໃດ ໆ ໂດຍຄວາມເປັນອັດຕາ ແຕ່ເປັນໄປໄດ້ທີ່ປຸຖຸຊົນ ເພິ່ງຍຶດຖືທຳໃດ ໆ ໂດຍຄວາມເປັນອັດຕາ (໓)

[໔໗໑] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເພິ່ງຂ້າມານດາ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຂ້າມານດາ (໔)

[໔໗໒] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເພິ່ງຂ້າບິດາ ແຕ່ເປັນໄປໄດ້ທີ່ປຸຖຸຊົນເພິ່ງຂ້າບິດາ (໕)

[໔໗໓] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເພິ່ງຂ້າພຣະອະຣະຫັນ ແຕ່ເປັນໄປໄດ້ທີ່ປຸຖຸຊົນ ເພິ່ງຂ້າພຣະອະຣະຫັນ (໖)

[໔໗໔] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເພິ່ງມີຈິດປະທຸດສະຮ້າຍ ທຳຮ້າຍຕະຖາຄົດໃຫ້ຫໍ້ເລືອດ ແຕ່ເປັນໄປໄດ້ທີ່ປຸຖຸຊົນ ເພິ່ງມີຈິດປະທຸດສະຮ້າຍ ທຳຮ້າຍຕະຖາຄົດໃຫ້ຫໍ້ເລືອດ (໗)

[໔໗໕] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເພິ່ງທຳລາຍສົງ ແຕ່ເປັນໄປໄດ້ທີ່ປຸຖຸຊົນ ເພິ່ງທຳລາຍສົງ (໘)

[໔໗໖] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ເພິ່ງນັບຖືສາດສະດາອື່ນ ແຕ່ເປັນໄປໄດ້ທີ່ປຸຖຸຊົນ ເພິ່ງນັບຖືສາດສະດາອື່ນ (໙)

[໔໗໗] ເປັນໄປບໍ່ໄດ້ເລີຍ ທີ່ພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ໒ ພຣະອົງເພິ່ງສະເດັດ ອຸບັດພ້ອມກັນໃນໂລກກະທາດດຽວກັນ ແຕ່ເປັນໄປໄດ້ທີ່ພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງດຽວ ເພິ່ງສະເດັດອຸບັດໃນໂລກກະທາດດຽວ (໑໐)

**ປະຖົມວັກ ຈົບ**

# ໑໕. ອັດຖານະປາລີ

## ໒. ທຸຕິຍະວັກ

### ໝວດທີ ໒

[໔໗໘] ເປັນໄປບໍ່ໄດ້ເລີຍ ທີ່ພຣະເຈົ້າຈັກກະພັດ ໒ ພຣະອົງ ເພິ່ງສະເດັດອຸບັດພ້ອມກັນໃນໂລກກະທາດດຽວກັນ ແຕ່ເປັນໄປໄດ້ທີ່ພຣະເຈົ້າຈັກກະພັດພຣະອົງດຽວ ເພິ່ງສະເດັດອຸບັດໃນໂລກກະທາດດຽວ (໑)

[໔໗໙] ເປັນໄປບໍ່ໄດ້ເລີຍ ທີ່ສະຕີເພິ່ງເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ແຕ່ເປັນໄປໄດ້ທີ່ບຸຣຸດເພິ່ງເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ (໔)

[໔໗໐] ເປັນໄປບໍ່ໄດ້ເລີຍ ທີ່ສະຕີເພິ່ງເປັນພຣະເຈົ້າຈັກກະພັດ ແຕ່ເປັນໄປໄດ້ທີ່ບຸຣຸດເພິ່ງເປັນພຣະເຈົ້າຈັກກະພັດ (໕)

[໔໗໑-໔໗໓] ເປັນໄປບໍ່ໄດ້ເລີຍ ທີ່ສະຕີເພິ່ງຄອງຄວາມເປັນທ້າວສັກກະ ຯລຯ ເປັນມານ ຯລຯ ເປັນພົມ ແຕ່ເປັນໄປໄດ້ທີ່ບຸຣຸດ ເພິ່ງຄອງຄວາມເປັນທ້າວສັກກະ ຯລຯ ເປັນມານ ຯລຯ ເປັນພົມ (໖-໘)

[໔໗໔] ເປັນໄປບໍ່ໄດ້ເລີຍ ທີ່ກາຍທຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ແຕ່ເປັນໄປໄດ້ທີ່ກາຍທຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ (໙)

[໔໗໕-໔໗໖] ເປັນໄປບໍ່ໄດ້ເລີຍ ທີ່ວະຈີທຸດຈະຣິດ ຯລຯ ເປັນໄປບໍ່ໄດ້ເລີຍ ທີ່ມະໂນທຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ແຕ່ເປັນໄປໄດ້ທີ່ມະໂນທຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ (໗-໑)

**ທຸຕິຍະວັກ ຈົບ**

# ໑໕. ອັດຖານະປາລີ

## ໓. ຕະຕິຍະວັກ

### ໝວດທີ ໓

[໔໗໗] ເປັນໄປບໍ່ໄດ້ເລີຍ ທີ່ກາຍສຸດຈະຣິດ ຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ແຕ່ເປັນໄປໄດ້ທີ່ກາຍສຸດຈະຣິດ ຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ (໑)

[໔໗໘-໔໗໙] ເປັນໄປບໍ່ໄດ້ເລີຍ ທີ່ວະຈີສຸດຈະຣິດ ຯລຯ ເປັນໄປບໍ່ໄດ້ເລີຍ ທີ່ມະໂນສຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ແຕ່ເປັນໄປໄດ້ທີ່ມະໂນສຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ (໒-໓)

[໔໙໐] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ປະກອບກາຍທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນຄວາມປະກອບກາຍທຸດຈະຣິດເປັນເຫດເປັນປັດໄຈ ແຕ່ເປັນ

ໄປໄດ້ທີ່ບຸກຄົນຜູ້ປະກອບກາຍທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິວິນິບາດ ນະຮົກ ຍ້ອນຄວາມປະກອບກາຍທຸດຈະຣິດເປັນເຫດເປັນປັດໄຈ (໔)

[໔໙໑-໔໙໔] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ປະກອບວະຈີທຸດຈະຣິດ ฯລฯ ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ປະກອບມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນຄວາມປະກອບມະໂນທຸດຈະຣິດເປັນເຫດເປັນປັດໄຈ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ປະກອບມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນປະກອບມະໂນທຸດຈະຣິດເປັນເຫດເປັນປັດໄຈ (໕-໖)

[໔໙໕] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ປະກອບກາຍສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນຄວາມປະກອບກາຍສຸດຈະຣິດເປັນເຫດເປັນປັດໄຈ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ປະກອບກາຍສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນປະກອບກາຍສຸດຈະຣິດເປັນເຫດເປັນປັດໄຈ (໗)

[໔໙໔-໔໙໕] ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ປະກອບວະຈີສຸດຈະຣິດ ฯລฯ ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຜູ້ປະກອບມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນປະກອບມະໂນສຸດຈະຣິດເປັນເຫດເປັນປັດໄຈ ແຕ່ເປັນໄປໄດ້ທີ່ບຸກຄົນຜູ້ປະກອບມະໂນສຸດຈະຣິດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນປະກອບມະໂນສຸດຈະຣິດເປັນເຫດເປັນປັດໄຈ (໘-໙)

**ຕະຕິຍະວັກ ຈົບ**

**ອັດຖານະປາລີທີ ໑໕ ຈົບ**

# ໑໖. ເອກະທຳມະປາລີ

## ບາລີວ່າດ້ວຍທຳອັນເປັນເອກ

# ໑. ປະຖົມວັກ

## ໝວດທີ ໑

[໔໙໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳອັນເປັນເອກທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ທຳອັນເປັນເອກ ຄື ອັນໃດ?

ຄື ພຸດທານຸດສະຕິ (ການຣະນຶກເຖິງພຣະພຸດທະເຈົ້າ)

ທຳອັນເປັນເອກນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍ ຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ (໑)

[໔໙] ທຳອັນເປັນເອກທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ທຳອັນເປັນເອກ ຄື ອັນໃດ?

ຄື ທຳມານຸດສະຕິ (ການຣະນຶກເຖິງພຣະທຳ) ฯລฯ ສັງຄານຸດສະຕິ (ການຣະນຶກເຖິງພຣະສົງ) ฯລฯ ສີລານຸດສະຕິ (ການຣະນຶກເຖິງສີນ) ฯລฯ ຈາຄານຸດສະຕິ (ການຣະນຶກເຖິງການບໍລິຈາກ) ฯລฯ ເທວະຕານຸດສະຕິ (ການຣະນຶກເຖິງເທວະດາ) ฯລฯ ອານາປານັດສະຕິ (ສະຕິກຳນົດລົມຫັນໃຈເຂົ້າອອກ) ฯລฯ ມະຣະນັດສະຕິ (ການຣະນຶກເຖິງຄວາມຕາຍ) ฯລฯ ກາຍະຄະຕາສະຕິ (ສະຕິອັນໄປໃນກາຍ) ฯລฯ ອຸປະສະມານຸດສະຕິ (ການຣະນຶກເຖິງທຳອັນເປັນທີ່ສະງົບ)

ທຳອັນເປັນເອກນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ (໑໐)

**ປະຖົມວັກ ຈົບ**

# ໑໖. ເອກະທຳມະປາລີ

## ໔. ທຸຕິຍະວັກ

### ໝວດທີ ໔

[໔໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມ

ຈະເລີນໄພບູນຍິ່ງຂຶ້ນ ຄື ມິດສາທິດຖິ (ຄວາມເຫັນຜິດ) ນີ້ ເມື່ອເປັນມິດສາທິດຖິ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະ ທີ່ເກີດຂຶ້ນແລ້ວ ກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ (໑)

[໔໙] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼືທີ່ເກີດຂຶ້ນແລ້ວ ກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຄື ສຳມາທິດຖິ (ຄວາມເຫັນຖືກ) ນີ້ ເມື່ອເປັນສຳມາທິດຖິ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ (໔)

[໕໐໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເສື່ອມໄປ ຄື ມິດສາທິດຖິນີ້ ເມື່ອເປັນມິດສາທິດຖິ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໕)

[໕໐໑] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເສື່ອມໄປ ຄື ສຳມາທິດຖິນີ້ ເມື່ອເປັນສຳມາທິດຖິ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍເສື່ອມໄປ (໘)

[໕໐໔] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ມິດສາທິດຖິທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍຈະເລີນຍິ່ງຂຶ້ນຄືອະໂຍນິໂສມະນະສິການ ເມື່ອມະນະສິການໂດຍບໍ່ແຍບຄາຍ ມິດສາທິດຖິທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍຈະເລີນຍິ່ງຂຶ້ນ (໕)

[໕໐໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ສຳມາທິດຖິທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍຈະເລີນຍິ່ງຂຶ້ນຄືໂຍນິໂສມະນະສິການ ເມື່ອມະນະສິການໂດຍແຍບຄາຍ ສຳມາທິດຖິທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍຈະເລີນຍິ່ງຂຶ້ນ (໖)

[໕໐໘] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ເຫຼົ່າສັດ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ຄື ມິດສາທິດຖິນີ້ ເຫຼົ່າສັດທີ່ປະກອບດ້ວຍມິດສາທິດຖິ ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ (໗)

[໕໐໕] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ເຫຼົ່າສັດ ຫຼັງຈາກຕາຍແລ້ວໄປເກີດໃນ ສຸກຄະຕິໂລກສະຫວັນ ຄື ສຳມາທິດຖິນີ້ ເຫຼົ່າສັດທີ່ປະກອບດ້ວຍສຳມາທິດຖິ ຫຼັງຈາກຕາຍແລ້ວຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ (໘)

[໕໐໖] ກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ວະຈີກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ມະໂນກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈ ແລະສັງຂານທັງຫຼາຍ ຂອງບຸກຄົນຜູ້ເປັນມິດສາທິດຖິ ທຳທັງ

ໝົດນັ້ນຍ່ອມເປັນໄປເພື່ອຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບໍ່ເກື້ອກູນ ເປັນທຸກ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຄວາມເຫັນຊົ່ວຊາມ

ກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ໆລໆ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຄວາມເຫັນຊົ່ວຊາມ ປຽບຄື ເມັດກະເດົາ ເມັດບວບຂົມ ຫຼື ເມັດນ້ຳເຕົ້າຂົມທີ່ບຸກຄົນປູກໄວ້ໃນດິນຊຸ່ມຊື້ນ ຣົດດິນແລະຣົດນ້ຳທີ່ມັນດູດຊັບເອົາໄວ້ທັງໝົດ ຍ່ອມເປັນໄປເພື່ອຄວາມເປັນຂອງຂົມ ເຜັດຮ້ອນ ບໍ່ໜ້າຍິນດີ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເມັດກະເດົາເປັນຕົ້ນນັ້ນຊົ່ວ ສັນນັ້ນ (໙)

[໓໐໗] ກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ວະຈີກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ມະໂນກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈ ແລະສັງຂານທັງຫຼາຍຂອງບຸກຄົນຜູ້ເປັນສຳມາທິດຖິ ທຳທັງໝົດນັ້ນຍ່ອມເປັນໄປເພື່ອຜົນອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ເກື້ອກູນ ເປັນສຸກ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຄວາມເຫັນດີ

ກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ໆລໆ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຄວາມເຫັນດີ ປຽບຄື ພັນອ້ອຍ ພັນເຂົ້າສາລີ ຫຼື ເມັດຈັນທີ່ບຸກຄົນປູກໄວ້ໃນດິນຊຸ່ມຊື້ນ ຣົດດິນແລະຣົດນ້ຳທີ່ມັນດູດຊັບເອົາໄວ້ທັງໝົດ ຍ່ອມເປັນໄປເພື່ອຄວາມເປັນຂອງຫວານ ເປັນຕາແຊບ ໜ້າຊື່ນໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພັນອ້ອຍເປັນຕົ້ນນັ້ນດີ ສັນນັ້ນ (໑໐)

**ທຸຕິຍະວັກ ຈົບ**

# ໑໖. ເອກະທຳມະປາລີ

## ໓. ຕະຕິຍະວັກ

### ໝວດທີ ໓

[໓໐໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ເປັນເອກ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ ບຸກຄົນຜູ້ເປັນເອກຄືໃຜ ຄື ບຸກຄົນຜູ້ເປັນມິດສາທິດຖິ ມີຄວາມເຫັນວິປະຣິດ ບຸກຄົນນັ້ນເຮັດໃຫ້ຄົນທັງຫຼາຍອອກຈາກສັດທຳ ໃຫ້ຕັ້ງຢູ່ໃນອະສັດທຳ ບຸກຄົນຜູ້ເປັນເອກນີ້ແລ ເມື່ອເກີດຂຶ້ນໃນໂລກ

ຍ່ອມເກີດຂຶ້ນເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ (໑)

[໓໐໗] ບຸກຄົນຜູ້ເປັນເອກ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ ບຸກຄົນຜູ້ເປັນເອກຄືໃຜ ຄື ບຸກຄົນຜູ້ເປັນສຳມາທິດຖິ ມີຄວາມເຫັນບໍ່ວິປະຣິດ ບຸກຄົນນັ້ນ ເຮັດໃຫ້ຄົນທັງຫຼາຍອອກຈາກອະສັດທຳ ໃຫ້ຕັ້ງຢູ່ໃນສັດທຳ ບຸກຄົນຜູ້ເປັນເອກນີ້ແລ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາ ແລະມະນຸດທັງຫຼາຍ (໒)

[໓໑໐] ເຮົາບໍ່ເຫັນທຳອື່ນ ແມ່ນແນວໜຶ່ງທີ່ມີໂທດຫຼາຍ ຄື ມິດສາທິດຖິນີ້ໂທດທັງຫຼາຍມີມິດສາທິດຖິເປັນຢ່າງຍິ່ງ (໓)

[໓໑໑] ເຮົາບໍ່ເຫັນບຸກຄົນອື່ນ ແມ່ນຄົນດຽວທີ່ປະຕິບັດເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ ຄື ໂມຄະບຸຣຸດຊື່ວ່າ ມັກຂະລິ ໂມຄະບຸຣຸດຊື່ ມັກຂະລິນີ້ ເກີດຂຶ້ນໃນໂລກ ເປັນຄືລອບທີ່ດັກມະນຸດ ເພື່ອບໍ່ເກື້ອກູນ ເພື່ອທຸກ ເພື່ອຄວາມເສື່ອມ ເພື່ອຄວາມພິນາດແກ່ສັດຫຼວງຫຼາຍ ປຽບຄື ບຸກຄົນໃສ່ລອບໄວ້ທີ່ປາກອ່າວ ເພື່ອບໍ່ເກື້ອກູນ ເພື່ອທຸກ ເພື່ອຄວາມເສື່ອມ ເພື່ອຄວາມພິນາດແກ່ປາທັງຫຼາຍ ສັນນັ້ນ (໔)

[໓໑໒] ຜູ້ຊັກຊວນ ຜູ້ຖືກຊັກຊວນ ຜູ້ຖືກຊັກຊວນແລ້ວປະຕິບັດຕາມຄຳຊັກຊວນ ໃນທຳວິໄນທີ່ກ່າວໄວ້ບໍ່ດີ ຄົນທັງໝົດນັ້ນ ຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທຳທີ່ກ່າວໄວ້ບໍ່ດີ (໕)

[໓໑໓] ຜູ້ຊັກຊວນ ຜູ້ຖືກຊັກຊວນ ຜູ້ຖືກຊັກຊວນແລ້ວ ປະຕິບັດຕາມຄຳຊັກຊວນ ໃນທຳວິໄນທີ່ກ່າວໄວ້ດີ ຄົນທັງໝົດນັ້ນ ຍ່ອມປະສົບບຸນຫຼວງຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທຳທີ່ກ່າວໄວ້ດີ (໖)

[໓໑໔] ໃນທຳວິໄນທີ່ກ່າວໄວ້ບໍ່ດີ ທາຍົກ (ຜູ້ໃຫ້) ເພິ່ງຮູ້ຈັກປະມານ ປະຕິຄາຫົກ (ຜູ້ຮັບ) ບໍ່ຈຳຕ້ອງຮູ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທຳທີ່ກ່າວໄວ້ບໍ່ດີ (໗)

[໓໑໕] ໃນທຳວິໄນທີ່ກ່າວໄວ້ດີ ປະຕິຄາຫົກເພິ່ງຮູ້ຈັກປະມານ ທາຍົກບໍ່ຮູ້ກໍໄດ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທຳທີ່ກ່າວໄວ້ດີ (໘)

[๕๑๗] ໃນທຳວິໄນທີ່ກ່າວໄວ້ບໍ່ດີ ຜູ້ຜາຣົບຄວາມພຽນຍ່ອມຢູ່ເປັນທຸກ ຂໍ້ນັ້ນ ຍ້ອນເຫດໃດຍ້ອນທຳທີ່ກ່າວໄວ້ບໍ່ດີ (໗)

[๕๑๘] ໃນທຳວິໄນທີ່ກ່າວໄວ້ດີ ຜູ້ຂີ້ຄ້ານຍ່ອມຢູ່ເປັນທຸກ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທຳວິໄນທີ່ກ່າວໄວ້ດີ (໑໐)

[๕๑๙] ໃນທຳວິໄນທີ່ກ່າວໄວ້ບໍ່ດີ ຜູ້ຂີ້ຄ້ານຍ່ອມຢູ່ເປັນສຸກ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທຳທີ່ກ່າວໄວ້ບໍ່ດີ (໑໑)

[๕๑໙] ໃນທຳວິໄນທີ່ກ່າວໄວ້ດີ ຜູ້ຜາຣົບຄວາມພຽນຍ່ອມຢູ່ເປັນສຸກ ຂໍ້ນັ້ນ ຍ້ອນເຫດໃດຍ້ອນທຳທີ່ກ່າວໄວ້ດີ (໑໔)

[๕໔໐] ຄູດ (ອາຈົມ) ແມ່ນພຽງເລັກໜ້ອຍກໍມີກິ່ນເໝັນ ແມ່ນສັນໃດ ພິບ ແມ່ນພຽງເລັກໜ້ອຍ ກໍຄືກັນສັນນັ້ນ ເຮົາບໍ່ສັນເສີນໂດຍທີ່ສຸດແມ່ນຊົ່ວລັດນິ້ວມືດຽວ (໑໕)

[๕໔໑] ມູດ (ປັດສາວະ) ແມ່ນພຽງເລັກໜ້ອຍກໍມີກິ່ນເໝັນ ໆລໆ ນ້ຳລາຍແມ່ນພຽງເລັກໜ້ອຍກໍມີກິ່ນເໝັນ ໆລໆ ນ້ຳໜອງແມ່ນພຽງເລັກໜ້ອຍກໍມີກິ່ນເໝັນ ໆລໆ ເລືອດແມ່ນພຽງເລັກໜ້ອຍກໍມີກິ່ນເໝັນແມ່ນສັນໃດ ພິບ ແມ່ນພຽງເລັກໜ້ອຍກໍຄືກັນສັນນັ້ນ ເຮົາບໍ່ສັນເສີນ ໂດຍທີ່ສຸດແມ່ນຊົ່ວລັດນິ້ວມືດຽວ (໑໔)

**ຕະຕິຍະວັກ ຈົບ**

# ໑໗. ເອກະທຳມະປາລີ

## ໔. ຈະຕຸດຖະວັກ

### ໝວດທີ ໔

[๕໔໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ໃນຊົມພູທະວີບນີ້ສວນອັນໜ້າອອນຊອນ ປ່າອັນໜ້າອອນຊອນ ພູມມິປະເທດອັນໜ້າອອນຊອນ ສະໂບກຂະຣະນີອັນໜ້າອອນຊອນມີຈຳນວນໜ້ອຍ ສ່ວນສະຖານທີ່ທີ່ເປັນບ່ອນໂນນ ບ່ອນຫຼຸບ ທີ່ມີນ້ຳໄຫຼຖ້ວມ ທີ່ມີຕໍໄມ້ແລະໜາມ ທີ່ມີພູສູງຊັນລາດຕ່ຳມີຈຳນວນຫຼາຍກວ່າ ແມ່ນສັນໃດ ສັດທີ່ເກີດເທິງບົກມີຈຳນວນໜ້ອຍ ສ່ວນສັດທີ່ເກີດໃນນ້ຳມີຈຳນວນຫຼາຍກວ່າ ຄືກັນສັນນັ້ນແລ (໑)

[໓໔໓] ສັດທີ່ກັບມາເກີດໃນໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ໄປເກີດໃນກຳເນີດອື່ນນອກຈາກມະນຸດມີຈຳນວນຫຼາຍກວ່າ ສັດທີ່ກັບມາເກີດໃນມັດຊິມະຊົນນະບົດມີຈຳນວນໜ້ອຍ ສ່ວນສັດທີ່ກັບມາເກີດໃນປັດຈັນຕະຊົນນະບົດ ໃນໝູ່ຊາວມີລັກຂະຜູ້ໂງ່ຈ້ຳມີຈຳນວນຫຼາຍກວ່າ (໔)

[໓໔໔] ສັດທີ່ມີປັນຍາ໌ ບໍ່ໂງ່ຈ້ຳ ບໍ່ເປັນຄືຄົນໜວກ ຄົນກືກ ສາມາດຮູ້ເນື້ອຄວາມແຫ່ງຄຳສຸພາສິດແລະທຸບພາສິດໄດ້ມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ມີປັນຍາ ໂງ່ຈ້ຳ ເປັນຄືຄົນໜວກຄົນກືກ ບໍ່ສາມາດຮູ້ເນື້ອຄວາມແຫ່ງຄຳສຸພາສິດແລະທຸບພາສິດໄດ້ມີຈຳນວນຫຼາຍກວ່າ (໓)

[໓໔໕] ສັດທີ່ປະກອບດ້ວຍປັນຍາຈັກຂຸຢ່າງປະເສີດມີຈຳນວນໜ້ອຍ ສ່ວນສັດທີ່ຕົກຢູ່ໃນອະວິດຊາ ລຸ້ມຫຼົງມີຈຳນວນຫຼາຍກວ່າ (໔)

[໓໔໖] ສັດທີ່ໄດ້ເຫັນຕະຖາຄົດມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ໄດ້ເຫັນຕະຖາຄົດມີຈຳນວນຫຼາຍກວ່າ (໕)

[໓໔໗] ສັດທີ່ໄດ້ຟັງທຳວິໄນທີ່ຕະຖາຄົດປະກາດໄວ້ມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ໄດ້ຟັງທຳວິໄນທີ່ຕະຖາຄົດປະກາດໄວ້ມີຈຳນວນຫຼາຍກວ່າ (໖)

[໓໔໘] ສັດທີ່ຟັງທຳແລ້ວຊົງຈຳໄວ້ໄດ້ມີຈຳນວນໜ້ອຍ ສ່ວນສັດທີ່ຟັງທຳແລ້ວຊົງຈຳໄວ້ບໍ່ໄດ້ມີຈຳນວນຫຼາຍກວ່າ (໗)

[໓໔໙] ສັດທີ່ຮິ່ນຕອງເນື້ອຄວາມແຫ່ງທຳທີ່ຕົນຊົງຈຳໄວ້ມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ຮິ່ນຕອງເນື້ອຄວາມແຫ່ງທຳທີ່ຕົນຊົງຈຳໄວ້ມີຈຳນວນຫຼາຍກວ່າ (໘)

[໓໕໐] ສັດທີ່ຮູ້ທົ່ວເຖິງອັດຖະ ຮູ້ທົ່ວເຖິງທຳ ແລະປະຕິບັດທຳສົມຄວນແກ່ທຳມີຈຳນວນໜ້ອຍ ສ່ວນສັດທີ່ຮູ້ທົ່ວເຖິງອັດຖະ ຮູ້ທົ່ວເຖິງທຳ ແຕ່ບໍ່ປະຕິບັດທຳສົມຄວນແກ່ທຳ ມີຈຳນວນຫຼາຍກວ່າ (໙)

[໓໕໑] ສັດທີ່ສະຫຼົດໃຈໃນເຫດອັນຄວນສະຫຼົດໃຈມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ສະຫຼົດໃຈໃນເຫດອັນຄວນສະຫຼົດໃຈມີຈຳນວນຫຼາຍກວ່າ (໑໐)

[໓໕໒] ສັດທີ່ສະຫຼົດໃຈ ເຮັດຄວາມພຽນໂດຍແຍບຄາຍມີຈຳນວນໜ້ອຍ ສ່ວນສັດທີ່ສະຫຼົດໃຈ ບໍ່ເຮັດຄວາມພຽນໂດຍແຍບຄາຍມີຈຳນວນຫຼາຍກວ່າ (໑໑)

[໓໕໓] ສັດທີ່ເຮັດນິບພານໃຫ້ເປັນອາລົມແລ້ວໄດ້ສະມາທິ ໄດ້ເອກັກຄະຕາຈິດ (ຈິດມີອາລົມເປັນໜຶ່ງ)ມີຈຳນວນໜ້ອຍ ສ່ວນສັດທີ່ເຮັດນິບພານໃຫ້ເປັນອາລົມແລ້ວບໍ່ໄດ້ສະມາທິ ບໍ່ໄດ້ເອກັກຄະຕາຈິດມີຈຳນວນຫຼາຍກວ່າ (໑໒)

[໓໓໔] ສັດທີ່ໄດ້ເຂົ້າອັນເລີດ ແລະຣົດອັນເລີດມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ໄດ້ເຂົ້າອັນເລີດ ແລະຣົດອັນເລີດ ເປັນຢູ່ດ້ວຍການສະແຫວງຫາດ້ວຍອາຫານທີ່ໃສ່ກະເບື້ອງມາມີຈຳນວນຫຼາຍກວ່າ (໑໓)

[໓໓໕] ສັດທີ່ໄດ້ອັດຖະຣົດ ທຳມະຣົດ ແລະວິມຸດຕິຣົດ ມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ໄດ້ອັດຖະຣົດ ທຳມະຣົດ ແລະວິມຸດຕິຣົດມີຈຳນວນຫຼາຍກວ່າ ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ “ເຮົາຈັກເປັນຜູ້ໄດ້ອັດຖະຣົດ ທຳມະຣົດ ແລະວິມຸດຕິຣົດ” ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ (໑໔)

[໓໓໖-໓໓໗] ໃນຊົມພູທະວີບນີ້ສວນອັນໜ້າອອນຊອນ ປ່າອັນໜ້າອອນຊອນ ພູມມີປະເທດອັນໜ້າອອນຊອນ ສະໂບກຂະຣະນີອັນໜ້າອອນຊອນມີຈຳນວນໜ້ອຍ ສ່ວນສະຖານທີ່ທີ່ເປັນບ່ອນໂນນ ບ່ອນຫຼຸບ ທີ່ມີນ້ຳໄຫຼຖ້ວມ ທີ່ມີຕໍໄມ້ແລະໜາມ ທີ່ມີພູສູງຊັນລາດຕ່ຳມີຈຳນວນຫຼາຍກວ່າ ແມ່ນສັນໃດ ສັດທີ່ຈຸຕິຈາກມະນຸດກັບມາເກີດໃນໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກມະນຸດໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສ (ແດນເຜດ) ມີຈຳນວນຫຼາຍກວ່າ ຄືກັນສັນນັ້ນແລ (໑໕-໑໗)

[໓໓໘-໓໔໑] ສັດທີ່ຈຸຕິຈາກມະນຸດໄປເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກມະນຸດໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໑໙-໒໐)

[໓໔໒-໓໔໔] ສັດທີ່ຈຸຕິຈາກເທວະດາກັບມາເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກເທວະດາໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໒໑-໒໓)

[໓໔໕-໓໔໗] ສັດທີ່ຈຸຕິຈາກເທວະດາມາເກີດໃນໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກເທວະດາໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໒໔-໒໖)

[໓໔໙-໓໕໐] ສັດທີ່ຈຸຕິຈາກນະຣົກມາເກີດໃນໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກນະຣົກໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໒໗-໒໘)

[໓໕໑-໓໕໓] ສັດທີ່ຈຸຕິຈາກນະຣົກໄປເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກນະຣົກໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໓໐-໓໔)

[໓໕໔-໓໕໖] ສັດທີ່ຈຸຕິຈາກກຳເນີດສັດເດຍຣັດສານມາເກີດໃນໝູ່ມະນຸດ ມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກກຳເນີດສັດເດຍຣັດສານໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໓໓-໓໕)

[໓໕໗-໓໕໙] ສັດທີ່ຈຸຕິຈາກກຳເນີດສັດເດຍຣັດສານໄປເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກກຳເນີດສັດເດຍຣັດສານໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໓໖-໓໘)

[໓໖໐-໓໖໔] ສັດທີ່ຈຸຕິຈາກເຜດວິໄສມາເກີດໃນໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກເຜດວິໄສໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໓໙-໔໑)

[໓໖໓-໓໖໕] ສັດທີ່ຈຸຕິຈາກເຜດວິໄສໄປເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກເຜດວິໄສໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນເຜດວິໄສມີຈຳນວນຫຼາຍກວ່າ (໔໔-໔໔)

**ຈະຕຸດຖະວັກ ຈົບ**

**(ຊົມພຸທີປະເປີຍຍາລະ ຈົບ)**

# ໑໗. ປະສາທະກະຣະທຳມະວັກ

## ໝວດວ່າດ້ວຍທຳທີ່ເຮັດໃຫ້ເກີດຄວາມເຫຼື້ອມໃສ

[໓໖໖-໓໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເປັນຜູ້ຢູ່ປ່າເປັນຂໍ້ວັດປະຕິບັດ ຄວາມເປັນຜູ້ຖືທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຄວາມເປັນຜູ້ຊົງຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຄວາມເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດປະຕິບັດ ຄວາມເປັນທຳມະກະຖຶກ ຄວາມເປັນວິໄນທອນ ຄວາມເປັນພະຫູສູດ ຄວາມເປັນຜູ້ໝັ້ນຄົງ ຄວາມເຖິງພ້ອມດ້ວຍອາກັບກິຣິຍາ ຄວາມເຖິງພ້ອມດ້ວຍບໍລິວານທີ່ດີ ຄວາມເປັນຜູ້ມີບໍລິວານຫຼາຍ ຄວາມເປັນກຸນລະບຸດ ຄວາມ

ເປັນຜູ້ມີຮູບຜິວພັນງາມ ຄວາມເປັນຜູ້ເຈລະຈາມ່ວນ ຄວາມເປັນຜູ້ມັກໜ້ອຍ ຄວາມເປັນຜູ້ມີອາພາດໜ້ອຍ ທັງໝົດນີ້ເປັນຊື່ຮຽກລາບນັ້ນເອງ (໑-໑໖)

**(ປະສາທະກະຣະທຳວັກທີ ໑໗ ຈົບ)**

# ໑໘. ອະປະຣະອັດສະຣາສັງຂາຕະວັກ

## ໝວດວ່າດ້ວຍຜົນແຫ່ງຈິດຊື່ວລັດນິ້ວມືດຽວ ອີກໝວດໜຶ່ງ

[໓໘໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າພິກຂຸຈະເລີນປະຖົມຊານແມ່ນຊົ່ວລັດນິ້ວມືດຽວ ພິກຂຸນີ້ເຮົາຮຽກວ່າ ຜູ້ຢູ່ບໍ່ຫ່າງຈາກຊານ ເຮັດຕາມຄຳສອນຂອງສາດສະດາປະຕິບັດຕາມໂອວາດ ສັນບິນທະບາດຂອງຊາວບ້ານບໍ່ສູນເປົ່າ ບໍ່ຈຳເປັນຕ້ອງເວົ້າເຖິງພິກຂຸຜູ້ເຮັດໃຫ້ຫຼາຍເຊິ່ງປະຖົມຊານນັ້ນ (໑)

[໓໘໓-໓໘໙] ຖ້າພິກຂຸຈະເລີນທຸຕິຍະຊານແມ່ນຊົ່ວລັດນິ້ວມືດຽວ ໆລໆ ຈະເລີນຕະຕິຍະຊານ ໆລໆ ຈະເລີນຈະຕຸດຖະຊານ ໆລໆ ຈະເລີນເມດຕາເຈໂຕວິມຸດຕິ ໆລໆ ຈະເລີນກະລຸນາເຈໂຕວິມຸດຕິ ໆລໆ ຈະເລີນມຸທິຕາເຈໂຕວິມຸດຕິ ໆລໆ ຈະເລີນອຸເປກຂາເຈໂຕວິມຸດຕິ ฯລฯ (໔-໘)

[໓໙໐-໓໙໓] ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ໆລໆ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ໆລໆ ພິຈາລະນາເຫັນຈິດໃນຈິດຢູ່ ໆລໆ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພື່ອກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ (໙-໑໔)

[໓໙໔-໓໙໗] ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ພິກຂຸສ້າງສັນທະພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ (໑໓-໑໖)

[໓໙໘-໔໐໑] ພິກຂຸ ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ ໆລໆ ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ ໆລໆ ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ໆລໆ ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ ໆລໆ (໑໗-໒໐)

[໔໐໔-໔໐໖] ພິກຂຸ ຈະເລີນສັດທິນຊີ ໆລໆ ຈະເລີນວິຣິຍິນຊີ ໆລໆ ຈະເລີນສະຕິນຊີ ໆລໆ ຈະເລີນສະມາທິນຊີ ໆລໆ ຈະເລີນປັນຍິນຊີ ໆລໆ (໔໑-໔໕)

[໔໐໗-໔໑໑] ພິກຂຸ ຈະເລີນສັດທາພະລະ ໆລໆ ຈະເລີນວິຣິຍະພະລະ ໆລໆ ຈະເລີນສະຕິພະລະ ໆລໆ ຈະເລີນສະມາທິພະລະ ໆລໆ ຈະເລີນປັນຍາພະລະ ໆລໆ (໔໖-໕໐)

[໔໑໔-໔໑໘] ພິກຂຸ ຈະເລີນສະຕິສຳໂພດຊົງ ໆລໆ ຈະເລີນທຳມະວິຈະຍະສຳໂພດຊົງ ໆລໆ ຈະເລີນວິຣິຍະສຳໂພດຊົງ ໆລໆ ຈະເລີນປິຕິສຳໂພດຊົງ ໆລໆ ຈະເລີນປັດສັດທິສຳໂພດຊົງ ໆລໆ ຈະເລີນສະມາທິສຳໂພດຊົງ ໆລໆ ຈະເລີນອຸເປກຂາສຳໂພດຊົງ ໆລໆ (໕໑-໕໗)

[໔໑໙-໔໔໖] ພິກຂຸ ຈະເລີນສຳມາທິດຖິ ໆລໆ ຈະເລີນສຳມາສັງກັບປະ ໆລໆ ຈະເລີນສຳມາວາຈາ ໆລໆ ຈະເລີນສຳມາກຳມັນຕະ ໆລໆ ຈະເລີນສຳມາອາຊີວະ ໆລໆ ຈະເລີນສຳມາວາຍາມະ ໆລໆ ຈະເລີນສຳມາສະຕິ ໆລໆ ຈະເລີນສຳມາສະມາທິໆລໆ (໕໘-໔໕)

[໔໔໗] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ຮູບພາຍໃນ ເຫັນຮູບພາຍນອກຂະໜາດນ້ອຍ ມີສີດີບໍດີ ທ່ານຄອບງຳຮູບເຫຼົ່ານັ້ນໄດ້ ມີຄວາມຈື່ໄດ້ໝາຍຮູ້ແນວນີ້ວ່າ “ເຮົາຮູ້ ເຮົາເຫັນ” (໔໖)

[໔໔໘] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ຮູບພາຍໃນ ເຫັນຮູບພາຍນອກຂະໜາດໃຫຍ່ ມີສີດີບໍດີ ທ່ານຄອບງຳຮູບເຫຼົ່ານັ້ນໄດ້ ມີຄວາມຈື່ໄດ້ໝາຍຮູ້ແນວນີ້ວ່າ “ເຮົາຮູ້ ເຮົາເຫັນ” (໔໗)

[໔໔໙] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ອະຮູບພາຍໃນ ເຫັນຮູບພາຍນອກຂະໜາດນ້ອຍ ມີສີດີບໍດີ ທ່ານຄອບງຳຮູບເຫຼົ່ານັ້ນໄດ້ ມີຄວາມຈື່ໄດ້ໝາຍຮູ້ແນວນີ້ວ່າ “ເຮົາຮູ້ ເຮົາເຫັນ” (໔໘)

[໔໕໐] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ອະຮູບພາຍໃນ ເຫັນຮູບພາຍນອກຂະໜາດໃຫຍ່ ມີສີດີບໍດີ ທ່ານຄອບງຳຮູບເຫຼົ່ານັ້ນໄດ້ ມີຄວາມຈື່ໄດ້ໝາຍຮູ້ແນວນີ້ວ່າ “ເຮົາຮູ້ ເຮົາເຫັນ” (໔໙)

[໔໕໑] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ອະຮູບພາຍໃນ ເຫັນຮູບພາຍນອກຂຽວ ມີສີຂຽວປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ທ່ານຄອບງຳຮູບເຫຼົ່ານັ້ນໄດ້ ມີຄວາມຈື່ໄດ້ໝາຍຮູ້ແນວນີ້ວ່າ “ເຮົາຮູ້ ເຮົາເຫັນ” (໕໐)

[໔໕໒] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ອະຮູບພາຍໃນ ເຫັນຮູບພາຍນອກເຫຼືອງ ມີສີເຫຼືອງປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ທ່ານຄອບງຳຮູບເຫຼົ່ານັ້ນໄດ້ ມີຄວາມຈື່ໄດ້ໝາຍຮູ້ແນວນີ້ວ່າ “ເຮົາຮູ້ ເຮົາເຫັນ” (໕໑)

[໔໓໓] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ອະຣູບພາຍໃນ ເຫັນຮູບພາຍນອກແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ທ່ານຄອບງຳຮູບເຫຼົ່ານັ້ນໄດ້ ມີຄວາມຈື່ໄດ້ໝາຍຮູ້ແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" (໕໒)

[໔໓໔] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ອະຣູບພາຍໃນ ເຫັນຮູບພາຍນອກຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ທ່ານຄອບງຳຮູບເຫຼົ່ານັ້ນໄດ້ ມີຄວາມຈື່ໄດ້ໝາຍຮູ້ແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" (໕໓)

[໔໓໕] ພິກຂຸ ຜູ້ມີຮູບຊານເປັນອາລົມຍ່ອມເຫັນຮູບພາຍນອກທັງຫຼາຍໄດ້ (໕໔)

[໔໓໖] ພິກຂຸ ຜູ້ມີຄວາມຈື່ໄດ້ໝາຍຮູ້ ອະຣູບພາຍໃນ ຍ່ອມເຫັນຮູບພາຍນອກທັງຫຼາຍໄດ້ (໕໕)

[໔໓໗] ພິກຂຸເ ປັນຜູ້ນ້ອມໃຈໄປວ່າ "ງາມ" ທໍ່ນັ້ນ (໕໖)

[໔໓໘] ພິກຂຸ ບັນລຸອາກາສານັນຈາຍະຕະນະຊານ°ຢູ່ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດເຖິງນານັດຕະສັນຍາໂດຍປະການທັງປວງ (໕໗)

[໔໓໙] ພິກຂຸ ລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ຢູ່ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" (໕໘)

[໔໔໐] ພິກຂຸ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ຢູ່ໂດຍກຳນົດວ່າ "ບໍ່ມີອັນໃດ" (໕໙)

[໔໔໑] ພິກຂຸ ລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ (໖໐)

[໔໔໒] ພິກຂຸ ລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດ (ສະມາບັດທີ່ດັບສັນຍາແລະເວທະນາ) ຢູ່ (໖໑)

[໔໔໓-໔໕໒] ພິກຂຸ ຈະເລີນປະຖະວີກະສິນ ໆລໆ ຈະເລີນອາໂປກະສິນ ໆລໆ ຈະເລີນເຕໂຊກະສິນ ໆລໆ ຈະເລີນວາໂຍກະສິນ ໆລໆ ຈະເລີນນີລະກະສິນ ໆລໆ ຈະເລີນປີຕະກະສິນ ໆລໆ ຈະເລີນໂລຫິຕະກະສິນ ໆລໆ ຈະເລີນໂອທາຕະກະສິນ ໆລໆ ຈະເລີນອາກາສະກະສິນ ໆລໆ ຈະເລີນວິນຍານກະສິນ ໆລໆ (໖໒-໗໑)

[໔໕໓-໔໗໔] ພິກຂຸຈະເລີນອະສຸພະສັນຍາ ໆລໆ ຈະເລີນມໍຣະນະສັນຍາ ໆລໆ ຈະເລີນອາຫາເຣປະຕິກູນສັນຍາ ໆລໆ ຈະເລີນສັບພະໂລເກອະນະພິຣະຕະສັນຍາ ໆລໆ ຈະເລີນອະນິດຈະສັນຍາ ໆລໆ ຈະເລີນ ອະນິດເຈທຸກຂະສັນຍາ ໆລໆ ຈະເລີນທຸກເຂອະນັດຕະສັນຍາ ໆລໆ ຈະເລີນປະຫານະສັນຍາ ໆລໆ ຈະເລີນວິຣາຄະສັນຍາ ໆລໆ ຈະເລີນນິໂຣທະສັນຍາ ໆລໆ (໗໘-໘໑)

[໔໗໓-໔໗໘] ພິກຂຸ ຈະເລີນອະນິດຈະສັນຍາ ໆລໆ ຈະເລີນອະນັດຕະສັນຍາ ໆລໆ ຈະເລີນມໍຣະນະ-ສັນຍາ ໆລໆ ຈະເລີນອາຫາເຣປະຕິກູນສັນຍາ ໆລໆ ຈະເລີນສັບພະໂລເກອະນະພິຣະຕະສັນຍາ ໆລໆ ຈະເລີນ ອັດຖິກະສັນຍາ ໆລໆ ຈະເລີນປຸລະວະກະສັນຍາ ໆລໆ ຈະເລີນວິນີລະກະສັນຍາ ໆລໆ ຈະເລີນວິດສິດທະກະສັນຍາ ໆລໆ ຈະເລີນອຸດທຸມາຕະກະສັນຍາ ໆລໆ ( ໘໘-໙໑)

[໔໗໓-໔໘໘] ພິກຂຸຈະເລີນພຸດທານຸດສະຕິ ໆລໆ ຈະເລີນທຳມານຸດສະຕິ ໆລໆ ຈະເລີນສັງຄານຸດສະຕິ ໆລໆ ຈະເລີນສີລານຸດສະຕິ ໆລໆ ຈະເລີນຈາຄານຸດສະຕິ ໆລໆ ຈະເລີນເທວະຕານຸດສະຕິ ໆລໆ ຈະເລີນອານາປານະສະຕິ ໆລໆ ຈະເລີນມະຣະນັດສະຕິ ໆລໆ ຈະເລີນກາຍະຄະຕາສະຕິ ໆລໆ ຈະເລີນອຸປະສະມານຸດສະຕິ ໆລໆ (໙໘-໑໐໑)

[໔໘໓-໔໙໘] ພິກຂຸ ຈະເລີນສັດທິນຊີທີ່ປະກອບດ້ວຍປະຖົມຊານ ໆລໆ ຈະເລີນ ວິຣິຍິນຊີ ໆລໆ ຈະເລີນສະຕິນຊີ ໆລໆ ຈະເລີນສະມາທິນຊີ ໆລໆ ຈະເລີນປັນຍິນຊີ ໆລໆ ຈະເລີນສັດທາພະລະ ໆລໆ ຈະເລີນວິຣິຍະພະລະ ໆລໆ ຈະເລີນສະຕິພະລະ ໆລໆ ຈະເລີນສະມາທິພະລະ ໆລໆ ຈະເລີນປັນຍາພະລະ ໆລໆ (໑໐໘-໑໑໑)

[໔໙໓-໕໗໔] ພິກຂຸ ຈະເລີນສັດທິນຊີທີ່ປະກອບດ້ວຍທຸຕິຍະຊານ ໆລໆ ທີ່ປະກອບດ້ວຍຕະຕິຍະຊານ ໆລໆ ທີ່ປະກອບດ້ວຍຈະຕຸດຖະຊານ ໆລໆ ທີ່ປະກອບດ້ວຍເມດຕາ ໆລໆ ທີ່ປະກອບດ້ວຍກະລຸນາ ໆລໆ ທີ່ປະກອບດ້ວຍມຸທິຕາ ໆລໆ ທີ່ປະກອບດ້ວຍອຸເປກຂາ ໆລໆ ຈະເລີນວິຣິຍິນຊີ ໆລໆ ຈະເລີນສະຕິນຊີ ໆລໆ ຈະເລີນສະມາທິນຊີ ໆລໆ ຈະເລີນປັນຍິນຊີ ໆລໆ ຈະເລີນສັດທາພະລະ ໆລໆ ຈະເລີນວິຣິຍະພະລະ ໆລໆ ຈະເລີນສະຕິພະລະ ໆລໆ ຈະເລີນສະມາທິພະລະ ໆລໆ ຈະເລີນປັນຍາພະລະ ໆລໆ ພິກຂຸທັງຫຼາຍ ພິກຂຸນີ້ເຮົາຮຽກວ່າຜູ້ຢູ່ບໍ່ຫ່າງຈາກຊານ ເຮັດຕາມຄຳສອນ ຂອງສາດສະດາ ປະຕິບັດຕາມໂອວາດ ສັນບິນທະບາດຂອງຊາວບ້ານບໍ່ສູນເປົ່າ ບໍ່ຈຳເປັນຕ້ອງເວົ້າເຖິງພິກຂຸຜູ້ເຮັດໃຫ້ຫຼາຍ ເຊິ່ງປັນຍາພະລະທີ່ປະກອບດ້ວຍອຸເປກຂາ (໑໑໘-໑໘໑)

**ອະປະຣະອັດສະຣາສັງຂາຕະວັກທີ ໑໘ ຈົບ**

# ໑໗. ກາຍະຄະຕາສະຕິວັກ

## ໝວດວ່າດ້ວຍຜົນແຫ່ງການຈະເລີນກາຍະຄະຕາສະຕິ

[໕໗໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກາຍະຄະຕາສະຕິອັນພິກຂຸອົງໃດອົງໜຶ່ງໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ກຸສົນທຳແນວໃດແນວໜຶ່ງທີ່ເປັນສ່ວນແຫ່ງວິດຊາຍ່ອມເປັນພາວະນາທີ່ຢັ່ງລົງໃນຈິດຂອງພິກຂຸນັ້ນ ປຽບຄື ມະຫາສະມຸດອັນຜູ້ໃດຜູ້ໜຶ່ງສຳຜັດດ້ວຍໃຈແລ້ວ ແມ່ນ້ຳນ້ອຍສາຍໃດສາຍໜຶ່ງທີ່ໄຫຼໄປສູ່ສະມຸດ ຍ່ອມຜາກົດພາຍໃນຈິດຂອງຜູ້ນັ້ນ (໑)

[໕໗໔-໕໘໐] ທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອສັງເວດໃຫຍ່ ເພື່ອປະໂຫຍດໃຫຍ່ ເພື່ອທຳເປັນແດນກະເສມຈາກໂຍຄະໃຫຍ່ ເພື່ອສະຕິແລະສຳປະຊັນຍະ ເພື່ອໄດ້ຍານທັດສະນະ ເພື່ອຢູ່ເປັນສຸກໃນປັດຈຸບັນ ເພື່ອເຮັດໃຫ້ແຈ້ງເຊິ່ງຜົນແຫ່ງວິດຊາແລະວິມຸດຕິ ທຳອັນເປັນເອກຄືອັນໃດ? ຄື ກາຍະຄະຕາສະຕິ ທຳອັນເປັນເອກ ນີ້ແລທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອສັງເວດໃຫຍ່ ເພື່ອປະໂຫຍດອັນໃຫຍ່ ເພື່ອທຳເປັນແດນກະເສມຈາກໂຍຄະອັນໃຫຍ່ ເພື່ອສະຕິແລະສຳປະຊັນຍະ ເພື່ອໄດ້ຍານທັດສະນະ ເພື່ອຢູ່ເປັນສຸກໃນປັດຈຸບັນ ເພື່ອເຮັດໃຫ້ແຈ້ງເຊິ່ງຜົນແຫ່ງວິດຊາແລະວິມຸດຕິ (໒-໘)

[໕໘໑] ເມື່ອທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ແມ່ນກາຍກໍສະງົບ ແມ່ນຈິດກໍສະງົບ ແມ່ນວິຕົກແລະວິຈານກໍສະງົບ ທຳທີ່ເປັນສ່ວນແຫ່ງວິດຊາແມ່ນທັງໝົດກໍເຖິງຄວາມຈະເລີນເຕັມທີ່ ທຳອັນເປັນເອກຄືອັນໃດ? ຄື ກາຍະຄະຕາສະຕິ ເມື່ອທຳອັນເປັນເອກນີ້ແລທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ແມ່ນກາຍກໍສະງົບ ແມ່ນຈິດກໍສະງົບ ແມ່ນວິຕົກແລະວິຈານກໍສະງົບ ທຳທີ່ເປັນສ່ວນແຫ່ງວິດຊາແມ່ນທັງໝົດກໍເຖິງຄວາມຈະເລີນເຕັມທີ່ (໙)

[໕໘໒] ເມື່ອທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍລະໄດ້ ທຳອັນເປັນເອກຄືອັນໃດ? ຄື ກາຍະຄະຕາສະຕິ ເມື່ອທຳອັນເປັນເອກນີ້ແລ ທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ອະກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍລະໄດ້ (໑໐)

[໕໘໓] ເມື່ອທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ທຳອັນເປັນເອກຄືອັນໃດ? ຄື ກາຍະຄະຕາສະຕິ ເມື່ອທຳອັນເປັນເອກນີ້ແລທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ກຸສົນທຳທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ (໑໑)

[໕໗໔] ເມື່ອທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມລະອະວິດຊາໄດ້ ວິດຊາເກີດຂຶ້ນຍ່ອມລະອັດສະມິມານະໄດ້ ອະນຸໄສ໑ຍ່ອມເຖິງຄວາມຖອນຂຶ້ນ ຍ່ອມລະສັງໂຍດໄດ້ ທຳອັນເປັນເອກຄືອັນໃດ? ຄື ກາຍະຄະຕາສະຕິ ເມື່ອທຳອັນເປັນເອກນີ້ແລ ທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມລະອະວິດຊາໄດ້ ວິດຊາເກີດຂຶ້ນຍ່ອມລະອັດສະມິມານະໄດ້ອະນຸໄສເຖິງຄວາມຖອນຂຶ້ນຍ່ອມລະສັງໂຍດໄດ້ (໑໘)

[໕໗໕-໕໗໖] ທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມກະຈັດກະຈາຍແຫ່ງປັນຍາ ເພື່ອອະນຸປາທາປະຣິນິບພານ ທຳອັນເປັນເອກຄືອັນໃດ? ຄືກາຍະຄະຕາສະຕິທຳອັນເປັນເອກນີ້ແລ ທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມກະຈັດ ກະຈາຍແຫ່ງປັນຍາ ເພື່ອອະນຸປາທາປະຣິນິບພານ (໑໖-໑໔)

[໕໗໗-໕໗໙] ເມື່ອທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນ ເຮັດໃຫ້ຫຼາຍແລ້ວຍ່ອມມີຄວາມເຂົ້າໃຈແຈ່ມແຈ້ງທາດຫຼາຍຊະນິດ ມີຄວາມເຂົ້າໃຈແຈ່ມແຈ້ງທາດທີ່ແຕກຕ່າງກັນ ມີຄວາມກະຈັດກະຈາຍໃນທາດຫຼາຍຊະນິດ ທຳອັນເປັນເອກຄືອັນໃດ? ຄື ກາຍະຄະຕາສະຕິ ເມື່ອທຳອັນເປັນເອກນີ້ແລ ທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຄວາມເຂົ້າໃຈແຈ່ມແຈ້ງທາດຫຼາຍຊະນິດ ມີຄວາມເຂົ້າໃຈແຈ່ມແຈ້ງທາດທີ່ແຕກຕ່າງກັນ ມີຄວາມກະຈັດກະຈາຍໃນທາດຫຼາຍຊະນິດ (໑໕-໑໗)

[໕໘໐-໕໘໖] ທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ແລະອະຣະຫັດຕະຜົນ ທຳອັນເປັນເອກ ຄື ອັນໃດ? ຄື ກາຍະຄະຕາສະຕິ ທຳອັນເປັນເອກນີ້ແລທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ແລະອະຣະຫັດຕະຜົນ (໑໘-໔໑)

[໕໘໔-໕໙໙] ທຳອັນເປັນເອກທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອໄດ້ປັນຍາ ເພື່ອຄວາມຈະເລີນແຫ່ງປັນຍາ ເພື່ອຄວາມໄພບູນແຫ່ງປັນຍາ ເພື່ອຄວາມເປັນຜູ້ມີປັນຍາຫຼາຍ ເພື່ອຄວາມເປັນຜູ້ມີປັນຍາແໜ້ນໜາ ເພື່ອຄວາມເປັນຜູ້ມີປັນຍາໄພບູນ ເພື່ອຄວາມເປັນຜູ້ມີປັນຍາລຸ້ມເລິກ ເພື່ອຄວາມເປັນຜູ້ມີປັນຍາສາມາດຍິ່ງ ເພື່ອຄວາມເປັນຜູ້ມີປັນຍາກວ້າງຂວາງ[໒] ເພື່ອຄວາມເປັນຜູ້ຫຼາຍດ້ວຍປັນຍາ ເພື່ອຄວາມເປັນຜູ້ມີປັນຍາວ່ອງໄວ ເພື່ອຄວາມເປັນຜູ້ມີປັນປັນສງຸບພັນ ເພື່ອຄວາມເປັນຜູ້ມີປັນຍາແຈ່ມໃສ ເພື່ອຄວາມເປັນຜູ້ມີປັນຍາຊຳນານ ເພື່ອຄວາມເປັນຜູ້ມີປັນຍາແຫຼມຄົມ ແລະເພື່ອຄວາມເປັນຜູ້ມີປັນຍາທຳລາຍກິເລດ ທຳອັນເປັນເອກຄືອັນໃດ? ຄື ກາຍະຄະຕາສະຕິ ທຳອັນເປັນເອກນີ້ແລ ທີ່ບຸກຄົນໄດ້ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອໄດ້ປັນຍາ ເພື່ອຄວາມຈະເລີນແຫ່ງປັນຍາ ເພື່ອຄວາມໄພບູນແຫ່ງປັນຍາ ເພື່ອ

ຄວາມເປັນຜູ້ມີປັນຍາຫຼາຍ ເພື່ອຄວາມເປັນຜູ້ມີປັນຍາແໜ້ນໜາ ເພື່ອຄວາມເປັນຜູ້ມີປັນຍາໄພບູນ ເພື່ອຄວາມເປັນຜູ້ມີປັນຍາລຸ້ມເລິກ ເພື່ອຄວາມເປັນຜູ້ມີປັນຍາສາມາດຍິ່ງ ເພື່ອຄວາມເປັນຜູ້ມີປັນຍາກວ້າງຂວາງ ເພື່ອຄວາມເປັນຜູ້ຫຼາຍດ້ວຍປັນຍາ ເພື່ອຄວາມເປັນຜູ້ມີປັນຍາວ່ອງໄວ ເພື່ອຄວາມເປັນຜູ້ມີປັນສຽບພັນ ເພື່ອຄວາມເປັນຜູ້ມີປັນຍາແຈ່ມໃສ ເພື່ອຄວາມເປັນຜູ້ມີປັນຍາຊຳນານ ເພື່ອຄວາມເປັນຜູ້ມີປັນຍາແຫຼມຄົມແລະເພື່ອຄວາມເປັນຜູ້ມີປັນຍາທຳລາຍກິເລດ (໔໔-໙໗)

**ກາຍະຄະຕາສະຕິວັກທີ ໑໗ ຈົບ**

# ໔໐. ອະມະຕະວັກ

## ໝວດວ່າດ້ວຍອະມະຕະທຳ

[໖໐໐] ຊົນເຫຼົ່າໃດ ບໍ່ຈະເລີນກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບໍ່ບັນລຸອະມະຕະທຳ ຊົນເຫຼົ່າໃດ ຈະເລີນກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບັນລຸອະມະຕະທຳ (໑)

[໖໐໑] ຊົນເຫຼົ່າໃດ ບໍ່ໄດ້ຈະເລີນກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບໍ່ໄດ້ບັນລຸອະມະຕະທຳ ຊົນເຫຼົ່າໃດ ໄດ້ຈະເລີນກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ໄດ້ບັນລຸອະມະຕະທຳ (໒)

[໖໐໒] ຊົນເຫຼົ່າໃດ ມີກາຍະຄະຕາສະຕິເສື່ອມ ຊົນເຫຼົ່ານັ້ນຊື່ວ່າ ມີອະມະຕະທຳເສື່ອມ ຊົນເຫຼົ່າໃດມີກາຍະຄະຕາສະຕິບໍ່ເສື່ອມ ຊົນເຫຼົ່ານັ້ນຊື່ວ່າ ມີອະມະຕະທຳບໍ່ເສື່ອມ (໓)

[໖໐໓] ຊົນເຫຼົ່າໃດ ເບື່ອກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ເບື່ອອະມະຕະທຳ ຊົນເຫຼົ່າໃດພໍໃຈກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ພໍໃຈອະມະຕະທຳ (໔)

[໖໐໔] ຊົນເຫຼົ່າໃດຜະໝາດກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ຜະໝາດອະມະຕະທຳ ຊົນເຫຼົ່າໃດບໍ່ຜະໝາດກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບໍ່ຜະໝາດອະມະຕະທຳ (໕)

[໖໐໕] ຊົນເຫຼົ່າໃດ ຫຼົງລືມກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ຫຼົງລືມອະມະຕະທຳ ຊົນເຫຼົ່າໃດບໍ່ຫຼົງລືມກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບໍ່ຫຼົງລືມອະມະຕະທຳ (໖)

[໖໐໖] ຊົນເຫຼົ່າໃດ ບໍ່ໄດ້ເສບກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບໍ່ໄດ້ເສບອະມະຕະທຳ ຊົນເຫຼົ່າໃດໄດ້ເສບກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ໄດ້ເສບອະມະຕະທຳ (໗)

[ຜ໐໗] ຊົນເຫຼົ່າໃດ ບໍ່ໄດ້ຈະເລີນກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບໍ່ໄດ້ຈະເລີນອະມະຕະທຳ ຊົນເຫຼົ່າໃດ ໄດ້ຈະເລີນກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ໄດ້ຈະເລີນອະມະຕະທຳ (໗)

[ຜ໐໘] ຊົນເຫຼົ່າໃດ ບໍ່ໄດ້ທຳກາຍຄະຕາສະຕິໃຫ້ຫຼາຍ ຊົນເຫຼົ່ານັ້ນຊື່ວ່າບໍ່ໄດ້ເຮັດ ອະມະຕະທຳໃຫ້ຫຼາຍ ຊົນເຫຼົ່າໃດ ໄດ້ທຳກາຍຄະຕາສະຕິໃຫ້ຫຼາຍ ຊົນເຫຼົ່ານັ້ນຊື່ວ່າ ໄດ້ເຮັດອະມະຕະທຳໃຫ້ຫຼາຍ (໘)

[ຜ໐໙] ຊົນເຫຼົ່າໃດ ບໍ່ໄດ້ຮູ້ຍິ່ງກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບໍ່ໄດ້ຮູ້ຍິ່ງອະມະຕະທຳ ຊົນເຫຼົ່າໃດ ໄດ້ຮູ້ຍິ່ງກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ໄດ້ຮູ້ຍິ່ງອະມະຕະທຳ (໑໐)

[ຜ໑໐] ຊົນເຫຼົ່າໃດ ບໍ່ໄດ້ກຳນົດຮູ້ກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ບໍ່ໄດ້ກຳນົດຮູ້ອະມະຕະທຳ ຊົນເຫຼົ່າໃດ ໄດ້ກຳນົດຮູ້ກາຍະຄະຕາສະຕິ ຊົນເຫຼົ່ານັ້ນຊື່ວ່າ ໄດ້ກຳນົດຮູ້ ອະມະຕະທຳ (໑໑)

[ຜ໑໑] ຊົນເຫຼົ່າໃດ ບໍ່ໄດ້ທຳກາຍຄະຕາສະຕິໃຫ້ແຈ້ງ ຊົນເຫຼົ່ານັ້ນຊື່ວ່າບໍ່ໄດ້ເຮັດ ອະມະຕະທຳໃຫ້ແຈ້ງ ຊົນເຫຼົ່າໃດ ໄດ້ທຳກາຍຄະຕາສະຕິໃຫ້ແຈ້ງ ຊົນເຫຼົ່ານັ້ນຊື່ວ່າ ໄດ້ເຮັດອະມະຕະທຳໃຫ້ແຈ້ງ (໑໔)

(ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດແນວນີ້ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າ)

**ອະມະຕະວັກທີ ໔໐ ຈົບ**

**ເອກະນິບາດ ຈົບ**

# ພຣະສູດຕັນຕະປິດົກ

## ອັງຄຸດຕະຣະນິກາຍ ທຸກນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ**

## ໑. ປະຖົມປັນນາດ

## ໑. ກໍາມະກະຣະນະວັກ

### ໝວດວ່າດ້ວຍວິທີການລົງໂທດ

### ໑. ວັດຊະສູດ

### ວ່າດ້ວຍໂທດ

[໑] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນກາໄດົກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ໂທດ ໔ ປະການນີ້

ໂທດ ໔ ປະການ ອັນໃດແດ່ ຄື

໑. ໂທດທີ່ໃຫ້ຜົນໃນພົບນີ້ ໔. ໂທດທີ່ໃຫ້ຜົນໃນພົບໜ້າ

ໂທດທີ່ໃຫ້ຜົນໃນພົບນີ້ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ໄດ້ເຫັນພຣະຣາຊາຮັບສັ່ງໃຫ້ຈັບໂຈນຜູ້ມັກປະພຶດຊົ່ວແລ້ວໃຫ້ລົງໂທດທັນນານາຊະນິດ ຄື ຊ້ຽນດ້ວຍແສ້ແດ່ ຊ້ຽນດ້ວຍຫວາຍແດ່ ຕີດ້ວຍໄມ້ກະບອງແດ່ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດຫູແດ່ ຕັດດັງແດ່ ຕັດທັງຫູແລະດັງແດ່ ເຮັດໃຫ້

ເປັນພາຊະນະສຳລັບຮອງໝົ້ນ້ຳເຂົ້າແດ່ ເຮັດໃຫ້ກົ້ງງເກົາຄືຫອຍສັງແດ່ ເຮັດໃຫ້ມີປາກຄືປາກຣາຫູແດ່ ເຮັດໃຫ້ມີພວງມາໄລໄຟແດ່ ເຮັດໃຫ້ມືມີໄຟລຸກຮຸ່ງເປັນແປວແດ່ ເຮັດໃຫ້ເປັນກຽວໜັງໂຕຊາຍແດ່ ເຮັດໃຫ້ນຸ່ງໜັງຕົນເອງຄືນຸ່ງຜ້າຂາດແດ່ ເຮັດໃຫ້ຢືນກວາງແດ່ ເຮັດໃຫ້ຄືຊີ້ນຕິດເບັດແດ່ເຮັດໃຫ້ເປັນຕ່ອນທໍ່ກະຫາປະນະແດ່ ເຮັດໃຫ້ເປັນທີ່ຮັບນ້ຳດ່າງແດ່ ເຮັດໃຫ້ໝຸນຄືກອນເຫຼັກແດ່ເຮັດໃຫ້ເປັນຕັ່ງທີ່ເຮັດດ້ວຍ ເຟືອງແດ່ ຮົດດ້ວຍນ້ຳມັນຮ້ອນແດ່ ໃຫ້ໝາກັດກິນແດ່ ໃຫ້ນອນຫງາຍເທິງຫລາວທັງທີ່ຍັງມີຊີວິດຢູ່ແດ່ ຕັດຫົວດ້ວຍດາບແດ່

ເຂົາມີຄວາມຄິດແນວນີ້ວ່າ "ຍ້ອນກຳຊົ່ວເຊັ່ນໃດເປັນເຫດ ພຣະຣາຊາຮັບສັ່ງໃຫ້ຈັບໂຈນຜູ້ມັກປະພຶດຊົ່ວ ແລ້ວໃຫ້ລົງໂທດທັນນານາຊະນິດ ຄື ຂ້ຽນດ້ວຍແສ້ແດ່ ຯລຯ ຕັດຫົວດ້ວຍດາບແດ່ກໍຖ້າເຮົາເອງເພິ່ງເຮັດກຳຊົ່ວເຊັ່ນນັ້ນ ພຣະຣາຊາເພິ່ງຮັບສັ່ງໃຫ້ຈັບເຮົາແລ້ວໃຫ້ລົງໂທດທັນນານາຊະນິດແນວນີ້ຄື ຂ້ຽນດ້ວຍແສ້ແດ່ ຯລຯ ຕັດຫົວດ້ວຍດາບແດ່" ເຂົາຢ້ານໂທດທີ່ໃຫ້ຜົນໃນພົບນີ້ບໍ່ທ່ຽວແຍ່ງຊີງສິ່ງຂອງຂອງຄົນອື່ນ ໆ ນີ້ຮຽກວ່າ ໂທດທີ່ໃຫ້ຜົນໃນພົບນີ້

ໂທດທີ່ໃຫ້ຜົນໃນພົບໜ້າ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຫັນປະຈັກດັ່ງນີ້ວ່າ "ຜົນຂອງກາຍທຸດຈະຣິດເປັນຜົນທີ່ ຊົ່ວຊາມ ເປັນທຸກ ເຊິ່ງບຸກຄົນຈະຕ້ອງໄດ້ຮັບໃນພົບໜ້າແນ່ນອນ ຜົນຂອງວະຈີທຸດຈະຣິດເປັນຜົນທີ່ຊົ່ວຊາມ ເປັນທຸກ ເຊິ່ງບຸກຄົນຈະຕ້ອງໄດ້ຮັບໃນພົບໜ້າແນ່ນອນ ຜົນຂອງມະໂນທຸດຈະຣິດເປັນຜົນທີ່ຊົ່ວຊາມ ເປັນທຸກ ເຊິ່ງບຸກຄົນຈະຕ້ອງໄດ້ຮັບໃນພົບໜ້າແນ່ນອນ ກໍຖ້າເຮົາເພິ່ງປະພຶດຊົ່ວທາງກາຍ ປະພຶດຊົ່ວທາງວາຈາ ປະພຶດຊົ່ວທາງໃຈ ຄວາມຊົ່ວບາງຢ່າງນັ້ນເພິ່ງເປັນເຫດໃຫ້ເຮົາຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ" ເຂົາຢ້ານໂທດທີ່ໃຫ້ຜົນໃນພົບໜ້າ ຈຶ່ງລະກາຍທຸດຈະຣິດ ພ່ຳເພັງກາຍສຸດຈະຣິດ ລະວະຈີທຸດຈະຣິດ ພ່ຳເພັງວະຈີສຸດຈະຣິດ ລະມະໂນທຸດຈະຣິດ ພ່ຳເພັງມະໂນສຸດຈະຣິດ ບໍລິຫານຕົນໃຫ້ບໍລິສຸດ ນີ້ຮຽກວ່າ ໂທດທີ່ໃຫ້ຜົນໃນພົບໜ້າ

ພິກຂຸທັງຫຼາຍ ໂທດ ໒ ປະການນີ້ແລ

ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກຢ້ານໂທດທີ່ໃຫ້ຜົນໃນພົບນີ້ຈັກຢ້ານໂທດທີ່ໃຫ້ຜົນໃນພົບໜ້າ ຈັກເປັນຄົນຢ້ານຕໍ່ໂທດ ມີປົກກະຕິເຫັນໂທດໂດຍຄວາມເປັນຂອງເປັນຕາຢ້ານ" ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ ບຸກຄົນຜູ້ຢ້ານຕໍ່ໂທດ ມີປົກກະຕິເຫັນໂທດໂດຍຄວາມເປັນຂອງເປັນຕາຢ້ານ ເພິ່ງຫວັງເຫດແຫ່ງຄວາມລຸດພົ້ນຈາກໂທດທັງມວນໄດ້

**ວັດຊະສູດ ທີ ໑ ຈົບ**

## ໔. ປະທານະສູດ

## ວ່າດ້ວຍຄວາມພຽນທີ່ເກີດໄດ້ຍາກ

[໔] ພິກຂຸທັງຫຼາຍ ຄວາມພຽນທີ່ເກີດໄດ້ຍາກໃນໂລກ ໔ ປະການນີ້

ຄວາມພຽນ ໔ ປະການ ອັນໃດແດ່ ຄື

໑. ຄວາມພຽນຂອງພວກຄະລືຫັດ ຜູ້ຄອງເຮືອນເພື່ອເຮັດໃຫ້ເກີດເຄື່ອງນຸ່ງຫົ່ມ ອາຫານ ບ່ອນຢູ່ອາໄສ ແລະຢາປິ່ນປົວພະຍາດ

໔. ຄວາມພຽນຂອງຜູ້ອອກຈາກເຮືອນບວດເປັນບັນພະຊິດ ເພື່ອສະລະຖິ້ມອຸປະທິທັງປວງ ຄວາມພຽນທີ່ເກີດໄດ້ຍາກໃນໂລກ ໔ ປະການນີ້ແລ

ບັນດາຄວາມພຽນ ໔ ປະການນີ້ ຄວາມພຽນເພື່ອສະລະຖິ້ມອຸປະທິທັງປວງເປັນທຳ ປະເສີດ ຍ້ອນເຫດນັ້ນແລ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ “ເຮົາຈັກເລີ່ມຕັ້ງຄວາມພຽນເພື່ອສະລະຖິ້ມອຸປະທິທັງປວງ”

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ແລ

**ປະທານະສູດ ທີ ໔ ຈົບ**

## ໙. ຕະປະນີຍະສູດ

## ວ່າດ້ວຍທຳທີ່ເປັນເຫດແຫ່ງຄວາມເດືອດຮ້ອນ

[໙] ພິກຂຸທັງຫຼາຍ ທຳທີ່ເປັນເຫດແຫ່ງຄວາມເດືອດຮ້ອນ ໔ ປະການນີ້

ທຳທີ່ເປັນເຫດແຫ່ງຄວາມເດືອດຮ້ອນ ໔ ປະການ ອັນໃດແດ່ ຄື

ບຸກຄົນລາງຄົນໃນໂລກນີ້

໑. ເຮັດແຕ່ກາຍທຸດຈະຣິດ
໑. ເຮັດແຕ່ວະຈີທຸດຈະຣິດ
໑. ເຮັດແຕ່ມະໂນທຸດຈະຣິດ
໔. ບໍ່ໄດ້ທຳກາຍສຸດຈະຣິດ
໔. ບໍ່ໄດ້ເຮັດວະຈີສຸດຈະຣິດ
໔. ບໍ່ໄດ້ເຮັດມະໂນສຸດຈະຣິດ

ເຂົາເດືອດຮ້ອນຢູ່ວ່າ "ເຮົາເຮັດແຕ່ກາຍທຸດຈະຣິດ ບໍ່ໄດ້ທຳກາຍສຸດຈະຣິດ ເຮັດແຕ່ວະຈີທຸດຈະຣິດ ບໍ່ໄດ້ເຮັດວະຈີສຸດຈະຣິດ ເຮັດແຕ່ມະໂນທຸດຈະຣິດ ບໍ່ໄດ້ເຮັດມະໂນສຸດຈະຣິດ"

ພິກຂຸທັງຫຼາຍ ທຳທີ່ເປັນເຫດແຫ່ງຄວາມເດືອດຮ້ອນ ໔ ປະການນີ້ແລ

**ຕະປະນີຍະສູດທີ ๓ ຈົບ**

## ๔. ອະຕະປະນີຍະສູດ

## ວ່າດ້ວຍທຳທີ່ບໍ່ເປັນເຫດແຫ່ງຄວາມເດືອດຮ້ອນ

[๔] ພິກຂຸທັງຫຼາຍ ທຳທີ່ບໍ່ເປັນເຫດແຫ່ງຄວາມເດືອດຮ້ອນ ໔ ປະການນີ້

ທຳທີ່ບໍ່ເປັນເຫດແຫ່ງຄວາມເດືອດຮ້ອນ ໔ ປະການ ອັນໃດແດ່ ຄື

ບຸກຄົນລາງຄົນໃນໂລກນີ້

๑. ເຮັດແຕ່ກາຍສຸດຈະຣິດ ໔. ບໍ່ໄດ້ເຮັດກາຍທຸດຈະຣິດ
๑. ເຮັດແຕ່ວະຈີສຸດຈະຣິດ ໔. ບໍ່ໄດ້ເຮັດວະຈີທຸດຈະຣິດ
๑. ເຮັດແຕ່ມະໂນສຸດຈະຣິດ ໔. ບໍ່ໄດ້ເຮັດມະໂນທຸດຈະຣິດ

ເຂົາຍ່ອມບໍ່ເດືອດຮ້ອນຢູ່ວ່າ "ເຮົາເຮັດແຕ່ກາຍສຸດຈະຣິດ ບໍ່ໄດ້ເຮັດກາຍທຸດຈະຣິດ ເຮັດແຕ່ວະຈີສຸດຈະຣິດ ບໍ່ໄດ້ເຮັດວະຈີທຸດຈະຣິດ ເຮັດແຕ່ມະໂນສຸດຈະຣິດ ບໍ່ໄດ້ເຮັດມະໂນທຸດຈະຣິດ"

ພິກຂຸທັງຫຼາຍ ທຳທີ່ບໍ່ເປັນເຫດແຫ່ງຄວາມເດືອດຮ້ອນ ໔ ປະການນີ້ແລ

**ອະຕະປະນີຍະສູດ ທີ ๔ ຈົບ**

## ๕. ອຸປັນຍາຕະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ຊົງຮູ້ສັບພັນຍູຕະຍານ

[๕] ພິກຂຸທັງຫຼາຍ ເຮົາຮູ້ທົ່ວເຖິງທຳ ໔ ປະການ

ທຳ ໔ ປະການ ອັນໃດແດ່ ຄື

๑. ຄວາມບໍ່ສັນໂດດສຳພຽງກຸສົນທຳທັງຫຼາຍ

໘. ຄວາມບໍ່ທໍ້ຖອຍໃນການພໍາເພັງພຽນ

ພິກຂຸທັງຫຼາຍ ເຮົາເລີ່ມຕັ້ງຄວາມພຽນບໍ່ທໍ້ຖອຍວ່າ "ຈະເຫຼືອຢູ່ແຕ່ໜັງ ເອັນ ແລະກະດູກກໍຕາມ ຊີ້ນແລະເລືອດໃນກາຍຈົ່ງເຫືອດແຫ້ງໄປເຖີ້ນ ຖ້າຍັງບໍ່ບັນລຸຜົນທີ່ເພິ່ງບັນລຸດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນຂອງບຸຣຸດແລ້ວ ຈັກບໍ່ຢຸດຄວາມພຽນ ສຳໂພທິຍານນັ້ນ ເຮົາບັນລຸໄດ້ດ້ວຍຄວາມບໍ່ຜະໝາດ ທຳເປັນແດນກະເສມຈາກໂຍຄະທີ່ຍອດຢ້ຽມ ເຮົາກໍບັນລຸໄດ້ດ້ວຍຄວາມບໍ່ຜະໝາດ ແມ່ນຖ້າທ່ານທັງຫຼາຍ ເພິ່ງຕັ້ງຄວາມພຽນບໍ່ທໍ້ຖອຍວ່າ "ຈະເຫຼືອຢູ່ແຕ່ໜັງ ເອັນ ແລະກະດູກກໍຕາມ ຊີ້ນແລະເລືອດໃນກາຍຈົ່ງເຫືອດແຫ້ງໄປເຖີ້ນ ຖ້າຍັງບໍ່ບັນລຸຜົນທີ່ເພິ່ງບັນລຸດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນຂອງບຸຣຸດແລ້ວ ຈັກບໍ່ຢຸດຄວາມພຽນ" ບໍ່ດົນປານໃດ ກໍຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນໄດ້ຢ່າງແນ່ນອນ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກເລີ່ມຕັ້ງຄວາມພຽນບໍ່ທໍ້ຖອຍວ່າ ຈະເຫຼືອຢູ່ແຕ່ໜັງ ເອັນ ແລະກະດູກກໍຕາມ ຊີ້ນ ແລະເລືອດໃນກາຍຈົ່ງເຫືອດແຫ້ງໄປເຖີ້ນ ຖ້າຍັງບໍ່ບັນລຸຜົນທີ່ເພິ່ງບັນລຸດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນຂອງບຸຣຸດແລ້ວ ຈັກບໍ່ຢຸດຄວາມພຽນ"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ອຸປັນຍາຕະສູດ ທີ ໕ ຈົບ**

## ໖. ສັນໂຍຊະນະສູດ

## ວ່າດ້ວຍກິເລດທີ່ຜູກມັດໃຈສັດ

[໖] ພິກຂຸທັງຫຼາຍ ທຳ ໘ ປະການນີ້

ທຳ ໘ ປະການ ອັນໃດແດ່ ຄື

໑. ການເຫັນທຳທີ່ເປັນປັດໄຈແຫ່ງສັງໂຍດ ໂດຍຄວາມພໍໃຈ
໘. ການເຫັນທຳທີ່ເປັນປັດໄຈແຫ່ງສັງໂຍດ ໂດຍຄວາມເບື່ອໜ່າຍ

ບຸກຄົນຜູ້ເຫັນທຳທີ່ເປັນປັດໄຈແຫ່ງສັງໂຍດ ໂດຍຄວາມພໍໃຈຢູ່ ຍ່ອມລະຣາຄະ ໂທສະ ແລະໂມຫະບໍ່ໄດ້ ເຮົາກ່າວວ່າ "ບຸກຄົນຍັງລະຣາຄະ ໂທສະ ແລະໂມຫະບໍ່ໄດ້ ຍ່ອມບໍ່ພົ້ນຈາກ

ຊາດ(ຄວາມເກີດ) ຊະຣາ(ຄວາມແກ່) ມໍລະນະ(ຄວາມຕາຍ) ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮໍ່າໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ແລະຍ່ອມບໍ່ພົ້ນຈາກທຸກ"

ບຸກຄົນຜູ້ເຫັນທໍາທີ່ເປັນປັດໄຈແຫ່ງສັງໂຍດ ໂດຍຄວາມເບື່ອໜ່າຍຢູ່ ຍ່ອມລະຣາຄະໂທສະ ແລະໂມຫະ ໄດ້ ເຮົາກ່າວວ່າ "ບຸກຄົນລະຣາຄະ ໂທສະ ແລະໂມຫະໄດ້ແລ້ວ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ແລະ ຍ່ອມພົ້ນຈາກທຸກ"

ພິກຂຸທັງຫຼາຍ ທໍາ ໘ ປະການນີ້ແລ

**ສັນໂຍຊະນະສູດທີ ໖ ຈົບ**

# ໗. ກັນຫະສູດ

## ວ່າດ້ວຍທໍາຝ່າຍດໍາ

[໗] ພິກຂຸທັງຫຼາຍ ທໍາຝ່າຍດໍາ ໘ ປະການນີ້
ທໍາຝ່າຍດໍາ ໘ ປະການ ອັນໃດແດ່ ຄື

໑. ອະຫິຣິກະ (ຄວາມບໍ່ອາຍບາບ) ໘. ອະໂນດຕັບປະ (ຄວາມບໍ່ຢ້ານບາບ)

ພິກຂຸທັງຫຼາຍ ທໍາຝ່າຍດໍາ ໘ ປະການນີ້ແລ

**ກັນຫະສູດທີ ໗ ຈົບ**

# ໘. ສຸກກະສູດ

## ວ່າດ້ວຍທໍາຝ່າຍຂາວ

[໘] ພິກຂຸທັງຫຼາຍ ທໍາຝ່າຍຂາວ ໘ ປະການນີ້
ທໍາຝ່າຍຂາວ ໘ ປະການ ອັນໃດແດ່ ຄື

໑. ຫິຣິ (ຄວາມອາຍບາບ) ໘. ໂອດຕັບປະ (ຄວາມຢ້ານບາບ)

ພິກຂຸທັງຫຼາຍ ທໍາຝ່າຍຂາວ ໘ ປະການນີ້ແລ

**ສຸກກະສູດທີ ໘ ຈົບ**

## ໙. ຈະຣິຍະສູດ

### ວ່າດ້ວຍຈະຣິຍະທຳຄຸ້ມຄອງໂລກ

[໙] ພິກຂຸທັງຫຼາຍ ທຳຝ່າຍຂາວ ໒ ປະການຍ່ອມຄຸ້ມຄອງໂລກ

ທຳຝ່າຍຂາວ ໒ ປະການ ອັນໃດແດ່ ຄື

໑. ຫິຣິ ໒. ໂອດຕັບປະ

ທຳຝ່າຍຂາວ ໒ ປະການນີ້ແລ ຫາກບໍ່ຄຸ້ມຄອງໂລກ ຊາວໂລກບໍ່ເພິ່ງບັນຍັດວ່າ "ມານດາ ນ້າ ປ້າ ພັນລະຍາຂອງອາຈານ ຫຼື ພັນລະຍາຂອງຄູ" ໂລກຈັກເຖິງຄວາມສົມສູ່ກັນຄືພວກແບ້ ແກະ ໄກ່ ໝູ ໝາບ້ານ ແລະ ໝາຈອກສັນນັ້ນ

ພິກຂຸທັງຫຼາຍ ແຕ່ຍ້ອນເຫດທີ່ທຳຝ່າຍຂາວ ໒ ປະການນີ້ຄຸ້ມຄອງໂລກ ສະນັ້ນ ຊາວໂລກຈຶ່ງບັນຍັດຄຳວ່າ "ມານດາ ນ້າ ປ້າ ພັນລະຍາຂອງອາຈານ ຫຼື ພັນລະຍາຂອງຄູ"

**ຈະຣິຍະສູດທີ ໙ ຈົບ**

## ໑໐. ວັດສູປະນາຍິກະສູດ

### ວ່າດ້ວຍການເຂົ້າພັນສາ

[໑໐] ພິກຂຸທັງຫຼາຍ ການເຂົ້າພັນສາ ໒ ຢ່າງນີ້

ການເຂົ້າພັນສາ ໒ ຢ່າງ ອັນໃດແດ່ ຄື

໑. ການເຂົ້າພັນສາຕົ້ນ ໒. ການເຂົ້າພັນສາຫຼັງ

ພິກຂຸທັງຫຼາຍ ການເຂົ້າພັນສາ ໒ ຢ່າງນີ້ແລ

**ວັດສູປະນາຍິກະສູດທີ ໑໐ ຈົບ**

**ກຳມະກະຣະນະວັກທີ ໑ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ຄື

| | |
|---|---|
| ໑. ວັດຊະສູດ | ໒. ປະທານະສູດ |
| ໓. ຕະປະນີຍະສູດ | ໔. ອະຕະປະນີຍະສູດ |
| ໕. ອຸປັນຍາຕະສູດ | ໖. ສັນໂຍຊະນະສູດ |
| ໗. ກັນທະສູດ | ໘. ສຸກກະສູດ |
| ໙. ຈະຣິຍະສູດ | ໑໐. ວັດສູປະນາຍິກະສູດ |

# ໒. ອະທິກະຣະນະວັກ

## ໝວດວ່າດ້ວຍອະທິກອນ

[໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພະລະ ໒ ປະການນີ້

ພະລະ ໒ ປະການ ອັນໃດແດ່ ຄື

໑. ປະຕິສັງຂານະພະລະ (ກຳລັງຄືການພິຈາລະນາ)
໒. ພາວານາພະລະ (ກຳລັງຄືການຈະເລີນ)

ປະຕິສັງຂານະພະລະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຫັນປະຈັກດັ່ງນີ້ວ່າ "ຜົນຂອງກາຍທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ແລະພົບໜ້າ ຜົນຂອງວະຈີທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ ແລະພົບໜ້າ ຜົນຂອງມະໂນທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ແລະພົບໜ້າ" ບຸກຄົນນັ້ນເມື່ອເຫັນປະຈັກດັ່ງນີ້ແລ້ວຍ່ອມລະກາຍທຸດຈະຣິດ ພ່ຳເພັງກາຍສຸດຈະຣິດ ລະວະຈີທຸດຈະຣິດ ພ່ຳເພັງວະຈີສຸດຈະຣິດ ລະມະໂນທຸດຈະຣິດ ພ່ຳເພັງມະໂນສຸດຈະຣິດ ບໍລິຫານຕົນໃຫ້ບໍລິສຸດ ນີ້ຮຽກວ່າ ປະຕິສັງຂານະພະລະ

ພາວະນາພະລະ ເປັນແນວໃດ?

ຄື ໃນພະລະ ໒ ປະການນັ້ນ ພາວານາພະລະເປັນຂອງພຣະເສຂະ ບຸກຄົນນັ້ນອາໄສພະລະຂອງພຣະເສຂະຍ່ອມລະຣາຄະ ໂທສະ ແລະໂມຫະໄດ້ ເມື່ອລະຣາຄະ ໂທສະ ແລະໂມຫະໄດ້ແລ້ວ ເຂົາຍ່ອມບໍ່ເຮັດກຳທີ່ເປັນອະກຸສົນ ບໍ່ປະພຶດຕິກຳທີ່ເປັນບາບ ນີ້ຮຽກວ່າ ພາວະນາພະລະ

ພິກຂຸທັງຫຼາຍ ພະລະ ໒ ປະການນີ້ແລ (໑)

[໑໒] ພະລະ ໒ ປະການນີ້

ພະລະ ໒ ປະການ ອັນໃດແດ່ ຄື

໑. ປະຕິສັງຂານະພະລະ ໒. ພາວະນາພະລະ

ປະຕິສັງຂານະພະລະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຫັນປະຈັກດັ່ງນີ້ວ່າ "ຜົນຂອງກາຍທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ແລະພົບໜ້າ ຜົນຂອງວະຈີທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ແລະພົບໜ້າ ຜົນຂອງມະໂນທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ແລະພົບໜ້າ" ບຸກຄົນນັ້ນເມື່ອເຫັນປະຈັກດັ່ງນີ້ແລ້ວ ຍ່ອມລະກາຍທຸດຈະຣິດ ພໍ່າເພັງກາຍສຸດຈະຣິດ ລະວະຈີທຸດຈະຣິດ ພໍ່າເພັງວະຈີສຸດຈະຣິດ ລະມະໂນທຸດຈະຣິດ ພໍ່າເພັງມະໂນສຸດຈະຣິດ ບໍລິຫານຕົນໃຫ້ບໍລິສຸດ ນີ້ຮຽກວ່າ ປະຕິສັງຂານະພະລະ

ພາວະນາພະລະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພໍ່າເພັງສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນການສະລະ ພໍ່າເພັງທຳມະວິຈະຍະສຳໂພດຊົງ ໆລໆ ພໍ່າເພັງວິຣິຍະສຳໂພດຊົງ ໆລໆ ພໍ່າເພັງ ປີຕິສຳໂພດຊົງ ໆລໆ ພໍ່າເພັງປັດສັດທິສຳໂພດຊົງ ໆລໆ ພໍ່າເພັງສະມາທິສຳໂພດຊົງ ໆລໆ ພໍ່າເພັງອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນ

ການສະລະ ນີ້ຮຽກວ່າ ພາວານາພະລະ

ພິກຂຸທັງຫຼາຍ ພະລະ ໒ ປະການນີ້ແລ (໒)

[໑໓] ພະລະ ໒ ປະການນີ້

ພະລະ ໒ ປະການ ອັນໃດແດ່ ຄື

໑. ປະຕິສັງຂານະພະລະ ໒. ພາວານາພະລະ

ປະຕິສັງຂານະພະລະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຫັນປະຈັກດັ່ງນີ້ວ່າ "ຜົນຂອງກາຍທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ແລະພົບໜ້າ ຜົນຂອງວະຈີທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ ແລະພົບໜ້າ ຜົນຂອງມະໂນທຸດຈະຣິດເປັນຜົນທີ່ຊົ່ວຊາມທັງໃນພົບນີ້ ແລະພົບໜ້າ" ບຸກຄົນນັ້ນ ເມື່ອເຫັນປະຈັກດັ່ງນີ້ແລ້ວ ຍ່ອມລະກາຍທຸດຈະຣິດ ພ່ຳເພັງກາຍສຸດຈະຣິດ ລະວະຈີທຸດຈະຣິດ ພ່ຳເພັງວະຈີສຸດຈະຣິດ ລະມະໂນທຸດຈະຣິດ ພ່ຳເພັງມະໂນສຸດຈະຣິດ ບໍລິຫານຕົນໃຫ້ບໍລິສຸດ ນີ້ຮຽກວ່າ ປະຕິສັງຂານະພະລະ

ພາວະນາພະລະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກມີວິຈານ ມີປີຕິ ແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປແລ້ວ ພິກຂຸບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່ ອັນໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ແລ້ວ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ພິກຂຸ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ພາວະນາພະລະ

ພິກຂຸທັງຫຼາຍ ພະລະ ໔ ປະການນີ້ແລ (໓)

## ພຣະທຳມະເທດສະໜາຂອງພຣະຕະຖາຄົດ ໔ ແບບ

[໑໔] ທຳມະເທດສະໜາຂອງຕະຖາຄົດ ໔ ແບບນີ້

ທຳມະເທດສະໜາຂອງຕະຖາຄົດ ໔ ແບບ ອັນໃດແດ່ ຄື

໑. ທຳມະເທດສະໜາແບບຫຍໍ້ ... ໔. ທຳມະເທດສະໜາແບບພິດສະດານ

ພິກຂຸທັງຫຼາຍ ທຳມະເທດສະໜາຂອງຕະຖາຄົດ ໔ ແບບນີ້ແລ (໔)

## ເຫດໃຫ້ອະທິກອນຍືດເຍື້ອ ແລະບໍ່ຍືດເຍື້ອ

[໑໕] ໃນອະທິກອນໃດ[໑] ພິກຂຸຜູ້ຕ້ອງອາບັດແລະພິກຂຸຜູ້ເປັນໂຈດຍັງບໍ່ໄດ້ພິຈາລະນາຕົນເອງໃຫ້ດີ ໃນອະທິກອນນັ້ນເພິ່ງຫວັງໄດ້ດັ່ງນີ້ວ່າ "ຈັກເປັນໄປເພື່ອຄວາມຍືດເຍື້ອ ເພື່ອຄວາມຮຸນແຮງ[໒] ເພື່ອຄວາມຮ້າຍແຮງ[໓] ແລະພິກຂຸທັງຫຼາຍຈັກຢູ່ບໍ່ຜາສຸກ" ສ່ວນໃນອະທິກອນໃດ ພິກຂຸຜູ້

ຕ້ອງອາບັດແລະພິກຂຸຜູ້ເປັນໂຈດພິຈາລະນາຕົນເອງໃຫ້ດີ ໃນອະທິກອນນັ້ນເພິ່ງຫວັງໄດ້ດັ່ງນີ້ວ່າ "ຈັກບໍ່ເປັນໄປເພື່ອຄວາມຍືດເຍື້ອ ເພື່ອຄວາມຮຸນແຮງ ເພື່ອຄວາມຮ້າຍແຮງ ແລະພິກຂຸທັງຫຼາຍຈັກຢູ່ຜາສຸກ"

ພິກຂຸຜູ້ຕ້ອງອາບັດພິຈາລະນາຕົນເອງໃຫ້ດີ ເປັນແນວໃດ?

ຄື ພິກຂຸຜູ້ຕ້ອງອາບັດໃນທຳວິໄນນີ້ເຫັນປະຈັກດັ່ງນີ້ວ່າ "ເຮົາແລ ຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ຍ້ອນເຫດນັ້ນ ພິກຂຸນັ້ນ ຈຶ່ງໄດ້ເຫັນວ່າເຮົາຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ຖ້າເຮົາບໍ່ເພິ່ງຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ພິກຂຸນັ້ນກໍບໍ່ເພິ່ງເຫັນວ່າເຮົາຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ກໍຍ້ອນເຮົາຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ສະນັ້ນ ພິກຂຸນັ້ນ ຈຶ່ງໄດ້ເຫັນວ່າເຮົາຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ເມື່ອເຫັນແລ້ວຈຶ່ງບໍ່ພໍໃຈ ພິກຂຸນັ້ນເມື່ອບໍ່ພໍໃຈ ຈຶ່ງວ່າກ່າວເຮົາຜູ້ມີວາຈາບໍ່ໜ້າພໍໃຈ ເຮົາຜູ້ມີວາຈາບໍ່ໜ້າພໍໃຈຖືກພິກຂຸນັ້ນວ່າກ່າວ ຈຶ່ງບໍ່ພໍໃຈ ເມື່ອບໍ່ພໍໃຈ ຈຶ່ງບອກແກ່ຜູ້ອື່ນວ່າ "ດ້ວຍເຫດນີ້ໂທດໃນອະທິກອນນັ້ນ ຈຶ່ງຄອບງຳ ແຕ່ສະເພາະເຮົາທີ່ນັ້ນ ຄື ໃນເລື້ອງສິນຄ້າ ໂທດຍ່ອມຄອບງຳສະເພາະບຸກຄົນຜູ້ທີ່ຕ້ອງເສຍພາສີ"

ພິກຂຸທັງຫຼາຍ ພິກຂຸຜູ້ຕ້ອງອາບັດພິຈາລະນາຕົນເອງໃຫ້ດີເປັນແນວນີ້ແລ

ພິກຂຸຜູ້ເປັນໂຈດ ພິຈາລະນາຕົນເອງໃຫ້ດີ ເປັນແນວໃດ?

ຄື ພິກຂຸຜູ້ເປັນໂຈດໃນທຳວິໄນນີ້ເຫັນປະຈັກດັ່ງນີ້ວ່າ "ພິກຂຸນີ້ແລ ຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ຍ້ອນເຫດນັ້ນ ເຮົາຈຶ່ງໄດ້ເຫັນວ່າພິກຂຸນີ້ຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ຖ້າພິກຂຸນີ້ບໍ່ເພິ່ງຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ເຮົາກໍບໍ່ເພິ່ງເຫັນວ່າພິກຂຸນີ້ຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ກໍຍ້ອນພິກຂຸນີ້ ຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ສະນັ້ນ ເຮົາຈຶ່ງໄດ້ເຫັນວ່າພິກຂຸນີ້ຕ້ອງອາບັດທີ່ເປັນອະກຸສົນທາງກາຍບາງຢ່າງ ເມື່ອເຫັນແລ້ວຈຶ່ງບໍ່ພໍໃຈ ເຮົາເມື່ອບໍ່ພໍໃຈ ໄດ້ວ່າກ່າວພິກຂຸນີ້ຜູ້ມີວາຈາບໍ່ໜ້າພໍໃຈ ພິກຂຸນີ້ ຜູ້ມີວາຈາບໍ່ໜ້າພໍໃຈນີ້ຖືກເຮົາວ່າກ່າວ ຈຶ່ງບໍ່ພໍໃຈ ເມື່ອບໍ່ພໍໃຈຈຶ່ງບອກແກ່ຜູ້ອື່ນວ່າ "ດ້ວຍເຫດນີ້ໂທດໃນອະທິກອນນັ້ນຈຶ່ງຄອບງຳ ແຕ່ສະເພາະເຮົາທີ່ນັ້ນຄືໃນເລື້ອງສິນຄ້າ ໂທດຍ່ອມຄອບງຳສະເພາະບຸກຄົນຜູ້ທີ່ຕ້ອງເສຍພາສີ"

ພິກຂຸທັງຫຼາຍ ພິກຂຸຜູ້ເປັນໂຈດພິຈາລະນາຕົນເອງໃຫ້ດີເປັນແນວນີ້ແລ

ໃນອະທິກອນໃດ ພິກຂຸຜູ້ຕ້ອງອາບັດ ແລະພິກຂຸຜູ້ເປັນໂຈດ ຍັງບໍ່ພິຈາລະນາຕົນເອງໃຫ້ດີໃນອະທິກອນນັ້ນ ເພິ່ງຫວັງໄດ້ດັ່ງນີ້ວ່າ "ຈັກເປັນໄປເພື່ອຄວາມຍືດເຍື້ອ ເພື່ອຄວາມຮຸນແຮງ ເພື່ອຄວາມຮ້າຍແຮງ ແລະພິກຂຸທັງຫຼາຍຈັກຢູ່ບໍ່ຜາສຸກ"

ສ່ວນໃນອະທິກອນໃດ ພິກຂຸຜູ້ຕ້ອງອາບັດ ແລະພິກຂຸຜູ້ເປັນໂຈດພິຈາລະນາຕົນເອງໃຫ້ດີໃນອະທິກອນນັ້ນ ເພິ່ງຫວັງໄດ້ດັ່ງນີ້ວ່າ "ຈັກບໍ່ເປັນໄປເພື່ອຄວາມຍືດເຍື້ອ ເພື່ອຄວາມຮຸນແຮງ ເພື່ອຄວາມຮ້າຍແຮງ ແລະພິກຂຸທັງຫຼາຍຈັກຢູ່ຜາສຸກ" (໕)

## ເຫດໃຫ້ເກີດໃນທຸກຄະຕິແລະສຸກຄະຕິ

[໑໖] ຄັ້ງນັ້ນ ພາມຄົນໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ທ່ານພຣະໂຄດົມ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຍ້ອນເຫດແຫ່ງການປະພຶດບໍ່ສະໝ່ຳ ສະເໝີ ຄືປະພຶດບໍ່ຖືກຕ້ອງຕາມທຳ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍທຸກຄະຕິ ວິນິບາດ ນະຮົກ"

ພາມທູນຖາມວ່າ "ຂ້າແດ່ ທ່ານພຣະໂຄດົມ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິໂລກສະຫວັນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຍ້ອນເຫດແຫ່ງການປະພຶດສະໝ່ຳສະເໝີ ຄືປະພຶດຖືກຕ້ອງຕາມທຳ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ"

ພາມນັ້ນ ຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຢ່າງຍິ່ງ ທ່ານພຣະໂຄດົມປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດ໌ໂດຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມ ຈົ່ງຊົງຈືຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" (໖)

[໑໗] ຄັ້ງນັ້ນ ພາມຊານຸດໂສນີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ທ່ານພຣະໂຄດົມ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ຍ້ອນເຮັດແລະຍ້ອນບໍ່ເຮັດ"

ພາມຊານຸດໂສນິທູລຖາມວ່າ "ຂ້າແດ່ ທ່ານພຣະໂຄດົມ ອັນໃດ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິໂລກສະຫວັນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນເຮັດແລະບໍ່ເຮັດແນວນີ້"

ພາມນັ້ນຂາບທູນວ່າ "ຂ້າພຣະອົງ ຍ່ອມບໍ່ຮູ້ທົ່ວເຖິງເນື້ອຄວາມແຫ່ງພາສິດທີ່ທ່ານພຣະໂຄດົມ ຕັດໄວ້ໂດຍຫຍໍ້ໂດຍພິດສະດານໄດ້ ຂໍປະທານອະໄຣກາດ ຂໍທ່ານພຣະໂຄດົມໂຜດສະແດງທຳໂດຍວິທີທີ່ຂ້າພຣະອົງ ຈະເພິ່ງຮູ້ທົ່ວເຖິງເນື້ອຄວາມແຫ່ງພາສິດທີ່ທ່ານພຣະໂຄດົມ ຕັດໄວ້ໂດຍຫຍໍ້ ໄດ້ໂດຍພິດສະດານດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພາມຊານຸດໂສນິທູລຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພາມ ບຸກຄົນລາງຄົນໃນໂລກນີ້ເຮັດແຕ່ກາຍທຸດຈະຣິດ ບໍ່ທຳກາຍສຸດຈະຣິດ ເຮັດແຕ່ວະຈີທຸດຈະຣິດ ບໍ່ເຮັດວະຈີສຸດຈະຣິດ ເຮັດແຕ່ມະໂນທຸດຈະຣິດ ບໍ່ເຮັດມະໂນສຸດຈະຣິດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ຍ້ອນເຮັດແລະຍ້ອນບໍ່ເຮັດ ແນວນີ້ແລ ສ່ວນບຸກຄົນລາງຄົນໃນໂລກນີ້ ເຮັດແຕ່ກາຍສຸດຈະຣິດ ບໍ່ທຳກາຍທຸດຈະຣິດ ເຮັດແຕ່ວະຈີສຸດຈະຣິດ ບໍ່ເຮັດວະຈີທຸດຈະຣິດ ເຮັດແຕ່ມະໂນສຸດຈະຣິດ ບໍ່ເຮັດມະໂນທຸດຈະຣິດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນຍ້ອນເຮັດ ແລະຍ້ອນບໍ່ເຮັດແນວນີ້ແລ"

ພາມຊານຸດໂສນິຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະ ໂຄດົມຊັດເຈນມ່ວນຫຼາຍ ໆລໆ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງວ່າເປັນ ອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" (໗)

## ໂທດແຫ່ງທຸດຈະຣິດ ໕ ຢ່າງ

[໑໗] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນ ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ "ອານົນ ກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ເຮົາກ່າວວ່າເປັນສິ່ງທີ່ບໍ່ຄວນເຮັດໂດຍສ່ວນດຽວ"

ທ່ານພຣະອານົນທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນເຮັດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນສິ່ງທີ່ບໍ່ຄວນເຮັດໂດຍສ່ວນດຽວ ບຸກຄົນນັ້ນຈະໄດ້ຮັບໂທດອັນໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເມື່ອບຸກຄົນເຮັດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດທີ່ເຮົາກ່າວວ່າ ເປັນສິ່ງທີ່ບໍ່ຄວນເຮັດໂດຍສ່ວນດຽວ ບຸກຄົນນັ້ນ ຈະໄດ້ຮັບໂທດດັ່ງຕໍ່ໄປນີ້ຄື (໑) ແມ່ນຕົນກໍຕິຕຽນຕົນເອງໄດ້ (໒) ຜູ້ຮູ້ພິຈາຣະນາແລ້ວຍ່ອມຕິຕຽນໄດ້ (໓) ກິດຕິສັບອັນຊົ່ວຍ່ອມກະຈາຍໄປ (໔) ຫຼົງລືມສະຕິຕາຍ (໕) ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍທຸກຄະຕິ ວິນິບາດ ນະຮົກ ເມື່ອບຸກຄົນທຳກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດທີ່ເຮົາກ່າວວ່າ ບໍ່ຄວນເຮັດໂດຍສ່ວນດຽວ ບຸກຄົນນັ້ນຈະໄດ້ຮັບໂທດແນວນັ້ນ"

## ອານິສົງແຫ່ງສຸດຈະຣິດ ໕ ຢ່າງ

ອານົນ ກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ເຮົາກ່າວວ່າເປັນສິ່ງທີ່ຄວນເຮັດໂດຍສ່ວນດຽວ

ທ່ານພຣະອານົນທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນທຳກາຍສຸດຈະຣິດ ວະຈີ-ສຸດຈະຣິດ ແລະມະໂນສຸດຈະຣິດທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ຄວນເຮັດໂດຍສ່ວນດຽວ ບຸກຄົນນັ້ນຈະໄດ້ຮັບອານິສົງອັນໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເມື່ອບຸກຄົນທຳກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດທີ່ເຮົາກ່າວວ່າ ຄວນເຮັດໂດຍສ່ວນດຽວ ບຸກຄົນນັ້ນຈະໄດ້ຮັບອານິສົງດັ່ງຕໍ່ໄປນີ້ຄື (໑) ແມ່ນຕົນກໍຕິຕຽນຕົນເອງບໍ່ໄດ້ (໒) ຜູ້ຮູ້ພິຈາຣະນາແລ້ວຍ່ອມສັນເສີນ (໓) ກິດຕິສັບອັນງາມຍ່ອມຂ່າລືໄປ (໔) ບໍ່ຫຼົງລືມສະຕິຕາຍ (໕) ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ເມື່ອບຸກຄົນທຳກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດທີ່ເຮົາກ່າວວ່າຄວນເຮັດໂດຍສ່ວນດຽວ ບຸກຄົນນັ້ນຈະໄດ້ຮັບອານິສົງນີ້" (໗)

## ການລະອະກຸສົນແລະການພ່ຳເພັງກຸສົນ

[໑໙] ພິກຂຸທັງຫຼາຍ ທ່ານທັງຫຼາຍຈງລະອະກຸສົນ ບຸກຄົນສາມາດລະອະກຸສົນໄດ້ ຖ້າບຸກຄົນບໍ່ສາມາດລະອະກຸສົນນີ້ໄດ້ ເຮົາບໍ່ເພິ່ງກ່າວແນວນີ້ວ່າ "ທ່ານທັງຫຼາຍຈົ່ງລະອະກຸສົນ" ກໍຍ້ອນບຸກຄົນສາມາດລະອະກຸສົນໄດ້ ສະນັ້ນ ເຮົາຈຶ່ງກ່າວແນວນີ້ວ່າ "ທ່ານທັງຫຼາຍຈົ່ງລະອະກຸສົນ" ຖ້າອະກຸສົນນີ້ ທີ່ບຸກຄົນລະໄດ້ແລ້ວເພິ່ງເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ ເຮົາບໍ່ເພິ່ງກ່າວ

ແບບນີ້ວ່າ "ທ່ານທັງຫຼາຍຈົ່ງລະອະກຸສົນ" ກໍຍ້ອນອະກຸສົນທີ່ບຸກຄົນລະໄດ້ແລ້ວ ຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ ສະນັ້ນເຮົາຈຶ່ງກ່າວແບບນີ້ວ່າ "ທ່ານທັງຫຼາຍຈົ່ງລະອະກຸສົນ"

ທ່ານທັງຫຼາຍຈົ່ງພ່ຳເພັງກຸສົນ ບຸກຄົນສາມາດພ່ຳເພັງກຸສົນໄດ້ ຖ້າບຸກຄົນບໍ່ສາມາດ ພ່ຳເພັງກຸສົນນີ້ໄດ້ ເຮົາບໍ່ເພິ່ງກ່າວແບບນີ້ວ່າ "ທ່ານທັງຫຼາຍຈົ່ງພ່ຳເພັງກຸສົນ" ກໍຍ້ອນບຸກຄົນສາມາດພ່ຳເພັງ ກຸສົນໄດ້ ສະນັ້ນ ເຮົາຈຶ່ງກ່າວແບບນີ້ວ່າ "ທ່ານທັງຫຼາຍຈົ່ງພ່ຳເພັງກຸສົນ" ຖ້າກຸສົນນີ້ທີ່ບຸກຄົນພ່ຳເພັງແລ້ວເພິ່ງເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ ເຮົາບໍ່ເພິ່ງກ່າວແບບນີ້ວ່າ "ທ່ານທັງຫຼາຍຈົ່ງພ່ຳເພັງກຸສົນ" ກໍຍ້ອນກຸສົນທີ່ບຸກຄົນພ່ຳເພັງແລ້ວຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ ດັ່ງນັ້ນເຮົາຈຶ່ງກ່າວແບບນີ້ວ່າ "ທ່ານທັງຫຼາຍຈົ່ງພ່ຳເພັງກຸສົນ" (໙)

## ທຳທີ່ເຮັດໃຫ້ສາດສະໜາເສື່ອມແລະຈະເລີນ

[໔໐] ທຳ ໒ ປະການນີ້ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ ທຳ ໒ ປະການ ອັນໃດແດ່ ຄື

໑. ບົດພະຍັນຊະນະທີ່ສືບທອດກັນມາບໍ່ດີ
໒. ອັດຖະທີ່ສືບທອດຂະຫຍາຍຄວາມບໍ່ດີ

ແມ່ນອັດຖະ ແຫ່ງບົດພະຍັນຊະນະທີ່ຕັ້ງໄວ້ບໍ່ດີ ກໍຊື່ວ່າ ເປັນການສືບທອດຂະຫຍາຍຄວາມບໍ່ດີ ພິກຂຸທັງຫຼາຍ ທຳ ໒ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມສູນຫາຍໄປແຫ່ງສັດທຳ (໑໐)

[໔໑] ທຳ ໒ ປະການນີ້ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍໄປແຫ່ງສັດທຳ ທຳ ໒ ປະການ ອັນໃດແດ່ ຄື

໑. ບົດພະຍັນຊະນະທີ່ສືບທອດກັນມາດີ
໒. ອັດຖະທີ່ສືບທອດຂະຫຍາຍຄວາມດີ

ແມ່ນອັດຖະ ແຫ່ງບົດພະຍັນຊະນະທີ່ຕັ້ງໄວ້ດີ ກໍຊື່ວ່າ ເປັນການສືບທອດຂະຫຍາຍຄວາມດີ ພິກຂຸທັງຫຼາຍ ທຳ ໒ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມດຳລົງໝັ້ນ ບໍ່ເສື່ອມສູນ ບໍ່ຫາຍ ໄປແຫ່ງສັດທຳ (໑໑)

**ອະທິກະຣະນະວັກທີ ໒ ຈົບ**

# ໓. ພາລະວັກ

## ໝວດວ່າດ້ວຍຄົນພານ

[໔໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄົນພານ ໔ ຈຳພວກນີ້

ຄົນພານ ໔ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ບໍ່ເຫັນໂທດໂດຍຄວາມເປັນໂທດ
໔. ຄົນທີ່ບໍ່ຍອມຮັບຕາມຄວາມເປັນຈິງເມື່ອບຸກຄົນອື່ນສະແດງໂທດ

ຄົນພານ ໔ ຈຳພວກນີ້ແລ

ບັນດິດ ໔ ຈຳພວກນີ້
ບັນດິດ ໔ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຫັນໂທດໂດຍຄວາມເປັນໂທດ
໔. ຄົນທີ່ຍອມຮັບຕາມຄວາມເປັນຈິງເມື່ອບຸກຄົນອື່ນສະແດງໂທດ

ບັນດິດ ໔ ຈຳພວກນີ້ແລ (໑)

[໔໓] ຄົນ ໔ ຈຳພວກນີ້ຍ່ອມກ່າວຕູ່ຕະຖາຄົດ
ຄົນ ໔ ຈຳພວກໃດແດ່ ຄື

໑. ຄົນເຈົ້າໂທສະທີ່ມີຄວາມໂທດຮ້າຍຢູ່ພາຍໃນ
໔. ຄົນທີ່ເຊື່ອໂດຍຍຶດຖືຜິດ

ຄົນ ໔ ຈຳພວກນີ້ແລ ຍ່ອມກ່າວຕູ່ຕະຖາຄົດ (໔)

[໔໔] ຄົນ ໔ ຈຳພວກນີ້ຍ່ອມກ່າວຕູ່ຕະຖາຄົດ

ຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້"

໒. ຄົນທີ່ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດ ບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້"

ຄົນ ໒ ຈຳພວກນີ້ແລ ຍ່ອມກ່າວຕູ່ຕະຖາຄົດ

ຄົນ ໒ ຈຳພວກນີ້ ຍ່ອມບໍ່ກ່າວຕູ່ຕະຖາຄົດ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດ ບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້"

໒. ຄົນທີ່ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້"

ຄົນ ໒ ຈຳພວກນີ້ແລຍ່ອມບໍ່ກ່າວຕູ່ຕະຖາຄົດ (໓)

[໒໕] ຄົນ ໒ ຈຳພວກນີ້ຍ່ອມກ່າວຕູ່ຕະຖາຄົດ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ສະແດງສຸດຕັນຕະທີ່ຄວນຂະຫຍາຍຄວາມວ່າ "ສຸດຕັນຕະມີການຂະຫຍາຍ ຄວາມແລ້ວ"

໒. ຄົນທີ່ສະແດງສຸດຕັນຕະທີ່ມີການຂະຫຍາຍຄວາມແລ້ວວ່າ "ສຸດຕັນຕະທີ່ຄວນ ຂະຫຍາຍຄວາມ"

ຄົນ ໒ ຈຳພວກນີ້ແລຍ່ອມກ່າວຕູ່ຕະຖາຄົດ (໔)

[໒໖] ຄົນ ໒ ຈຳພວກນີ້ຍ່ອມບໍ່ກ່າວຕູ່ຕະຖາຄົດ

ຄົນ ໒ ຈຳພວກໃດແດ່ ຄື

໑. ຄົນທີ່ສະແດງສຸດຕັນຕະທີ່ຄວນຂະຫຍາຍຄວາມວ່າ "ສຸດຕັນຕະຄວນຂະຫຍາຍຄວາມ"

໒. ຄົນທີ່ສະແດງສຸດຕັນຕະທີ່ມີການຂະຫຍາຍຄວາມແລ້ວວ່າ "ສຸດຕັນຕະທີ່ມີການຂະຫຍາຍຄວາມແລ້ວ"

ຄົນ ໒ ຈຳພວກນີ້ແລຍ່ອມບໍ່ກ່າວຕູ່ຕະຖາຄົດ (໕)

ຄະຕິແລະຖານະ ໔ ຢ່າງເປັນຕົ້ນ

[໔໗] ຜູ້ມີການງານປົກປິດໄວ້ ເພິ່ງຫວັງໄດ້ຄະຕິຢ່າງ ໑ ໃນ ໒ ຢ່າງ ຄື ນະຮົກຫຼືກຳເນີດສັດເດຍຣັດສານ ຜູ້ມີການງານບໍ່ປົກປິດໄວ້ເພິ່ງຫວັງໄດ້ຄະຕິຢ່າງ ໑ ໃນ ໒ ຢ່າງ ຄື ເທວະດາຫຼືມະນຸດ (໖)

[໔໘] ຜູ້ເປັນມິດສາທິດຖິເພິ່ງຫວັງໄດ້ຄະຕິຢ່າງ ໑ ໃນ ໒ ຢ່າງ ຄື ນະຮົກຫຼືກຳເນີດສັດເດຍຣັດສານ (໗)

[໔໙] ຜູ້ເປັນສຳມາທິດຖິເພິ່ງຫວັງໄດ້ຄະຕິຢ່າງ ໑ ໃນ ໒ ຢ່າງ ຄື ເທວະດາຫຼືມະນຸດ (໘)

[໕໐] ສະຖານທີ່ຮອງຮັບຄົນທຸສິນ ໒ ແຫ່ງ ຄື ນະຮົກຫຼືກຳເນີດສັດເດຍຣັດສານ ສະຖານທີ່ຮອງຮັບຄົນມີສິນ ໒ ແຫ່ງ ຄື ເທວະດາຫຼືມະນຸດ (໙)

[໕໑] ເຮົາພິຈາລະນາເຫັນອຳນາດປະໂຫຍດ໌ ໒ ປະການຈຶ່ງອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າທຶບ

ອຳນາດປະໂຫຍດ ໒ ປະການ ອັນໃດແດ່ ຄື

໑. ເຫັນການຢູ່ເປັນສຸກໃນປັດຈຸບັນຂອງຕົນ
໒. ອະນຸເຄາະຄົນລຸ້ນຫຼັງ

ເຮົາພິຈາລະນາເຫັນອຳນາດປະໂຫຍດ ໒ ປະການນີ້ແລ ຈຶ່ງອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າທຶບ (໑໐)

[໕໒] ທຳ ໒ ປະການນີ້ເປັນຝ່າຍວິດຊາ

ທຳ ໒ ປະການ ອັນໃດແດ່ ຄື

໑. ສະມະຖະ (ການເຝິກຈິດໃຫ້ສະງົບເປັນສະມາທິ)
໒. ວິປັດສະນາ (ຄວາມເຫັນແຈ້ງ)

ສະມະຖະທີ່ພິກຂຸຈະເລີນແລ້ວ ຍ່ອມໃຫ້ສຳເລັດປະໂຫຍດອັນໃດ?
ຄື ຍ່ອມໃຫ້ຈິດຈະເລີນ
ຈິດທີ່ຈະເລີນແລ້ວຍ່ອມໃຫ້ສຳເລັດປະໂຫຍດອັນໃດ?
ຄື ຍ່ອມລະຣາຄະໄດ້
ວິປັດສະນາທີ່ພິກຂຸຈະເລີນແລ້ວ ຍ່ອມໃຫ້ສຳເລັດປະໂຫຍດອັນໃດ

ຄື ຍ່ອມໃຫ້ປັນຍາຈະເລີນ

ປັນຍາທີ່ຈະເລີນແລ້ວ ຍ່ອມໃຫ້ສຳເລັດປະໂຫຍດອັນໃດ

ຄື ຍ່ອມລະອະວິດຊາໄດ້

ຈິດທີ່ເສົ້າໝອງຍ້ອນຣາຄະ ຍ່ອມບໍ່ລຸດພົ້ນ ປັນຍາທີ່ເສົ້າໝອງຍ້ອນອະວິດຊາ ຍ່ອມບໍ່ຈະເລີນ ຍ້ອນຄາຍຣາຄະ ຈຶ່ງມີເຈໂຕວິມຸດຕິ ຍ້ອນຄາຍອະວິດຊາ ຈຶ່ງມີປັນຍາວິມຸດຕິ (໑໑)

**ພາລະວັກທີ ໓ ຈົບ**

# ໔. ສະມະຈິດຕະວັກ

## ໝວດວ່າດ້ວຍເທວະດາພ້ອມໃຈກັນ

[໓໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງພູມອະສັດຕະບຸຣຸດ ແລະພູມສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພູມອະສັດຕະບຸຣຸດ ເປັນແນວໃດ?

ຄື ອະສັດຕະບຸຣຸດເປັນຄົນບໍ່ຮູ້ບຸນຄຸນ ເປັນຄົນອະກະຕະເວທີ ຄວາມເປັນຄົນບໍ່ຮູ້ບຸນຄຸນ ຄວາມເປັນຄົນອະກະຕະເວທີ ອະສັດຕະບຸຣຸດທັງຫຼາຍສັນເສີນ ຄວາມເປັນຄົນບໍ່ຮູ້ບຸນຄຸນ ແລະຄວາມເປັນຄົນອະກະຕະເວທີ ທັງໝົດນີ້ເປັນພູມອະສັດຕະບຸຣຸດ

ພູມສັດຕະບຸຣຸດ ເປັນແນວໃດ?

ຄື ສັດຕະບຸຣຸດເປັນຄົນກະຕັນຍູ ເປັນຄົນກະຕະເວທີ ຄວາມເປັນຄົນກະຕັນຍູ ຄວາມເປັນຄົນກະຕະເວທີ ສັດຕະບຸຣຸດທັງຫຼາຍສັນເສີນ ຄວາມເປັນຄົນກະຕັນຍູ ແລະຄວາມເປັນຄົນກະຕະເວທີ ທັງໝົດນີ້ເປັນພູມສັດຕະບຸຣຸດ (໑)

## ການຕອບແທນທີ່ເຮັດໄດ້ຍາກ

[໓໔] ການເຮັດຕອບແທນແກ່ທ່ານທັງສອງ ເຮົາບໍ່ກ່າວວ່າເປັນການເຮັດໄດ້ໂດຍງ່າຍ ທ່ານທັງສອງຄືໃຜ ຄື ມານດາແລະບິດາ ເຖິງບຸດຈະມີອາຍຸ ໑໐໐ ປີ ມີຊີວິດຢູ່ ໑໐໐ ປີປະຄັບປະຄອງມານດາດ້ວຍບ່າຂ້າງໜຶ່ງ ປະຄັບປະຄອງບິດາດ້ວຍບ່າຂ້າງໜຶ່ງ ປະຕິບັດທ່ານທັງສອງນັ້ນດ້ວຍການອົບກິ່ນ ການນວດ ການໃຫ້ອາບນ້ຳ ແລະການບີບນວດ ແລະແມ່ນທ່ານທັງສອງ

ນັ້ນຈະຖ່າຍອຸດຈາຣະ ແລະປັດສາວະລົງເທິງບ່າທັງສອງຂອງເຂົານັ້ນ ການກະທຳແນວນັ້ນຍັງບໍ່ຊື່ວ່າ ອັນບຸດໄດ້ເຮັດ ຫຼື ເຮັດຕອບແທນແກ່ມານດາແລະບິດາເລີຍ ເຖິງບຸດຈະສະຖາປະນາມານດາແລະບິດາໄວ້ໃນຣາດຊະສົມບັດ ເຊິ່ງເປັນເຈົ້າເໜືອຫົວແຫ່ງແຜ່ນດິນໃຫຍ່ທີ່ມີ ຣັດຕະນະ ກໍປະການຫຼວງຫຼາຍນີ້ ການກະທຳແນວນັ້ນ ຍັງບໍ່ຊື່ວ່າອັນບຸດໄດ້ເຮັດ ຫຼື ເຮັດຕອບແທນແກ່ມານດາແລະບິດາເລີຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນມານດາແລະບິດາມີອຸປະກາຣະຫຼາຍ ບຳລຸງລ້ຽງສະແດງໂລກນີ້ແກ່ບຸດທັງຫຼາຍ

ສ່ວນບຸດຄົນໃດເຮັດໃຫ້ມານດາ ແລະບິດາຜູ້ບໍ່ມີສັດທາ ສະມາທານ ຕັ້ງໝັ້ນ ດຳລົງຢູ່ໃນສັດທາສຳປະທາ (ຄວາມເຖິງພ້ອມດ້ວຍສັດທາ) ໃຫ້ມານດາແລະບິດາຜູ້ທຸສີນ ສະມາທານ ຕັ້ງໝັ້ນ ດຳລົງຢູ່ໃນສີລະສຳປະທາ (ຄວາມເຖິງພ້ອມດ້ວຍສີນ) ໃຫ້ມານດາແລະບິດາຜູ້ຂີ້ຖີ່ສະມາທານ ຕັ້ງໝັ້ນ ດຳລົງຢູ່ໃນຈາຄະສຳປະທາ(ຄວາມເຖິງພ້ອມດ້ວຍການເສຍສະລະ) ໃຫ້ມານດາແລະບິດາຜູ້ບໍ່ມີປັນຍາ ສະມາທານ ຕັ້ງໝັ້ນ ດຳລົງຢູ່ໃນປັນຍາສຳປະທາ (ຄວາມເຖິງພ້ອມດ້ວຍປັນຍາ)

ດ້ວຍເຫດພຽງທໍ່ນີ້ແລ ການກະທຳແນວນັ້ນຊື່ວ່າອັນບຸດໄດ້ເຮັດ ແລະເຮັດຕອບແທນແກ່ມານດາ ແລະບິດາ (໔)

## ວາທະ ໘ ຢ່າງ

[໓໕] ຄັ້ງນັ້ນ ພາມຄົນໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ທ່ານພຣະໂຄດົມມີວາທະແນວໃດ ກ່າວເຖິງອັນໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ເຮົາມີວາທະວ່າ ຄວນເຮັດ ແລະມີວາທະວ່າບໍ່ຄວນເຮັດ"

ພາມທູນຖາມວ່າ "ທ່ານພຣະໂຄດົມມີວາທະວ່າ ຄວນເຮັດ ແລະມີວາທະວ່າບໍ່ຄວນເຮັດແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຮົາກ່າວວ່າ ບໍ່ຄວນເຮັດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ບໍ່ຄວນເຮັດບາບອະກຸສົນທຳຫຼາຍຢ່າງ ແຕ່ຄວນທຳກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ຄວນເຮັດກຸສົນທຳຫຼາຍຢ່າງ ພາມ ເຮົາມີວາທະວ່າຄວນເຮັດ ແລະມີວາທະວ່າບໍ່ຄວນເຮັດແນວນີ້ແລ"

ພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນນ່ອນຫຼາຍ ໆລໆ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" (໓)

## ທັກຂິໄນຍະບຸກຄົນ ໘ ຈຳພວກ

[໓໗] ຄັ້ງນັ້ນ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ພຣະອົງ ຜູ້ຈະເລີນ ທັກຂິໄນຍະບຸກຄົນ (ຄົນທີ່ຄວນແກ່ຂອງທຳບຸນ) ໃນໂລກມີຈັກຈຳພວກ ແລະຄວນໃຫ້ທານໃນເຂດໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໃນໂລກມີທັກຂິໄນຍະບຸກຄົນ ໘ ຈຳພວກ ຄື

໑. ພຣະເສຂະ (ຜູ້ຍັງຕ້ອງສຶກສາ)
໘. ພຣະອະເສຂະ (ຜູ້ບໍ່ຕ້ອງສຶກສາ)

ໃນໂລກມີທັກຂິໄນຍະບຸກຄົນ ໘ ຈຳພວກນີ້ແລ ແລະເພິ່ງໃຫ້ທານໃນເຂດນີ້

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພຣະດຳຣັດນີ້ ພຣະສຸຄົດສາດສະດາ ເມື່ອຕັດພຣະດຳຣັດນີ້ແລ້ວ ໄດ້ຕັດພຣະຄາຖາປະພັນນີ້ຕໍ່ໄປອີກ ວ່າ

ໃນໂລກນີ້ພຣະເສຂະ ແລະພຣະອະເສຂະ
ເປັນຜູ້ຄວນແກ່ທັກຂິນາຂອງທາຍົກຜູ້ບູຊາຢູ່
ພຣະເສຂະ ແລະພຣະອະເສຂະເຫຼົ່ານັ້ນ ເປັນຄົນຊື່
ທັງທາງກາຍ ທາງວາຈາ ແລະທາງໃຈ
ນີ້ເປັນເຂດຂອງທາຍົກຜູ້ບູຊາຢູ່
ທານທີ່ໃຫ້ໃນເຂດນີ້ມີຜົນຫຼາຍ (໔)

ບຸກຄົນຜູ້ມີສັງໂຍດ ໘ ຈຳພວກ

[໓໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດຢູ່ທີ່ຜາສາດຂອງວິສາຂາມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີໃນບ່ອນນັ້ນແລ ທ່ານພຣະສາຣີບຸດຮຽກພິກຂຸ

ທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຕອບຮັບແລ້ວ ທ່ານພຣະສາຣີບຸດ ຈຶ່ງໄດ້ກ່າວເລື້ອງນີ້ ວ່າ

"ຜູ້ມີອາຍຸທັງຫຼາຍ ເຮົາຈັກສະແດງບຸກຄົນທີ່ມີສັງໂຍດພາຍໃນ ແລະບຸກຄົນທີ່ມີ ສັງໂຍດພາຍນອກ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນ ຕອບຮັບແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ບຸກຄົນຜູ້ມີສັງໂຍດພາຍໃນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະ (ມາຣະຍາດ) ແລະໂຄຈອນ (ການທ່ຽວໄປ) ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸນັ້ນ ຫຼັງຈາກມໍຣະນະພາບແລ້ວຈະໄປເກີດໃນໝູ່ເທບໝູ່ໃດໝູ່ໜຶ່ງ ທ່ານຈຸຕິຈາກອັດຕະພາບນັ້ນ ເປັນອາຄາມີ ກັບມາສູ່ຄວາມເປັນມະນຸດ ບຸກຄົນນີ້ຮຽກວ່າ ຜູ້ມີສັງໂຍດພາຍໃນ ເປັນອາຄາມີ ກັບມາສູ່ຄວາມເປັນມະນຸດ

ບຸກຄົນຜູ້ມີສັງໂຍດພາຍນອກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸນັ້ນ ບັນລຸເຈໂຕວິມຸດຕິທີ່ສະງົບແນວໃດແນວໜຶ່ງ ພິກຂຸນັ້ນຫຼັງຈາກມໍຣະນະພາບແລ້ວ ຈະໄປເກີດໃນໝູ່ເທບໝູ່ໃດໝູ່ໜຶ່ງ ທ່ານຈຸຕິຈາກອັດຕະພາບນັ້ນ ເປັນອະນາຄາມີ ບໍ່ກັບມາສູ່ຄວາມເປັນມະນຸດນີ້ ບຸກຄົນນີ້ຮຽກວ່າ ຜູ້ມີສັງໂຍດພາຍນອກ ເປັນອະນາຄາມີ ບໍ່ກັບມາສູ່ຄວາມເປັນມະນຸດ

ອີກປະການໜຶ່ງ ພິກຂຸເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸນັ້ນປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບກາມທັງຫຼາຍ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບພົບທັງຫຼາຍ ທ່ານປະຕິບັດເພື່ອສິ້ນຕັນຫາ ທ່ານປະຕິບັດເພື່ອສິ້ນຄວາມໂລບ ຫຼັງຈາກມໍຣະນະພາບແລ້ວຈະໄປເກີດໃນໝູ່ເທບໝູ່ໃດໝູ່ໜຶ່ງ ທ່ານຈຸຕິຈາກອັດຕະພາບນັ້ນ ເປັນອະນາຄາມີບໍ່ກັບມາສູ່ຄວາມເປັນມະນຸດນີ້ ບຸກຄົນນີ້ຮຽກວ່າ ຜູ້ມີສັງໂຍດພາຍນອກເປັນອະນາຄາມີ ບໍ່ກັບມາສູ່ຄວາມເປັນມະນຸດ

ຄັ້ງນັ້ນ ເທວະດາຈຳນວນຫຼາຍ ພ້ອມໃຈກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ໄດ້ຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້

ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນທີ່ຜາສາດຂອງວິສາຂາມິຄາຣະມາຕາ ໃນບຸບພາຣາມ ທ່ານພຣະສາຣີບຸດນັ້ນ ກຳລັງເທດສະໜາເຖິງບຸກຄົນທີ່ມີສັງໂຍດພາຍໃນ ແລະ ບຸກຄົນທີ່ມີສັງໂຍດພາຍນອກໃຫ້ພິກຂຸທັງຫຼາຍຟັງ ຂ້າແດ່ ພຣະອົງຜູ້ຈະເລີນ ບໍລິສັດຕ່າງແຈ່ມໃສ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າ ຊົງພຣະກະລຸນາສະເດັດໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ເທີ້ນ"

ພຣະຜູ້ມີພຣະພາກເຈົ້າ ຊົງຮັບອາຣາດທະນາໂດຍດຸດສະນີພາບ ຕໍ່ຈາກນັ້ນ ໄດ້ຊົງຫາຍຈາກ ພຣະເຊຕະວັນໄປຜາກົດຕໍ່ໜ້າທ່ານພຣະສາຣີບຸດທີ່ຜາສາດຂອງວິສາຂາມິຄາຣະມາຕາໃນບຸບພາຣາມ ຄື ບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງອາສະນະທີ່ປູລາດໄວ້ ຝ່າຍທ່ານພຣະສາຣີບຸດກໍຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

ສາຣີບຸດ ເທວະດາຈຳນວນຫຼາຍພ້ອມໃຈກັນເຂົ້າໄປຫາເຮົາຮອດບ່ອນຢູ່ ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນທີ່ຜາສາດຂອງວິສາຂາມິຄາຣະມາຕາໃນບຸບພາຣາມ ທ່ານພຣະສາຣີບຸດນັ້ນ ກຳລັງເທດສະໜາເຖິງບຸກຄົນທີ່ມີສັງໂຍດພາຍໃນແລະບຸກຄົນທີ່ມີສັງໂຍດພາຍນອກໃຫ້ພິກຂຸທັງຫຼາຍຟັງ ຂ້າແດ່ ພຣະອົງຜູ້ຈະເລີນ ບໍລິສັດ ຕ່າງແຈ່ມໃສ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າ ຊົງພຣະກະລຸນາສະເດັດໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ເທີ້ນ" ເທວະດາເຫຼົ່ານັ້ນ ຢືນຢູ່ໃນພື້ນທີ່ມີຂະໜາດພໍທີ່ປາຍເຫຼັກແຫຼມປັກລົງໄດ້ ຈຳນວນ ໑໐ ອົງແດ່ ໒໐ ອົງແດ່ ໓໐ ອົງແດ່ ໔໐ ອົງແດ່ ໕໐ ອົງແດ່ ໖໐ ອົງແດ່ ແຕ່ກໍບໍ່ບຽດສຽດກັນ

ທ່ານອາດມີຄວາມຄິດແບບນີ້ວ່າ "ຈິດເຊິ່ງເປັນເຫດໃຫ້ເທວະດາເຫຼົ່ານັ້ນຢືນຢູ່ໄດ້ໃນພື້ນທີ່ມີຂະໜາດພໍທີ່ປາຍເຫຼັກແຫຼປັກລົງໄດ້ຈຳນວນ ໑໐ ອົງແດ່ ໒໐ ອົງແດ່ ໓໐ ອົງແດ່ ໔໐ ອົງແດ່ ໕໐ ອົງແດ່ ໖໐ ອົງແດ່ ແຕ່ກໍບໍ່ບຽດສຽດກັນແບບນັ້ນ ເປັນຈິດອັນເທວະດາເຫຼົ່ານັ້ນໄດ້ຈະເລີນໃນພົບນັ້ນແນ່ນອນ" ຂໍ້ນັ້ນ ທ່ານບໍ່ຄວນເຫັນແບບນັ້ນ ຈິດເຊິ່ງເປັນເຫດໃຫ້ເທວະດາເຫຼົ່ານັ້ນຢືນຢູ່ໄດ້ໃນພື້ນທີ່ມີຂະໜາດພໍທີ່ປາຍເຫຼັກແຫຼມປັກລົງໄດ້ ຈຳນວນ ໑໐ ອົງແດ່ ໗ລ໗ ແຕ່ກໍບໍ່ບຽດສຽດກັນແບບນັ້ນ ເປັນຈິດອັນເທວະດາເຫຼົ່ານັ້ນໄດ້ຈະເລີນໃນທຳວິໄນນີ້ນັ້ນເອງ

ຍ້ອນເຫດນັ້ນແລ ທ່ານເພິ່ງຕັ້ງໃຈຮູ້ແບບນີ້ວ່າ "ເຮົາຈັກເປັນຜູ້ມີອິນຊີສະງົບ ມີໃຈ ສະງົບ ກາຍຍະກຳ ວະຈີກຳ ມະໂນກຳຂອງຜູ້ມີອິນຊີສະງົບ ມີໃຈສະງົບ ກໍຈັກສະງົບດ້ວຍ ເຮົາຈັກນຳກາຍ ແລະຈິດທີ່ສະງົບທໍ່ນັ້ນເຂົ້າໄປໃນເພື່ອນພົມມະຈາຣີທັງຫຼາຍ" ສາຣີບຸດ ທ່ານເພິ່ງຕັ້ງໃຈຮູ້ແບບນີ້ແລ

ສາຣີບຸດ ພວກອັນຍະເດຍຣະຖີ ປະຣິພາຊົກທີ່ບໍ່ໄດ້ຟັງທຳບັນລະຍາຍນີ້ໄດ້ເສຍໂອກາດແລ້ວ (໕)

## ເຫດປັດໄຈແຫ່ງການຜິດຖຽງ

[໘໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະມະຫາກັດຈານະຢູ່ທີ່ຝັ່ງແມ່ນ້ຳກັດທະມະທະຫະ ເຂດເມືອງວະຣະນາ ຄັ້ງນັ້ນ ພາມອາຣາມທັນດະເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາກັດຈານະດັ່ງນີ້ວ່າ “ທ່ານກັດຈານະ ອັນໃດນໍເປັນເຫດເປັນປັດໄຈໃຫ້ແມ່ນກະສັດ ກໍຂັດແຍ່ງກັບກະສັດ ແມ່ນພາມກໍຂັດແຍ່ງກັບພາມ ແມ່ນຄະຫະບໍດີກໍຂັດແຍ່ງກັບ ຄະຫະບໍດີ”

ພຣະມະຫາກັດຈານະຕອບວ່າ “ພາມ ຍ້ອນຄວາມຢຶດໝັ້ນກາມຣາຄະ ຕົກຢູ່ໃນອຳນາດກາມຣາຄະ ກຳໜັດຍິນດີໃນກາມຣາຄະ ຖືກກາມຣາຄະກຸ້ມລຸມ ແລະຖືກກາມຣາຄະຄອບງຳເປັນເຫດ ແມ່ນກະສັດກໍຂັດແຍ່ງກັບກະສັດ ແມ່ນພາມກໍຂັດແຍ່ງກັບພາມ ແມ່ນຄະຫະບໍດີກໍຂັດແຍ່ງກັບຄະຫະບໍດີ”

ພາມອາຣາມທັນດະຖາມວ່າ “ອັນໃດ? ເປັນເຫດເປັນປັດໄຈໃຫ້ສະມະນະຂັດແຍ່ງກັບສະມະນະ”

ພຣະມະຫາກັດຈານະຕອບວ່າ “ຍ້ອນຄວາມຢຶດໝັ້ນທິດຖິຣາຄະ ຕົກຢູ່ໃນອຳນາດທິດຖິຣາຄະ ກຳໜັດຍິນດີໃນທິດຖິຣາຄະ ຖືກທິດຖິຣາຄະກຸ້ມລຸມ ແລະຖືກທິດຖິຣາຄະຄອບງຳເປັນເຫດ ແມ່ນສະມະນະກໍຂັດແຍ່ງກັບສະມະນະ”

ພາມອາຣາມທັນດະຖາມວ່າ “ບຸກຄົນທີ່ລ່ວງພົ້ນຄວາມຢຶດໝັ້ນກາມຣາຄະ ການຕົກຢູ່ໃນອຳນາດກາມຣາຄະ ຄວາມກຳໜັດຍິນດີໃນກາມຣາຄະ ການຖືກກາມຣາຄະກຸ້ມລຸມ ແລະການຖືກກາມຣາຄະຄອບງຳນີ້ແລະບຸກຄົນທີ່ລ່ວງພົ້ນຄວາມຢຶດໝັ້ນທິດຖິຣາຄະ ການຕົກຢູ່ໃນອຳນາດທິດຖິຣາຄະ ຄວາມກຳໜັດຍິນດີໃນທິດຖິຣາຄະ ການຖືກທິດຖິຣາຄະກຸ້ມລຸມ ແລະການຖືກທິດຖິຣາຄະຄອບງຳນີ້ຍັງມີຢູ່ໃນໂລກບໍ?”

ພຣະມະຫາກັດຈານະຕອບວ່າ “ບຸກຄົນທີ່ລ່ວງພົ້ນຄວາມຢຶດໝັ້ນກາມຣາຄະ ການຕົກຢູ່ໃນອຳນາດກາມຣາຄະ ຄວາມກຳໜັດຍິນດີໃນກາມຣາຄະ ການຖືກກາມຣາຄະກຸ້ມລຸມ ແລະການຖືກກາມຣາຄະຄອບງຳນີ້ ແລະບຸກຄົນທີ່ລ່ວງພົ້ນຄວາມຢຶດໝັ້ນທິດຖິຣາຄະ ການຕົກຢູ່ໃນ

ອຳນາດທິດຖິຣາຄະ ຄວາມກຳໜັດຍິນດີໃນທິດຖິຣາຄະ ການຖືກທິດຖິຣາຄະກຸ້ມລຸມ ແລະການຖືກທິດຖິຣາຄະຄອບງຳນີ້ ຍັງມີຢູ່ໃນໂລກ"

ພາມອາຣາມທັນດະຖາມວ່າ "ກໍໃຜໃນໂລກທີ່ລ່ວງພົ້ນຄວາມຍຶດໝັ້ນການຣາຄະ ການຕົກຢູ່ໃນອຳນາດການຣາຄະ ຄວາມກຳໜັດຍິນດີໃນການຣາຄະ ການຖືກການຣາຄະ ກຸ້ມລຸມ ແລະການຖືກການຣາຄະຄອບງຳນີ້ ແລະທີ່ລ່ວງພົ້ນຄວາມຍຶດໝັ້ນທິດຖິຣາຄະ ການຕົກຢູ່ໃນອຳນາດທິດຖິຣາຄະ ຄວາມກຳໜັດຍິນດີໃນທິດຖິຣາຄະ ການຖືກທິດຖິຣາຄະກຸ້ມລຸມ ແລະການຖືກທິດຖິຣາຄະຄອບງຳນີ້"

ພຣະມະຫາກັດຈານະຕອບວ່າ "ໃນຊົນນະບົດດ້ານທິດຕາເວັນອອກມີເມືອງຫຼວງຊື່ສາວັດຖີ ຢູ່ນະຄອນສາວັດຖີນັ້ນ ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ກຳລັງປະທັບຢູ່ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງລ່ວງພົ້ນຄວາມຍຶດໝັ້ນການຣາຄະ ການຕົກຢູ່ໃນອຳນາດການຣາຄະ ຄວາມກຳໜັດຍິນດີໃນການຣາຄະ ການຖືກການຣາຄະກຸ້ມລຸມ ແລະການຖືກການຣາຄະຄອບງຳນີ້ ແລະຊົງລ່ວງພົ້ນຄວາມຍຶດໝັ້ນທິດຖິຣາຄະ ການຕົກຢູ່ໃນອຳນາດທິດຖິຣາຄະ ຄວາມກຳໜັດຍິນດີໃນທິດຖິຣາຄະ ການຖືກທິດຖິຣາຄະກຸ້ມລຸມ ແລະການຖືກທິດຖິຣາຄະຄອບງຳນີ້"

ເມື່ອພຣະມະຫາກັດຈານະຕອບແນວນີ້ແລ້ວ ພາມອາຣາມທັນດະໄດ້ລຸກຈາກບ່ອນນັ່ງຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ຄຸກເຂົ່າຂ້າງຂວາລົງເທິງແຜ່ນດິນ ປະນົມມືໄປສູ່ທິດທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ອຸທານຂຶ້ນ ໓ ຄັ້ງວ່າ

"ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງລ່ວງພົ້ນຄວາມຍຶດໝັ້ນການຣາຄະ ການຕົກຢູ່ໃນອຳນາດການຣາຄະ ຄວາມກຳໜັດຍິນດີໃນການຣາຄະ ການຖືກການຣາຄະກຸ້ມລຸມ ແລະການຖືກການຣາຄະຄອບງຳນີ້ ແລະຊົງລ່ວງພົ້ນຄວາມຍຶດໝັ້ນທິດຖິຣາຄະ ການຕົກຢູ່ໃນອຳນາດທິດຖິຣາຄະ ຄວາມກຳໜັດຍິນດີໃນທິດຖິຣາຄະ ການຖືກທິດຖິຣາຄະກຸ້ມລຸມ ແລະການຖືກທິດຖິຣາຄະຄອບງຳນີ້

ທ່ານກັດຈານະ ພາສິດຂອງທ່ານຊັດເຈນນ່ອນຫຼາຍ ທ່ານກັດຈານະ ພາສິດຂອງທ່ານຊັດເຈນນ່ອນຫຼາຍ ທ່ານກັດຈານະປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດໂດຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພະເຈົ້ານີ້ ຂໍເຖິງທ່ານພຣະໂຄດົມພຣະອົງນັ້ນ ພ້ອມທັງພຣະທຳ

ແລະພຣະສົງເປັນສະຣະນະ ຂໍທ່ານກັດຈານະຈົ່ງຈື່ຂ້າພະເຈົ້າວ່າເປັນ ອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" (໖)

## ພູມຄົນແກ່ແລະພູມຄົນໜຸ່ມ

[໓໙] ສະໄໝໜຶ່ງ ທ່ານພຣະມະຫາກັດຈານະຢູ່ທີ່ປ່າຄຸນທາວັນ ເຂດເມືອງມະທຸຣາ ຄັ້ງນັ້ນ ພາມກັນທະຣາຍະນະ ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄດ້ສົນທະນາ ປາໄສ ໆລໆ ພາມກັນທະຣາຍະນະ ຜູ້ນັ່ງຢູ່ບ່ອນທີ່ສົມຄວນແລ້ວໄດ້ກ່າວດັ່ງນີ້ວ່າ "ທ່ານ ກັດຈານະຂ້າພະເຈົ້າໄດ້ຟັງມາວ່າ ສະມະນະກັດຈານະບໍ່ຍອມຂາບ ບໍ່ລຸກຮັບພວກພາມ ຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ບໍເຊື້ອເຊີນໃຫ້ນັ່ງ ທ່ານກັດຈານະ ເລື້ອງທີ່ຂ້າພະເຈົ້າໄດ້ຮູ້ມານັ້ນຈິງຢ່າງແນ່ນອນ ການທີ່ທ່ານກັດຈານະ ເຮັດເຊັ່ນນັ້ນບໍ່ສົມຄວນເລີຍ"

ທ່ານພຣະມະຫາກັດຈານະຕອບວ່າ "ພູມຄົນແກ່ ແລະພູມຄົນໜຸ່ມທີ່ພຣະຜູ້ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າ ຜູ້ຊົງຮູ້ຊົງເຫັນພຣະອົງນັ້ນ ຕັດໄວ້ມີຢູ່ ເຖິງແມ່ນນັບແຕ່ເກີດມາບຸກຄົນຈະເປັນຄົນແກ່ມີອາຍຸ ໘໐ ປີ ໙໐ ປີ ຫຼື ໑໐໐ ປີ ແຕ່ເຂົາຍັງບໍຣິໂພກການ ຢູ່ໃນທ່າມກາງການ ຖືກຄວາມຮ້ອນຮົນຍ້ອນການແຜດເຜົາ ຖືກການວິຕົກກັດກິນຢູ່ ຍັງເປັນຜູ້ຂົນຂວາຍເພື່ອສະແຫວງຫາການ ເຂົາຍ່ອມເຖິງການນັບວ່າເປັນໜຸ່ມ ບໍ່ແມ່ນຜູ້ໃຫຍ່ແທ້ ເຖິງແມ່ນວ່າ ຈະເປັນເດັກ ຍັງໜຸ່ມມີຜົມດຳປອດ ປະກອບດ້ວຍຄວາມເປັນຄົນໜຸ່ມແໜ້ນ ຢູ່ໃນປະຖົມໄວ ແຕ່ເຂົາບໍ່ບໍຣິໂພກການ ບໍ່ຢູ່ໃນທ່າມກາງການ ບໍ່ຖືກຄວາມຮ້ອນຮົນຍ້ອນການແຜດເຜົາ ບໍ່ຖືກການວິຕົກກັດກິນຢູ່ ບໍ່ຂົນຂວາຍເພື່ອສະແຫວງຫາການ ເຂົາຍ່ອມເຖິງການນັບວ່າ ເປັນບັນດິດເປັນຜູ້ໃຫຍ່ໂດຍແທ້"

ເມື່ອທ່ານພຣະມະຫາກັດຈານະກ່າວແນວນີ້ແລ້ວ ພາມກັນທະຣາຍະນະໄດ້ລຸກຈາກບ່ອນນັ່ງ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ຂາບຕີນຂອງພິກຂຸໜຸ່ມ ໑໐໐ ອົງ ດ້ວຍຂະໜ່ອມ ກ່າວວ່າ "ພຣະຜູ້ເປັນເຈົ້າທັງຫຼາຍ ເປັນຜູ້ໃຫຍ່ ຕັ້ງຢູ່ໃນພູມຂອງຜູ້ໃຫຍ່ ແຕ່ຂ້າພະເຈົ້າເປັນເດັກ ຕັ້ງຢູ່ໃນພູມຂອງເດັກ ທ່ານກັດຈານະ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ໆລໆ ຂໍທ່ານ ກັດຈານະຈົ່ງຈື່ຂ້າພະເຈົ້າວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" (៧)

## ສະໄໝ ໘ ຢ່າງ

[໔໐] ພິກຂຸທັງຫຼາຍ ໃນເວລາທີ່ພວກໂຈນມີກຳລັງ ພຣະເຈົ້າແຜ່ນດິນທັງຫຼາຍຍ່ອມອ່ອນກຳລັງ ໃນສະໄໝນັ້ນ ພຣະເຈົ້າແຜ່ນດິນ ຍ່ອມບໍ່ສະດວກທີ່ຈະສະເດັດຜ່ານໄປ ສະເດັດອອກໄປ ຫຼືອອກຄຳສັ່ງໄປສູ່ຊົນນະບົດຊາຍແດນ ແມ່ນພວກພາມ ແລະຄະຫະບໍດີກໍບໍ່ສະດວກທີ່ຈະຜ່ານໄປ ອອກໄປ ຫຼື ກວດກາການງານພາຍນອກ

ໃນທຳນອງດຽວກັນ ໃນເວລາທີ່ພວກພິກຂຸຊົ່ວຊາມມີກຳລັງ ພວກພິກຂຸຜູ້ມີສິນເປັນທີ່ຮັກ ຍ່ອມອ່ອນກຳລັງ ໃນສະໄໝນັ້ນ ພິກຂຸຜູ້ມີສິນເປັນທີ່ຮັກຍ່ອມມິດງຽບ ນັ່ງໃນທ່າມກາງສົງຫຼື ອົບພະຍົບໄປຢູ່ຊົນນະບົດຊາຍແດນ ຂໍ້ນີ້ນັ້ນ ຍ່ອມເປັນໄປເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ ເທວະດາ ແລະມະນຸດທັງຫຼາຍ

ໃນເວລາທີ່ພຣະເຈົ້າແຜ່ນດິນທັງຫຼາຍມີກຳລັງ ພວກໂຈນຍ່ອມອ່ອນກຳລັງ ໃນສະໄໝ ນັ້ນ ພຣະເຈົ້າແຜ່ນດິນ ຍ່ອມມີຄວາມສະດວກທີ່ຈະສະເດັດຜ່ານໄປ ສະເດັດອອກໄປ ຫຼື ອອກ ຄຳສັ່ງໄປສູ່ຊົນນະບົດຊາຍແດນ ແມ່ນພວກພາມ ແລະຄະຫະບໍດີກໍມີຄວາມສະດວກທີ່ຈະຜ່ານ ໄປ ອອກໄປ ຫຼື ກວດກາການງານພາຍນອກ

ໃນທຳນອງດຽວກັນ ໃນເວລາທີ່ພິກຂຸຜູ້ມີສິນເປັນທີ່ຮັກມີກຳລັງ ພິກຂຸຊົ່ວຊາມຍ່ອມອ່ອນ ກຳລັງ ໃນສະໄໝນັ້ນ ພິກຂຸຊົ່ວຊາມຍ່ອມມິດງຽບ ນັ່ງຢູ່ໃນທ່າມກາງສົງ ຫຼື ອອກໄປທາງໃດ ທາງໜຶ່ງ ຂໍ້ນີ້ນັ້ນ ຍ່ອມເປັນໄປເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອ ປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ (໗)

## ການປະຕິບັດທີ່ຊົງສັນເສີນແລະບໍ່ຊົງສັນເສີນ

[໔໑] ພິກຂຸທັງຫຼາຍ ເຮົາບໍ່ສັນເສີນການປະຕິບັດຜິດຂອງຄົນ ໒ ຈຳພວກ ຄື ຄະລືຫັດຫຼື ບັນພະຊິດ ຄະລືຫັດຫຼືບັນພະຊິດປະຕິບັດຜິດ ຍ້ອນການປະຕິບັດຜິດເປັນເຫດ ຍ່ອມບໍ່ເຮັດໃຫ້ ຍາຍະກຸສົນທຳ[໖]ສຳເລັດບໍລິບູນ

ພິກຂຸທັງຫຼາຍ ເຮົາສັນເສີນການປະຕິບັດຖືກຕ້ອງຂອງຄົນ ໒ ຈຳພວກ ຄື ຄະລືຫັດ ຫຼື ບັນພະຊິດ ຄະລືຫັດຫຼືບັນພະຊິດປະຕິບັດຖືກ ຍ້ອນການປະຕິບັດຖືກຕ້ອງເປັນເຫດຍ່ອມເຮັດໃຫ້ ຍາຍະກຸສົນທຳສຳເລັດບໍລິບູນ (໗)

## ບຸກຄົນຜູ້ເຮັດໃຫ້ສາດສະໜາເສື່ອມແລະຈະເລີນ

[໔໒] ພິກຂຸພວກທີ່ຄັດຄ້ານອັດຖະ ແລະທຳໂດຍສູດທີ່ຕົນຮຽນໄວ້ບໍ່ດີ ດ້ວຍພະຍັນຊະນະ ປະຕິຮູປະນັ້ນຊື່ວ່າ ປະຕິບັດເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອ ບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະມະນຸດທັງຫຼາຍ ພິກຂຸຍ່ອມປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ ແລະຊື່ວ່າ ເຮັດໃຫ້ສັດທຳນີ້ສູນຫາຍໄປ

ພິກຂຸພວກທີ່ອະນຸໂລມະອັດຖະ ແລະທຳໂດຍສູດທີ່ຕົນຮຽນໄວ້ດີດ້ວຍພະຍັນຊະນະປະຕິຮູປະນັ້ນ ຊື່ວ່າ ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸເຫຼົ່ານັ້ນ ຍ່ອມປະສົບບຸນຫຼວງຫຼາຍ ແລະຊື່ວ່າ ດຳລົງສັດທຳນີ້ໄວ້ໄດ້ (໑໐)

**ສະມະຈິດຕະວັກທີ ໔ ຈົບ**

# ໕. ປະຣິສະວັກ

## ໝວດວ່າດ້ວຍບໍລິສັດ

[໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບໍລິສັດ ໔ ຈຳພວກນີ້

ບໍລິສັດ ໔ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດຕື້ນ ໔. ບໍລິສັດເລິກ

ບໍລິສັດຕື້ນ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກບໍ່ຂອບ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ບໍລິສັດແບບນີ້ຮຽກວ່າ ບໍລິສັດຕື້ນ

ບໍລິສັດເລິກ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸເປັນຜູ້ບໍ່ຟຸ້ງຊ່ານ ບໍ່ຖືໂຕ ບໍ່ໂລເລ ບໍ່ເປັນຄົນປາກບໍ່ຂອບ ບໍ່ເວົ້າພ່ຳເພື້ອ ມີສະຕິຕັ້ງໝັ້ນ ມີສຳປະຊັນຍະ ມີຈິດຕັ້ງໝັ້ນ ມີຈິດແນ່ວແນ່ສັງລວມອິນຊີ ບໍລິສັດນີ້ຮຽກວ່າ ບໍລິສັດເລິກ

ພິກຂຸທັງຫຼາຍ ບໍລິສັດ ໔ ຈຳພວກນີ້ແລ
ບັນດາບໍລິສັດ ໔ ຈຳພວກນີ້ບໍລິສັດເລິກເປັນເລີດ (໑)

[໔໔] ພິກຂຸທັງຫຼາຍ ບໍລິສັດ ໔ ຈຳພວກນີ້
ບໍລິສັດ ໔ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດທີ່ແຕກແຍກກັນ ໔. ບໍລິສັດທີ່ສາມັກຄີກັນ

ບໍລິສັດທີ່ແຕກແຍກກັນ ເປັນແນວໃດ?

ຄື ບໍລິສັດໃດ ໃນທຳວິໄນນີ້ມີພວກພິກຂຸຕ່າງໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ແຕກແຍກກັນ

ບໍລິສັດທີ່ສາມັກຄີກັນ ເປັນແນວໃດ?

ຄື ບໍລິສັດໃດ ໃນທຳວິໄນນີ້ມີພວກພິກຂຸພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄືນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ສາມັກຄີກັນ

ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້ແລ

ບັນດາບໍລິສັດ ໒ ຈຳພວກນີ້ບໍລິສັດທີ່ສາມັກຄີກັນເປັນເລີດ (໒)

[໔໕] ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້

ບໍລິສັດ ໒ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດທີ່ບໍ່ມີຫົວໜ້າປະເສີດ
໒. ບໍລິສັດທີ່ມີຫົວໜ້າປະເສີດ

ບໍລິສັດທີ່ບໍ່ມີຫົວໜ້າປະເສີດ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸເຖຣະເປັນຜູ້ມັກຫຼາຍ ເປັນຜູ້ຫຍ່ອນຍານ ເປັນຜູ້ນຳໃນໂອກກະມະນະທຳ ຖິ້ມເປົາໃນປະວິເວກ ບໍ່ຜາຣົບຄວາມພຽນ ເພື່ອເຖິງທຳ ທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໝູ່ຄົນລຸ້ນຫຼັງພາກັນເອົາຢ່າງພວກພິກຂຸເຖຣະເຫຼົ່ານັ້ນ ແມ່ນໝູ່ຄົນລຸ້ນຫຼັງກໍເປັນຜູ້ມັກຫຼາຍ ເປັນຜູ້ຫຍ່ອນຍານ ເປັນຜູ້ນຳໃນໂອກກະມະນະທຳ ຖິ້ມເປົາໃນປະວິເວກ ບໍ່ຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ບໍ່ມີຫົວໜ້າປະເສີດ

ບໍລິສັດທີ່ມີຫົວໜ້າປະເສີດ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ມີພວກພິກຂຸເຖຣະ ບໍ່ມັກຫຼາຍ ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໝູ່ຄົນລຸ້ນຫຼັງພາກັນເອົາຢ່າງພວກ

ພິກຂຸເຖຣະເຫຼົ່ານັ້ນ ແມ່ນໝູ່ຄົນລຸ້ນຫຼັງກໍບໍ່ມັກຫຼາຍ ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ມີຫົວໜ້າປະເສີດ

ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້ແລ

ບັນດາບໍລິສັດ ໒ ຈຳພວກນີ້ບໍລິສັດທີ່ມີຫົວໜ້າປະເສີດເປັນເລີດ (໓)

[໕໓] ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້

ບໍລິສັດ ໒ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດທີ່ບໍ່ເປັນອະຣິຍະ ໒. ບໍລິສັດທີ່ເປັນອະຣິຍະ

ບໍລິສັດທີ່ບໍ່ເປັນອະຣິຍະ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ມີພວກພິກຂຸບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມີນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)" ບໍລິສັດນີ້ຮຽກວ່າ ບໍລິສັດທີ່ບໍ່ເປັນອະຣິຍະ

ບໍລິສັດທີ່ເປັນອະຣິຍະ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ບໍລິສັດນີ້ຮຽກວ່າ ບໍລິສັດທີ່ເປັນອະຣິຍະ

ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້ແລ

ບັນດາບໍລິສັດ ໒ ຈຳພວກນີ້ບໍລິສັດທີ່ເປັນອະຣິຍະເປັນເລີດ (໔)

[໕໗] ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້

ບໍລິສັດ ໒ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດຂີ້ເຫຍື່ອ ໒. ບໍລິສັດໃສສະອາດ

ບໍລິສັດຂີ້ເຫຍື່ອ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ມີພວກພິກຂຸເຖິງສັນທາຄະຕິ (ລຳອຽງຍ້ອນຮັກ) ໂທສາຄະຕິ (ລຳອຽງຍ້ອນຊັງ) ໂມຫາຄະຕິ (ລຳອຽງຍ້ອນຫຼົງ) ພະຍາຄະຕິ (ລຳອຽງຍ້ອນຢ້ານ) ບໍລິສັດນີ້ຮຽກວ່າ ບໍລິສັດຂີ້ເຫຍື່ອ

ບໍລິສັດໃສສະອາດ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸບໍ່ເຖິງສັນທາຄະຕິ ໂທສາຄະຕິ ໂມຫາຄະຕິ ພະຍາຄະຕິ ບໍລິສັດນີ້ຮຽກວ່າ ບໍລິສັດໃສສະອາດ

ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້ແລ
ບັນດາບໍລິສັດ ໒ ຈຳພວກນີ້ບໍລິສັດໃສສະອາດເປັນເລີດ (໕)

[໒໗] ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້

ບໍລິສັດ ໒ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດທີ່ດື້ດ້ານ ບໍ່ໄຕ່ຖາມ ແລະບໍ່ໄດ້ຮັບການແນະນຳ
໒. ບໍລິສັດທີ່ໄຕ່ຖາມ ໄດ້ຮັບການແນະນຳ ແລະບໍ່ດື້ດ້ານ

ບໍລິສັດທີ່ດື້ດ້ານ ບໍ່ໄຕ່ຖາມ ແລະບໍ່ໄດ້ຮັບການແນະນຳ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ເມື່ອຜູ້ອື່ນກ່າວສູດທີ່ຕະຖາຄົດກ່າວໄວ້ ລ້ຳເລິກ ມີເນື້ອຄວາມເລິກເຊິ່ງ ເປັນໂລກຸດຕະຣະທຳ ປະກອບດ້ວຍຄວາມວ່າງ ພວກພິກຂຸບໍ່ຕັ້ງໃຈຟັງໃຫ້ດີ ບໍ່ງ່ຽງຫູຟັງ ບໍ່ເຂົ້າໄປຕັ້ງຈິດໄວ້ເພື່ອຮູ້ທົ່ວເຖິງ ແລະບໍ່ໃຫ້ຄວາມສຳຄັນທຳວ່າຄວນຮຽນ ຄວນທ່ອງຈຳໃຫ້ຂຶ້ນໃຈ ແຕ່ເມື່ອຜູ້ອື່ນກ່າວສູດທີ່ທ່ານຜູ້ຊ່ຽວຊານໄດ້ຣົດຈະນາໄວ້ເປັນບົດກະວີ ມີອັກສອນວິຈິດ ມີພະຍັນຊະນະວິຈິດ ຢູ່ພາຍນອກ ເປັນສາວົກພາສິດ ພິກຂຸເຫຼົ່ານັ້ນກັບຕັ້ງໃຈຟັງຢ່າງດີ ງ່ຽງຫູຟັງ ເຂົ້າໄປຕັ້ງຈິດໄວ້ເພື່ອຮູ້ທົ່ວເຖິງ ແລະໃຫ້ຄວາມສຳຄັນທຳວ່າຄວນຮຽນ ຄວນທ່ອງຈຳໃຫ້ຂຶ້ນໃຈ ເມື່ອທ່ອງຈຳທຳນັ້ນແລ້ວ ບໍ່ສອບສວນ ບໍ່ໄຕ່ຖາມກັນວ່າ "ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຸດທະພົດນີ້ເປັນແນວໃດ?" ພິກຂຸເຫຼົ່ານັ້ນບໍ່ເປີດເຜີຍທຳທີ່ຍັງບໍ່ໄດ້ເປີດເຜີຍ ບໍ່ເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ໄດ້ເຮັດໃຫ້ງ່າຍ ແລະບໍ່ບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ດື້ດ້ານ ບໍ່ໄຕ່ຖາມ ແລະບໍ່ໄດ້ຮັບການແນະນຳ

ບໍລິສັດທີ່ໄຕ່ຖາມ ໄດ້ຮັບການແນະນຳ ແລະບໍ່ດື້ດ້ານ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ເມື່ອຜູ້ອື່ນກ່າວສູດທີ່ທ່ານຜູ້ຊ່ຽວຊານຣົດຈະນາໄວ້ເປັນ ບົດກະວີ ມີອັກສອນວິຈິດ ມີພະຍັນຊະນະວິຈິດ ຢູ່ພາຍນອກ ເປັນສາວົກພາສິດ ພວກພິກຂຸບໍ່ຕັ້ງໃຈຟັງດ້ວຍດີ ບໍ່ງ່ຽງຫູຟັງ ບໍ່ເຂົ້າໄປຕັ້ງຈິດໄວ້ເພື່ອຮູ້ທົ່ວເຖິງ ແລະບໍ່ໃຫ້ຄວາມສຳຄັນທຳ ວ່າຄວນຮຽນ ຄວນທ່ອງຈຳໃຫ້ຂຶ້ນໃຈ ແຕ່ເມື່ອຜູ້ອື່ນກ່າວສູດທີ່ຕະຖາຄົດກ່າວໄວ້ ລ້ຳເລິກ ມີເນື້ອຄວາມເລິກເຊິ່ງ ເປັນໂລກຸດຕະຣະທຳ ປະກອບດ້ວຍຄວາມວ່າງ ພິກຂຸເຫຼົ່ານັ້ນກັບຕັ້ງໃຈຟັງດ້ວຍດີ ງ່ຽງຫູຟັງ ເຂົ້າ

ໄປຕັ້ງຈິດໄວ້ເພື່ອຮູ້ທົ່ວເຖິງ ແລະໃຫ້ຄວາມສຳຄັນທຳວ່າຄວນຮຽນ ຄວນທ່ອງຈຳໃຫ້ຂຶ້ນໃຈ ເມື່ອທ່ອງຈຳທຳນັ້ນແລ້ວ ຍ່ອມສອບສວນໄຕ່ຖາມກັນວ່າ

"ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຸດທະພົດນີ້ເປັນແນວໃດ?" ພິກຂຸເຫຼົ່ານັ້ນເປີດເຜີຍທຳທີ່ຍັງບໍ່ໄດ້ເປີດເຜີຍ ເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ໄດ້ເຮັດໃຫ້ງ່າຍ ແລະບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ໄຕ່ຖາມ ໄດ້ຮັບການແນະນຳ ແລະບໍ່ຄື້ດ້ານ

ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້ແລ ບັນດາບໍລິສັດ ໒ ຈຳພວກນີ້ ບໍລິສັດທີ່ໄຕ່ຖາມໄດ້ຮັບການແນະນຳ ແລະບໍ່ຄື້ດ້ານເປັນເລີດ (໖)

[໔໙] ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້

ບໍລິສັດ ໒ ຈຳພວກໃດແດ່ ຄື

໑. ບໍລິສັດທີ່ໜັກໃນອາມິດ ບໍ່ໜັກໃນສັດທຳ
໒. ບໍລິສັດທີ່ໜັກໃນສັດທຳ ບໍ່ໜັກໃນອາມິດ

ບໍລິສັດທີ່ໜັກໃນອາມິດ ບໍ່ໜັກໃນສັດທຳ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸຕ່າງສັນເສີນຄຸນຂອງກັນ ແລະກັນຕໍ່ໜ້າຄະລືຫັດຜູ້ນຸ່ງຜ້າຂາວວ່າ "ພິກຂຸອົງນັ້ນ ເປັນອຸພະໂຕພາຄະວິມຸດ[໑] ພິກຂຸອົງນັ້ນ ເປັນປັນຍາວິມຸດ ພິກຂຸອົງນັ້ນ ເປັນກາຍະສັກຂີ ພິກຂຸອົງນັ້ນ ເປັນທິດຖິປັດຕະ ພິກຂຸອົງນັ້ນ ເປັນສັດທາວິມຸດ ພິກຂຸອົງນັ້ນເປັນທຳມານຸສາຣີ ພິກຂຸອົງນັ້ນ ເປັນສັດທານຸສາຣີ ພິກຂຸອົງນັ້ນມີສີນ ມີກັນລະຍານະທຳ ພິກຂຸອົງນັ້ນ ທຸສີນມີທຳຊົ່ວຊາມ" ພິກຂຸເຫຼົ່ານັ້ນ ໄດ້ລາບຍ້ອນເຫດນັ້ນ ທ່ານທັງຫຼາຍຄັນໄດ້ລາບນັ້ນແລ້ວ ຕ່າງຕິດໃຈ ລຸ້ມຫຼົງ ໝົກມຸ້ນ ບໍ່ເຫັນໂທດ ຂາດປັນຍາເປັນເຄື່ອງສະບັດອອກ ບໍຣິໂພກຢູ່ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ໜັກໃນອາມິດ ບໍ່ໜັກໃນສັດທຳ

ບໍລິສັດທີ່ໜັກໃນສັດທຳ ບໍ່ໜັກໃນອາມິດ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸບໍ່ກ່າວສັນເສີນຄຸນຂອງກັນ ແລະກັນຕໍ່ໜ້າຄະລືຫັດຜູ້ນຸ່ງຜ້າຂາວວ່າ "ພິກຂຸອົງນັ້ນ ເປັນອຸພະໂຕພາຄະວິມຸດ ພິກຂຸອົງນັ້ນ ເປັນປັນຍາວິມຸດ ພິກຂຸອົງນັ້ນ ເປັນກາຍະສັກຂີ ພິກຂຸອົງນັ້ນເປັນທິດຖິປັດຕະ ພິກຂຸອົງນັ້ນເປັນສັດທາວິມຸດ ພິກຂຸອົງນັ້ນເປັນທຳມານຸສາຣີ ພິກຂຸອົງນັ້ນເປັນສັດທານຸສາຣີ ພິກຂຸອົງນັ້ນມີສີນມີກັນລະຍານະທຳ ພິກຂຸອົງນັ້ນທຸສີນມີທຳຊົ່ວຊາມ "ພິກຂຸເຫຼົ່ານັ້ນໄດ້ລາບຍ້ອນເຫດນັ້ນ ທ່ານທັງຫຼາຍເມື່ອໄດ້ລາບນັ້ນ

ແລ້ວ ບໍ່ຕິດໃຈ ບໍ່ລຸ້ມຫຼົງ ບໍ່ໝົກມຸ້ນ ແນມເຫັນໂທດ ມີປັນຍາເປັນເຄື່ອງສະບັດອອກ ບໍຣິໂພກຢູ່ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ໜັກໃນສັດທຳ ບໍ່ໜັກໃນອາມິດ

ພິກຂຸທັງຫຼາຍ ບໍລິສັດ ໔ ຈຳພວກນີ້ແລ

ບັນດາບໍລິສັດ ໔ ຈຳພວກນີ້ບໍລິສັດທີ່ໜັກໃນສັດທຳ ບໍ່ໜັກໃນອາມິດເປັນເລີດ (໗)

[໕໐] ພິກຂຸທັງຫຼາຍ ບໍລິສັດ ໔ ຈຳພວກນີ້

ບໍລິສັດ ໔ ຈຳພວກໃດແດ່ ຄື

໑. ບໍລິສັດທີ່ບໍ່ຮຽບຮ້ອຍ ໔. ບໍລິສັດທີ່ຮຽບຮ້ອຍ

ບໍລິສັດທີ່ບໍ່ຮຽບຮ້ອຍ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ກຳທີ່ບໍ່ເປັນທຳເປັນໄປ ກຳທີ່ເປັນທຳບໍ່ເປັນໄປ ກຳທີ່ບໍ່ເປັນວິໄນເປັນໄປ ກຳທີ່ເປັນວິໄນບໍ່ເປັນໄປ ກຳທີ່ບໍ່ເປັນທຳຮຸ່ງເຮືອງ ກຳທີ່ເປັນທຳບໍ່ຮຸ່ງເຮືອງ ກຳທີ່ບໍ່ເປັນວິໄນຮຸ່ງເຮືອງ ກຳທີ່ເປັນວິໄນບໍ່ ຮຸ່ງເຮືອງ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ບໍ່ຮຽບຮ້ອຍ

ຍ້ອນບໍລິສັດທີ່ບໍ່ຮຽບຮ້ອຍ ກຳທີ່ບໍ່ເປັນທຳຈຶ່ງເປັນໄປ ກຳທີ່ເປັນທຳບໍ່ເປັນໄປ ກຳທີ່ບໍ່ເປັນວິໄນເປັນໄປ ກຳທີ່ເປັນວິໄນບໍ່ເປັນໄປ ກຳທີ່ບໍ່ເປັນທຳຮຸ່ງເຮືອງ ກຳທີ່ເປັນທຳບໍ່ຮຸ່ງເຮືອງ ກຳທີ່ບໍ່ເປັນວິໄນຮຸ່ງເຮືອງ ກຳທີ່ເປັນວິໄນບໍ່ຮຸ່ງເຮືອງ

ບໍລິສັດທີ່ຮຽບຮ້ອຍ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ກຳທີ່ເປັນທຳເປັນໄປ ກຳທີ່ບໍ່ເປັນທຳບໍ່ເປັນໄປ ກຳທີ່ເປັນວິໄນເປັນໄປ ກຳທີ່ບໍ່ເປັນວິໄນບໍ່ເປັນໄປ ກຳທີ່ເປັນທຳຮຸ່ງເຮືອງ ກຳທີ່ບໍ່ເປັນທຳບໍ່ຮຸ່ງເຮືອງ ກຳທີ່ເປັນວິໄນຮຸ່ງເຮືອງ ກຳທີ່ບໍ່ເປັນວິໄນບໍ່ຮຸ່ງເຮືອງ ບໍລິສັດນີ້ຮຽກວ່າ ບໍລິສັດທີ່ຮຽບຮ້ອຍ

ຍ້ອນບໍລິສັດທີ່ຮຽບຮ້ອຍ ກຳທີ່ເປັນທຳຈຶ່ງເປັນໄປ ກຳທີ່ບໍ່ເປັນທຳບໍ່ເປັນໄປ ກຳທີ່ເປັນວິໄນເປັນໄປ ກຳທີ່ບໍ່ເປັນວິໄນບໍ່ເປັນໄປ ກຳທີ່ເປັນທຳຮຸ່ງເຮືອງ ກຳທີ່ບໍ່ເປັນທຳບໍ່ຮຸ່ງເຮືອງ ກຳທີ່ເປັນວິໄນຮຸ່ງເຮືອງ ກຳທີ່ບໍ່ເປັນວິໄນບໍ່ຮຸ່ງເຮືອງ

ພິກຂຸທັງຫຼາຍ ບໍລິສັດ ໔ ຈຳພວກນີ້ແລ
ບັນດາບໍລິສັດ ໔ ຈຳພວກນີ້ບໍລິສັດທີ່ຮຽບຮ້ອຍເປັນເລີດ (໘)

[໕໑] ພິກຂຸທັງຫຼາຍ ບໍລິສັດ ໔ ຈຳພວກນີ້

ບໍລິສັດ ໒ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດທີ່ບໍ່ເປັນທຳ ໒. ບໍລິສັດທີ່ເປັນທຳ ໆລໆ

ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້ແລ
ບັນດາບໍລິສັດ ໒ ຈຳພວກນີ້ບໍລິສັດທີ່ເປັນທຳເປັນເລີດ (໙)

[໕໒] ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້

ບໍລິສັດ ໒ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດທີ່ເປັນອະທຳມະວາທີ (ກ່າວແຕ່ສິ່ງທີ່ບໍ່ເປັນທຳ)
໒. ບໍລິສັດທີ່ເປັນທຳມະວາທີ (ກ່າວແຕ່ສິ່ງທີ່ເປັນທຳ)

ບໍລິສັດທີ່ເປັນອະທຳມະວາທີ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ມີພວກພິກຂຸໄດ້ຮັບອະທິກອນ ທີ່ເປັນທຳບໍເປັນທຳກໍຕາມ ເມື່ອໄດ້ຮັບອະທິກອນນັ້ນແລ້ວ ບໍ່ປະກາດໃຫ້ຍອມຮັບກັນ ແລະບໍ່ເຂົ້າຮ່ວມການຍອມຮັບ ບໍ່ຍອມໃຫ້ພິຈາລະນາອະທິກອນ ແລະບໍ່ເຂົ້າຮ່ວມການພິຈາລະນາອະທິກອນ ພິກຂຸເຫຼົ່ານັ້ນມີຄວາມຕົກລົງກັນບໍ່ໄດ້ເປັນແຮງໜຸນ ມີການບໍ່ເພ່ງໂທດຕົນເປັນແຮງໜຸນ ຄິດແຕ່ຈະດື້ດຶງບໍ່ຍອມຮັບ ກ່າວດ້ວຍຄວາມຍຶດໝັ້ນຖືໝັ້ນອະທິກອນນັ້ນວ່າ "ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍລິສັດນີ້ຮຽກວ່າ ບໍລິສັດທີ່ເປັນອະທຳມະວາທີ

ບໍລິສັດທີ່ເປັນທຳມະວາທີ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸໄດ້ຮັບອະທິກອນທີ່ເປັນທຳບໍເປັນທຳກໍຕາມ ເມື່ອໄດ້ຮັບອະທິກອນນັ້ນແລ້ວ ປະກາດໃຫ້ຍອມຮັບກັນ ແລະເຂົ້າຮ່ວມການຍອມຮັບ ຍອມໃຫ້ພິຈາລະນາອະທິກອນ ແລະເຂົ້າຮ່ວມການພິຈາລະນາອະທິກອນ ພິກຂຸເຫຼົ່ານັ້ນມີການຕົກລົງກັນໄດ້ເປັນແຮງໜຸນ ມີການເພ່ງໂທດຕົນເປັນແຮງໜຸນ ຄິດແຕ່ຈະຍອມຮັບ ບໍ່ກ່າວດ້ວຍຄວາມຍຶດໝັ້ນຖືໝັ້ນອະທິກອນນັ້ນວ່າ "ນີ້ທີ່ນັ້ນຈິງແນວອື່ນບໍ່ຈິງ" ບໍລິສັດນີ້ຮຽກວ່າ ບໍລິສັດທີ່ເປັນທຳມະວາທີ

ພິກຂຸທັງຫຼາຍ ບໍລິສັດ ໒ ຈຳພວກນີ້ແລ
ບັນດາບໍລິສັດ ໒ ຈຳພວກນີ້ບໍລິສັດທີ່ເປັນທຳມະວາທີເປັນເລີດ (໑໐)

**ປະຣິສະວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ຄື

໑. ອຸດຕານະສູດ
໒. ອັກຄະວະຕີສູດ
໓. ກະສະຕະສູດ
໗. ອາມິດສູດ
໕. ອະທຳມະສູດ
໔. ວັກຄະສູດ
໔. ອະຣິຍະສູດ
໖. ອຸກກາຈິຕະສູດ
໙. ວິສະມະສູດ
໑໐. ທຳມິຍະສູດ

**ປະຖົມປັນນາດ ຈົບບໍລິບູນ**

# ๔. ທຸຕິຍະປັນນາດ

## ໑. ປຸກຄະລະວັກ

### ໝວດວ່າດ້ວຍບຸກຄົນ

[໕໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ
໔. ພຣະເຈົ້າຈັກກະພັດ

ບຸກຄົນ ໔ ຈຳພວກນີ້ແລ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ (໑)

[໕໔] ບຸກຄົນ ໔ ຈຳພວກນີ້ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເປັນອັດສະຣິຍະມະນຸດ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ
໔. ພຣະເຈົ້າຈັກກະພັດ

ບຸກຄົນ ໔ ຈຳພວກນີ້ແລ ເມື່ອເກີດຂຶ້ນໃນໂລກ ຍ່ອມເກີດຂຶ້ນເປັນອັດສະຣິຍະມະນຸດ (໔)

[໕໕] ການຕາຍຂອງບຸກຄົນ ໔ ຈຳພວກນີ້ ເປັນເຫດໃຫ້ຄົນຈຳນວນຫຼາຍພອຍເດືອດຮ້ອນໄປນຳ

ການຕາຍຂອງບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ
໔. ພຣະເຈົ້າຈັກກະພັດ

ການຕາຍຂອງບຸກຄົນ ໔ ຈຳພວກນີ້ແລ ເປັນເຫດໃຫ້ຄົນຈຳນວນຫຼາຍ ພອຍເດືອດຮ້ອນໄປນຳ (໓)

[໕໖] ຖູປາຣະຫະບຸກຄົນ ໔ ຈຳພວກນີ້

ຖູປາຣະຫະບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ
໔. ພຣະເຈົ້າຈັກກະພັດ

ຖູປາຣະຫະບຸກຄົນ ໔ ຈຳພວກນີ້ແລ (໔)

[໕໗] ພຣະພຸດທະເຈົ້າ ໔ ຈຳພວກນີ້

ພຣະພຸດທະເຈົ້າ ໔ ຈຳພວກ ພວກໃດແດ່ ຄື

໑. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ
໔. ພຣະປັດເຈກພຸດທະເຈົ້າ

ພຣະພຸດທະເຈົ້າ ໔ ຈຳພວກນີ້ແລ (໕)

[໕໘] ສັດວິເສດ ໔ ຈຳພວກນີ້ເມື່ອຟ້າຜ່າຍ່ອມບໍ່ສະດຸ້ງ

ສັດວິເສດ ໔ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຂີນາສົບ
໔. ຊ້າງອາຊາໄນ

ສັດວິເສດ ໔ ຈຳພວກນີ້ແລ ເມື່ອຟ້າຜ່າຍ່ອມບໍ່ສະດຸ້ງ (໖)

[໕໙] ສັດວິເສດ ໔ ຈຳພວກນີ້ເມື່ອຟ້າຜ່າຍ່ອມບໍ່ສະດຸ້ງ

ສັດວິເສດ ໔ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຂີນາສົບ
໔. ມ້າອາຊາໄນ

ສັດວິເສດ ໔ ຈຳພວກນີ້ແລ ເມື່ອຟ້າຜ່າຍ່ອມບໍ່ສະດຸ້ງ (໗)

[໖໐] ສັດວິເສດ ໒ ຈຳພວກນີ້ເມື່ອຟ້າຜ່າຍ່ອມບໍ່ສະດຸ້ງ

ສັດວິເສດ ໒ ຈຳພວກ ພວກໃດແດ່ ຄື

໑. ພິກຂຸຂີນາສົບ
໒. ພະຍາຮາດຊະສີ

ສັດວິເສດ ໒ ຈຳພວກນີ້ແລ ເມື່ອຟ້າຜ່າຍ່ອມບໍ່ສະດຸ້ງ (໗)

## ເຫດທີ່ກິນນະຣະບໍ່ເວົ້າພາສາຄົນ

[໖໑] ກິນນະຣະ⁹ເຫັນອຳນາດປະໂຫຍດ ໒ ປະການນີ້ຈຶ່ງບໍ່ເວົ້າພາສາຄົນ

ອຳນາດປະໂຫຍດ ໒ ປະການ ອັນໃດແດ່ ຄື

໑. ບໍ່ເວົ້າຕົວະ
໒. ບໍ່ກ່າວຕູ່ຜູ້ອື່ນດ້ວຍເລື້ອງບໍ່ຈິງ

ກິນນະຣະເຫັນອຳນາດປະໂຫຍດ ໒ ປະການນີ້ແລ ຈຶ່ງບໍ່ເວົ້າພາສາຄົນ (໙)

## ສິ່ງທີ່ມາຕຸຄາມບໍ່ຮູ້ຈັກອີ່ມ

[໖໒] ມາຕຸຄາມ (ສະຕີ) ບໍ່ຮູ້ຈັກອີ່ມ ບໍ່ຣະອາຕໍ່ທຳ ໒ ປະການຈົນວ່າຕາຍ

ທຳ ໒ ປະການ ອັນໃດແດ່ ຄື

໑. ການເສບເມຖຸນທຳ
໒. ການເກີດລູກ

ມາຕຸຄາມບໍ່ອີ່ມ ບໍ່ຣະອາຕໍ່ທຳ ໒ ປະການນີ້ແລ ຈົນວ່າຕາຍ (໑໐)

## ການຢູ່ຮ່ວມກັນ ໒ ແບບ

[໖໓] ພິກຂຸທັງຫຼາຍ ເຮົາຈັກສະແດງການຢູ່ຮ່ວມກັນຂອງອະສັດຕະບຸຣຸດ ແລະການຢູ່ຮ່ວມກັນຂອງສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ການຢູ່ຮ່ວມກັນຂອງອະສັດຕະບຸຣຸດ ແລະອະສັດຕະບຸຣຸດຢູ່ຮ່ວມກັນ ເປັນແນວໃດ?

ຄື ພິກຂຸຜູ້ເປັນເຖຣະໃນທຳວິໄນນີ້ມີຄວາມຄິດແນວນີ້ວ່າ "ເຖິງພຣະເຖຣະກໍບໍ່ຄວນວ່າກ່າວເຮົາ ເຖິງພຣະມັດຊິມະກໍບໍ່ຄວນວ່າກ່າວເຮົາ ເຖິງພຣະນະວະກະກໍບໍ່ຄວນວ່າກ່າວເຮົາ ໂຕເຮົາກໍບໍ່ຄວນວ່າກ່າວພຣະເຖຣະ ພຣະມັດຊິມະ ແລະພຣະນະວະກະ ເຖິງຫາກພຣະເຖຣະຈະວ່າກ່າວເຮົາ ກໍປາຖະໜາສິ່ງທີ່ບໍ່ເກື້ອກູນວ່າກ່າວເຮົາ ບໍ່ແມ່ນປາຖະໜາສິ່ງທີ່ເກື້ອກູນວ່າກ່າວເຮົາ ເຮົາຈະເວົ້າກັບເຂົາວ່າ "ບໍ່ເຮັດດອກ" ເຖິງເຮົາກໍຈະບຽດບຽນເຂົາ ແມ່ນເຫັນຢູ່ກໍຈະບໍ່ເຮັດນຳ ຄຳແນະນຳຂອງເຂົາ ຫາກພຣະມັດຊິມະຈະວ່າກ່າວເຮົາ ฯลฯ ຫາກພຣະນະວະກະຈະວ່າກ່າວເຮົາ ກໍປາຖະໜາສິ່ງທີ່ບໍ່ເກື້ອກູນວ່າກ່າວເຮົາ ບໍ່ແມ່ນປາຖະໜາສິ່ງທີ່ເກື້ອກູນວ່າກ່າວເຮົາ ເຮົາຈະເວົ້າກັບເຂົາວ່າ "ບໍ່ເຮັດດອກ" ເຖິງເຮົາກໍຈະບຽດບຽນເຂົາ ແມ່ນເຫັນຢູ່ກໍຈະບໍ່ເຮັດຕາມຄຳແນະນຳຂອງເຂົາ"

ແມ່ນພຣະມັດຊິມະກໍມີຄວາມຄິດແນວນີ້ວ່າ ฯลฯ ແມ່ນພຣະນະວະກະກໍມີຄວາມຄິດແນວນີ້ວ່າ "ເຖິງພຣະເຖຣະກໍບໍ່ຄວນວ່າກ່າວເຮົາ ເຖິງພຣະມັດຊິມະກໍບໍ່ຄວນວ່າກ່າວເຮົາ ເຖິງພຣະນະວະກະກໍບໍ່ຄວນວ່າກ່າວເຮົາ ໂຕເຮົາກໍບໍ່ຄວນວ່າກ່າວພຣະເຖຣະ ພຣະມັດຊິມະ ແລະພຣະນະວະກະ

ເຖິງຫາກພຣະເຖຣະຈະວ່າກ່າວເຮົາ ກໍປາຖະໜາສິ່ງທີ່ບໍ່ເກື້ອກູນວ່າກ່າວເຮົາ ບໍ່ແມ່ນປາຖະໜາສິ່ງທີ່ເກື້ອກູນວ່າກ່າວເຮົາ ເຮົາຈະເວົ້າກັບທ່ານວ່າ "ບໍ່ເຮັດດອກ" ເຖິງເຮົາກໍຈະບຽດບຽນທ່ານ ແມ່ນເຫັນຢູ່ກໍຈະບໍ່ເຮັດຕາມຄຳສອນຂອງທ່ານ ຫາກພຣະມັດຊິມະຈະວ່າກ່າວເຮົາ ฯลฯ ຫາກພຣະນະວະກະຈະວ່າກ່າວເຮົາ ກໍປາຖະໜາສິ່ງທີ່ບໍ່ເກື້ອກູນວ່າກ່າວເຮົາ ບໍ່ແມ່ນປາຖະໜາສິ່ງທີ່ເກື້ອກູນວ່າກ່າວເຮົາ ເຮົາຈະເວົ້າກັບທ່ານວ່າ "ບໍ່ເຮັດດອກ" ເຖິງເຮົາກໍຈະບຽດບຽນທ່ານ ແມ່ນເຫັນຢູ່ກໍຈະບໍ່ເຮັດຕາມຄຳສອນຂອງທ່ານ"

ການຢູ່ຮ່ວມກັນຂອງອະສັດຕະບຸຣຸດ ແລະອະສັດຕະບຸຣຸດຢູ່ຮ່ວມກັນເປັນແນວນີ້ແລ

ການຢູ່ຮ່ວມກັນຂອງສັດຕະບຸຣຸດ ແລະສັດຕະບຸຣຸດຢູ່ຮ່ວມກັນ ເປັນແນວໃດ?

ຄື ພິກຂຸຜູ້ເປັນເຖຣະໃນທຳວິໄນນີ້ມີຄວາມຄິດແນວນີ້ວ່າ "ເຖິງພຣະເຖຣະກໍຄວນວ່າກ່າວເຮົາ ເຖິງພຣະມັດຊິມະກໍຄວນວ່າກ່າວເຮົາ ເຖິງພຣະນະວະກະກໍຄວນວ່າກ່າວເຮົາ ໂຕເຮົາກໍຄວນວ່າກ່າວທັງພຣະເຖຣະ ພຣະມັດຊິມະ ແລະພຣະນະວະກະ ເຖິງຫາກພຣະເຖຣະຈະວ່າກ່າວເຮົາ ກໍປາຖະໜາສິ່ງທີ່ເກື້ອກູນວ່າກ່າວເຮົາ ບໍ່ແມ່ນປາຖະໜາສິ່ງທີ່ບໍ່ເກື້ອກູນວ່າກ່າວເຮົາ ເຮົາຈະເວົ້າກັບທ່ານວ່າ "ດີແລ້ວ" ເຮົາຈະບໍ່ບຽດບຽນທ່ານ ແມ່ນເຫັນຢູ່ກໍຈະເຮັດນຳຄຳແນະນຳຂອງທ່ານ ຫາກພຣະມັດຊິມະຈະວ່າກ່າວເຮົາ ฯลฯ ຫາກພຣະນະວະກະຈະວ່າກ່າວເຮົາ ກໍປາຖະໜາສິ່ງທີ່ເກື້ອກູນວ່າກ່າວເຮົາ ບໍ່ແມ່ນປາຖະໜາສິ່ງທີ່ບໍ່ເກື້ອກູນວ່າກ່າວເຮົາ ເຮົາຈະເວົ້າກັບທ່ານວ່າ "ດີແລ້ວ" ເຮົາຈະບໍ່ບຽດບຽນທ່ານ ແມ່ນເຫັນຢູ່ກໍຈະເຮັດຕາມຄຳແນະນຳຂອງທ່ານ"

ແມ່ນພຣະມັດຊິມະກໍມີຄວາມຄິດແບບນີ້ວ່າ ຯລຯ ແມ່ນພຣະນະວະກະກໍມີຄວາມຄິດແບບນີ້ວ່າ "ເຖິງພຣະເຖຣະກໍຄວນວ່າກ່າວເຮົາ ເຖິງພຣະມັດຊິມະກໍຄວນວ່າກ່າວເຮົາ ເຖິງພຣະນະວະກະກໍຄວນວ່າກ່າວເຮົາ ໂຕເຮົາກໍຄວນວ່າກ່າວທັງພຣະເຖຣະ ພຣະມັດຊິມະ ແລະພຣະນະວະກະ ເຖິງຫາກພຣະເຖຣະຈະວ່າກ່າວເຮົາ ກໍປາຖະໜາສິ່ງທີ່ເກື້ອກູນວ່າກ່າວເຮົາ ບໍ່ແມ່ນປາຖະໜາສິ່ງທີ່ບໍ່ເກື້ອກູນວ່າກ່າວເຮົາ ເຮົາຈະເວົ້າກັບທ່ານວ່າ "ດີແລ້ວ" ເຮົາຈະບໍ່ບຽດບຽນທ່ານ ແມ່ນເຫັນຢູ່ກໍຈະເຮັດຕາມຄຳສອນຂອງທ່ານ ຫາກພຣະມັດຊິມະຈະວ່າກ່າວເຮົາ ຯລຯ ຫາກພຣະນະວະກະຈະວ່າກ່າວເຮົາ ກໍປາຖະໜາສິ່ງທີ່ເກື້ອກູນວ່າກ່າວເຮົາ ບໍ່ແມ່ນປາຖະໜາສິ່ງທີ່ບໍ່ເກື້ອກູນວ່າກ່າວເຮົາ ເຮົາຈະເວົ້າກັບທ່ານວ່າ "ດີແລ້ວ" ເຮົາຈະບໍ່ບຽດບຽນທ່ານ ແມ່ນເຫັນຢູ່ກໍຈະເຮັດນຳຄຳສອນຂອງທ່ານ" ການຢູ່ຮ່ວມກັນຂອງສັດຕະບຸຣຸດ ແລະສັດຕະບຸຣຸດຢູ່ຮ່ວມກັນເປັນແບບນີ້ແລ (໑໑)

## ເຫດໃຫ້ອະທິກອນຍືດເຍື້ອແລະບໍ່ຍືດເຍື້ອ

[໖໔] ໃນອະທິກອນໃດ ການໂຕ້ຕອບກັນດ້ວຍວາຈາ ຄວາມແຂ່ງດີຍ້ອນທິດຖິ ຄວາມມີໃຈອາຄາດ ຄວາມບໍ່ພໍໃຈ ຄວາມຂຶ່ງຄຽດ ຍັງບໍ່ສະງົບລະງັບພາຍໃນ ໃນອະທິກອນນັ້ນຈະມີຜົນນຳມາດັ່ງນີ້ຄື ອະທິກອນນັ້ນຈັກເປັນໄປເພື່ອຄວາມຍືດເຍື້ອ ເພື່ອຄວາມຮຸນແຮງ ເພື່ອຄວາມຮ້າຍແຮງ໌ ແລະພິກຂຸທັງຫຼາຍຈັກຢູ່ບໍ່ຜາສຸກ

ພິກຂຸທັງຫຼາຍ ສ່ວນໃນອະທິກອນໃດ ການໂຕ້ຕອບດ້ວຍວາຈາ ຄວາມແຂ່ງດີຍ້ອນທິດຖິ ຄວາມມີໃຈອາຄາດ ຄວາມບໍ່ພໍໃຈ ຄວາມຂຶ່ງຄຽດ ສະງົບລະງັບໄປນຳດີພາຍໃນ ໃນອະທິກອນນັ້ນຈະມີຜົນນຳມາ ດັ່ງນີ້ຄື ອະທິກອນນັ້ນຈັກບໍ່ເປັນໄປເພື່ອຄວາມຍືດເຍື້ອ ເພື່ອຄວາມຮຸນແຮງ ເພື່ອຄວາມຮ້າຍແຮງ ແລະພິກຂຸທັງຫຼາຍຈັກຢູ່ຜາສຸກ (໑໔)

**ປຸກຄະລະວັກທີ ໑ ຈົບ**

# ໔. ສຸຂະວັກ

## ໝວດວ່າດ້ວຍສຸກ

[໖໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສຸກ ໔ ຢ່າງນີ້

ສຸກ ໔ ຢ່າງ ອັນໃດແດ່ ຄື

໑. ສຸກຂອງຄະລິຫັດ ໔. ສຸກຂອງບັນພະຊິດ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ສຸກຂອງບັນພະຊິດເປັນເລີດ (໑)

[໖໖] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ກາມສຸກ ໒. ເນກຂໍາມະສຸກ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ເນກຂໍາມະສຸກເປັນເລີດ (໒)

[໖໗] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທີ່ມີອຸປະທິ ໒. ສຸກທີ່ບໍ່ມີອຸປະທິ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ສຸກທີ່ບໍ່ມີອຸປະທິເປັນເລີດ (໓)

[໖໘] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທີ່ມີອາສະວະ ໒. ສຸກທີ່ບໍ່ມີອາສະວະ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ສຸກທີ່ບໍ່ມີອາສະວະເປັນເລີດ (໔)

[໖໙] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທີ່ອີງອາມິດ ໒. ສຸກທີ່ບໍ່ອີງອາມິດ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ສຸກທີ່ບໍ່ອີງອາມິດເປັນເລີດ (໕)

[໗໐] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກຂອງພຣະອະຣິຍະ ໒. ສຸກຂອງຜູ້ບໍ່ແມ່ນພຣະອະຣິຍະ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ສຸກຂອງພຣະອະຣິຍະເປັນເລີດ (໖)

[ກ໑] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທາງກາຍ ໒. ສຸກທາງໃຈ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ ສຸກທາງໃຈເປັນເລີດ (໗)

[ກ໒] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທີ່ມີປີຕິ ໒. ສຸກທີ່ບໍ່ມີປີຕິ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ສຸກທີ່ບໍ່ມີປີຕິເປັນເລີດ (໘)

[ກ໓] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທີ່ເກີດຈາກຄວາມຍິນດີ ໒. ສຸກທີ່ເກີດຈາກອຸເປກຂາ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ສຸກທີ່ເກີດຈາກອຸເປກຂາເປັນເລີດ (໙)

[ກ໔] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສະມາທິສຸກ ໒. ອະສະມາທິສຸກ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ສະມາທິສຸກເປັນເລີດ (໑໐)

[ກ໕] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທີ່ເກີດຈາກຊານມີປີຕິເປັນອາລົມ
໒. ສຸກທີ່ເກີດຈາກຊານບໍ່ມີປີຕິເປັນອາລົມ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ ສຸກທີ່ເກີດຈາກຊານ ບໍ່ມີປີຕິເປັນອາລົມເປັນເລີດ (໑໑)

[໗໖] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທີ່ເກີດຈາກຊານມີຄວາມຍິນດີເປັນອາລົມ
໒. ສຸກທີ່ເກີດຈາກຊານມີອຸເປກຂາເປັນອາລົມ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ ສຸກທີ່ເກີດຈາກຊານ ມີອຸເປກຂາເປັນອາລົມເປັນເລີດ (໑໒)

[໗໗] ສຸກ ໒ ຢ່າງນີ້

ສຸກ ໒ ຢ່າງ ອັນໃດແດ່ ຄື

໑. ສຸກທີ່ມີຮູບຊານເປັນອາລົມ
໒. ສຸກທີ່ມີອະຮູບປະຊານເປັນອາລົມ

ສຸກ ໒ ຢ່າງນີ້ແລ ບັນດາສຸກ ໒ ຢ່າງນີ້ ສຸກທີ່ມີອະຮູບປະຊານເປັນອາລົມເປັນເລີດ (໑໓)

**ສຸຂະວັກທີ ໒ ຈົບ**

# ໓. ສະນິມິດຕະວັກ

## ໝວດວ່າດ້ວຍເຫດແຫ່ງບາບອະກຸສົນ

[໗໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳທີ່ເປັນບາບອະກຸສົນ ມີນິມິດຈຶ່ງເກີດຂຶ້ນ ບໍ່ມີນິມິດ ບໍ່ເກີດຂຶ້ນ ຍ້ອນລະນິມິດນັ້ນ ໄດ້ແນວນີ້ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນຈຶ່ງບໍ່ມີ (໑)

[໗໙] ທຳທີ່ເປັນບາບອະກຸສົນ ມີນິທານ ຈຶ່ງເກີດຂຶ້ນ ບໍ່ມີນິທານ ບໍ່ເກີດຂຶ້ນ ຍ້ອນລະນິທານນັ້ນໄດ້ຢ່າງນີ້ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນຈຶ່ງບໍ່ມີ (໒)

[໗໐] ທຳທີ່ເປັນບາບອະກຸສົນ ມີເຫດຈຶ່ງເກີດຂຶ້ນ ບໍ່ມີເຫດ ບໍ່ເກີດຂຶ້ນ ຍ້ອນລະເຫດນັ້ນໄດ້ແນວນີ້ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນຈຶ່ງບໍ່ມີ (໓)

[໗໑] ທຳທີ່ເປັນບາບອະກຸສົນ ມີສັງຂານຈຶ່ງເກີດຂຶ້ນ ບໍ່ມີສັງຂານ ບໍ່ເກີດຂຶ້ນ ຍ້ອນລະສັງຂານເຫຼົ່ານັ້ນ ໄດ້ແນວນີ້ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນຈຶ່ງບໍ່ມີ (໔)

[໗໒] ທຳທີ່ເປັນບາບອະກຸສົນ ມີປັດໄຈຈຶ່ງເກີດຂຶ້ນ ບໍ່ມີປັດໄຈ ບໍ່ເກີດຂຶ້ນ ຍ້ອນລະປັດໄຈນັ້ນໄດ້ແນວນີ້ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນ ຈຶ່ງບໍ່ມີ (໕)

[໗໓] ທຳທີ່ເປັນບາບອະກຸສົນ ມີຮູບຈຶ່ງເກີດຂຶ້ນ ບໍ່ມີຮູບ ບໍ່ເກີດຂຶ້ນ ຍ້ອນລະຮູບນັ້ນໄດ້ແນວນີ້ທີ່ເປັນບາບອະກຸສົນເຫຼົ່ານັ້ນ ຈຶ່ງບໍ່ມີ (໖)

[໗໔] ທຳທີ່ເປັນບາບອະກຸສົນມີເວທະນາຈຶ່ງເກີດຂຶ້ນ ບໍ່ມີເວທະນາ ບໍ່ເກີດຂຶ້ນ ຍ້ອນລະເວທະນານັ້ນໄດ້ແນວນີ້ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນ ຈຶ່ງບໍ່ມີ (໗)

[໗໕] ທຳທີ່ເປັນບາບອະກຸສົນ ມີສັນຍາຈຶ່ງເກີດຂຶ້ນ ບໍ່ມີສັນຍາ ບໍ່ເກີດຂຶ້ນ ຍ້ອນລະສັນຍານັ້ນໄດ້ແນວນີ້ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນ ຈຶ່ງບໍ່ມີ (໘)

[໗໖] ທຳທີ່ເປັນບາບອະກຸສົນ ມີວິນຍານຈຶ່ງເກີດຂຶ້ນ ບໍ່ມີວິນຍານ ບໍ່ເກີດຂຶ້ນ ຍ້ອນລະວິນຍານນັ້ນໄດ້ແນວນີ້ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນ ຈຶ່ງບໍ່ມີ (໙)

[໗໗] ທຳທີ່ເປັນບາບອະກຸສົນ ມີສັງຂະຕະທຳ (ທຳທີ່ຖືກປັດໄຈປຸງແຕ່ງ) ເປັນອາລົມຈຶ່ງເກີດຂຶ້ນ ບໍ່ມີສັງຂະຕະທຳເປັນອາລົມ ບໍ່ເກີດຂຶ້ນ ຍ້ອນລະສັງຂະຕະທຳນັ້ນ ເສຍໄດ້ຢ່າງນີ້ທຳທີ່ເປັນບາບອະກຸສົນເຫຼົ່າ ນັ້ນຈຶ່ງບໍ່ມີ (໑໐)

**ສະນິມິດຕະວັກທີ ໓ ຈົບ**

# ໔. ທຳມະວັກ

## ໝວດວ່າດ້ວຍທຳ

[໗໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳ ໘ ຢ່າງນີ້

ທຳ ໘ ຢ່າງອັນໃດແດ່ ຄື

໑. ເຈໂຕວິມຸດຕິ (ຄວາມລຸດພົ້ນແຫ່ງຈິດ)

໒. ປັນຍາວິມຸດຕິ (ຄວາມລຸດພົ້ນດ້ວຍປັນຍາ)

ທຳ ໒ ຢ່າງນີ້ແລ (໑)

[໖໙] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມພຽນ ໒. ຄວາມບໍ່ຟຸ້ງຊ່ານ

ທຳ ໒ ຢ່າງນີ້ແລ (໒)

[໗໐] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ນາມ ໒. ຮູບ

ທຳ ໒ ຢ່າງນີ້ແລ (໓)

[໗໑] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ວິດຊາ (ຄວາມຮູ້ແຈ້ງ) ໒. ວິມຸດຕິ (ຄວາມລຸດພົ້ນ)

ທຳ ໒ ຢ່າງນີ້ແລ (໔)

[໗໒] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ພະວະທິດຖິ ໒. ວິພະວະທິດຖິ

ທຳ ໒ ຢ່າງນີ້ແລ (໕)

[໗໓] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ອະຫິຣິກະ (ຄວາມບໍ່ອາຍບາບ) ໒. ອະໂນດຕັບປະ (ຄວາມບໍ່ຢ້ານບາບ)

ທຳ ໒ ຢ່າງນີ້ແລ (໖)

[໗໔] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຫິຣິ (ຄວາມອາຍບາບ) ໒. ໂອດຕັບປະ (ຄວາມຢ້ານບາບ)

ທຳ ໒ ຢ່າງນີ້ແລ (໗)

[໗໕] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມເປັນຜູ້ວ່າຍາກ ໒. ຄວາມມີປາປະມິດ

ທຳ ໒ ຢ່າງນີ້ແລ (໘)

[໗໖] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມເປັນຜູ້ວ່າງ່າຍ ໒. ຄວາມມີກັນລະຍານະມິດ

ທຳ ໒ ຢ່າງນີ້ແລ (໙)

[໗໗] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມເປັນຜູ້ສະຫຼາດໃນທາດ
໒. ຄວາມເປັນຜູ້ສະຫຼາດໃນມະນະສິການ

ທຳ ໒ ຢ່າງນີ້ແລ (໑໐)

[໗໘] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໓. ຄວາມເປັນຜູ້ສະຫຼາດໃນອາບັດ
໔. ຄວາມເປັນຜູ້ສະຫຼາດໃນການອອກຈາກອາບັດ

ພິກຂຸທັງຫຼາຍ ທຳ ໔ ຢ່າງນີ້ແລ (໑໑)

**ທຳມະວັກທີ ໔ ຈົບ**

# ໕. ພາລະວັກ

## ໝວດວ່າດ້ວຍຄົນພານແລະບັນດິດ

[໙໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄົນພານ ໒ ຈຳພວກນີ້

ຄົນພານ ໒ ຈຳພວກໃດແດ່ ຄື

໑. ຄົນທີ່ເຮັດໜ້າທີ່ທີ່ຍັງມາບໍ່ເຖິງ ໒. ຄົນທີ່ບໍ່ເຮັດໜ້າທີ່ເຊິ່ງມາເຖິງແລ້ວ

ຄົນພານ ໒ ຈຳພວກນີ້ແລ (໑)

[໑໐໐] ບັນດິດ ໒ ຈຳພວກນີ້

ບັນດິດ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ບໍ່ເຮັດໜ້າທີ່ທີ່ຍັງມາບໍ່ເຖິງ ໒. ຄົນທີ່ເຮັດໜ້າທີ່ເຊິ່ງມາເຖິງແລ້ວ

ບັນດິດ ໒ ຈຳພວກນີ້ແລ (໒)

[໑໐໑] ຄົນພານ ໒ ຈຳພວກນີ້

ຄົນພານ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າຄວນໃນຂອງທີ່ບໍ່ຄວນ
໒. ຄົນທີ່ເຂົ້າໃຈວ່າບໍ່ຄວນໃນຂອງທີ່ຄວນ

ຄົນພານ ໒ ຈຳພວກນີ້ແລ (໓)

[໑໐໒] ບັນດິດ ໒ ຈຳພວກນີ້

ບັນດິດ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າບໍ່ຄວນໃນຂອງທີ່ບໍ່ຄວນ
໒. ຄົນທີ່ເຂົ້າໃຈວ່າຄວນໃນຂອງທີ່ຄວນ

ບັນດິດ ໒ ຈຳພວກນີ້ແລ (໒)

[໑໐໓] ຄົນພານ ໒ ຈຳພວກນີ້

ຄົນພານ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າເປັນອາບັດໃນຂໍ້ທີ່ບໍ່ເປັນອາບັດ
໒. ຄົນທີ່ເຂົ້າໃຈວ່າບໍ່ເປັນອາບັດໃນຂໍ້ທີ່ເປັນອາບັດ

ຄົນພານ ໒ ຈຳພວກນີ້ແລ (໕)

[໑໐໔] ບັນດິດ ໒ ຈຳພວກນີ້

ບັນດິດ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າບໍ່ເປັນອາບັດໃນຂໍ້ທີ່ບໍ່ເປັນອາບັດ
໒. ຄົນທີ່ເຂົ້າໃຈວ່າເປັນອາບັດໃນຂໍ້ທີ່ເປັນອາບັດ

ບັນດິດ ໒ ຈຳພວກນີ້ແລ (໖)

[໑໐໕] ຄົນພານ ໒ ຈຳພວກນີ້

ຄົນພານ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າເປັນທຳໃນຂໍ້ທີ່ບໍ່ເປັນທຳ
໒. ຄົນທີ່ເຂົ້າໃຈວ່າບໍ່ເປັນທຳໃນຂໍ້ທີ່ເປັນທຳ

ຄົນພານ ໒ ຈຳພວກນີ້ແລ (໗)

[໑໐໖] ບັນດິດ ໒ ຈຳພວກນີ້

ບັນດິດ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າເປັນທຳໃນຂໍ້ທີ່ເປັນທຳ

໒. ຄົນທີ່ເຂົ້າໃຈວ່າບໍ່ເປັນທຳໃນຂໍ້ທີ່ບໍ່ເປັນທຳ

ບັນດິດ ໒ ຈຳພວກນີ້ແລ (໘)

[໑໐໗] ຄົນພານ ໒ ຈຳພວກນີ້

ຄົນພານ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າເປັນວິໄນໃນຂໍ້ທີ່ບໍ່ເປັນວິໄນ
໒. ຄົນທີ່ເຂົ້າໃຈວ່າບໍ່ເປັນວິໄນໃນຂໍ້ທີ່ເປັນວິໄນ

ຄົນພານ ໒ ຈຳພວກນີ້ແລ (໙)

[໑໐໘] ບັນດິດ ໒ ຈຳພວກນີ້

ບັນດິດ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າບໍ່ເປັນວິໄນໃນຂໍ້ທີ່ບໍ່ເປັນວິໄນ
໒. ຄົນທີ່ເຂົ້າໃຈວ່າເປັນວິໄນໃນຂໍ້ທີ່ເປັນວິໄນ

ບັນດິດ ໒ ຈຳພວກນີ້ແລ (໑໐)

[໑໐໙] ອາສະວະ໑ ຍ່ອມຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ລັງກຽດສິ່ງທີ່ບໍ່ໜ້າລັງກຽດ
໒. ຄົນທີ່ບໍ່ລັງກຽດສິ່ງທີ່ໜ້າລັງກຽດ

ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໑)

[໑໑໐] ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ບໍ່ລັງກຽດສິ່ງທີ່ບໍ່ໜ້າລັງກຽດ
໒. ຄົນທີ່ລັງກຽດສິ່ງທີ່ໜ້າລັງກຽດ

ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໒)

[໑໑໑] ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າຄວນໃນຂອງທີ່ບໍ່ຄວນ
໒. ຄົນທີ່ເຂົ້າໃຈວ່າບໍ່ຄວນໃນຂອງທີ່ຄວນ

ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໓)

[໑໑໒] ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າບໍ່ຄວນໃນຂອງທີ່ບໍ່ຄວນ
໒. ຄົນທີ່ເຂົ້າໃຈວ່າຄວນໃນຂອງທີ່ຄວນ

ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໔)

[໑໑໓] ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າບໍ່ເປັນອາບັດໃນຂໍ້ທີ່ເປັນອາບັດ
໒. ຄົນທີ່ເຂົ້າໃຈວ່າເປັນອາບັດໃນຂໍ້ທີ່ບໍ່ເປັນອາບັດ

ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໕)

[໑໑໔] ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າເປັນອາບັດໃນຂໍ້ທີ່ເປັນອາບັດ
໒. ຄົນທີ່ເຂົ້າໃຈວ່າບໍ່ເປັນອາບັດໃນຂໍ້ທີ່ບໍ່ເປັນອາບັດ

ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໖)

[໑໑໕] ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າເປັນທຳໃນຂໍ້ທີ່ບໍ່ເປັນທຳ
໒. ຄົນທີ່ເຂົ້າໃຈວ່າບໍ່ເປັນທຳໃນຂໍ້ທີ່ເປັນທຳ

ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໗)

[໑໑໖] ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າເປັນທຳໃນຂໍ້ທີ່ເປັນທຳ
໒. ຄົນທີ່ເຂົ້າໃຈວ່າບໍ່ເປັນທຳໃນຂໍ້ທີ່ບໍ່ເປັນທຳ

ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໘)

[໑໑໗] ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າເປັນວິໄນໃນຂໍ້ທີ່ບໍ່ເປັນວິໄນ
໒. ຄົນທີ່ເຂົ້າໃຈວ່າບໍ່ເປັນວິໄນໃນຂໍ້ທີ່ເປັນວິໄນ

ອາສະວະຍ່ອມຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໑໙)

[໑໑໘] ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກ

ຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ເຂົ້າໃຈວ່າບໍ່ເປັນວິໄນໃນຂໍ້ທີ່ບໍ່ເປັນວິໄນ
໒. ຄົນທີ່ເຂົ້າໃຈວ່າເປັນວິໄນໃນຂໍ້ທີ່ເປັນວິໄນ

ພິກຂຸທັງຫຼາຍ ອາສະວະຍ່ອມບໍ່ຈະເລີນແກ່ຄົນ ໒ ຈຳພວກນີ້ແລ (໒໐)

**ພາລະວັກທີ່ ໕ ຈົບ**

**ທຸຕິຍະປັນນາດ ຈົບບໍລິບູນ**

# ໓. ຕະຕິຍະປັນນາດ

## ໑. ອາສາທຸບປະຊະຫະວັກ

### ໝວດວ່າດ້ວຍຄວາມຫວັງທີ່ລະໄດ້ຍາກ

[໑໑໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມຫວັງ ໒ ຢ່າງນີ້ລະໄດ້ຍາກ

ຄວາມຫວັງ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມຫວັງໃນລາບ ໒. ຄວາມຫວັງໃນຊີວິດ

ຄວາມຫວັງ ໒ ຢ່າງນີ້ແລ ລະໄດ້ຍາກ (໑)

[໑໒໐] ບຸກຄົນ ໒ ຈຳພວກນີ້ຫາໄດ້ຍາກໃນໂລກ

ບຸກຄົນ ໒ ຈຳພວກໃດແດ່ ຄື

໑. ບຸບພະກາຣີ (ຜູ້ທຳອຸປະກາຣະກ່ອນ)
໒. ກະຕັນຍູກະຕະເວທີ (ຜູ້ຮູ້ອຸປະກາຣະທີ່ເຂົາເຮັດແລ້ວແລະຕອບແທນ)

ບຸກຄົນ ໒ ຈຳພວກນີ້ແລຫາໄດ້ຍາກໃນໂລກ (໒)

[໑໒໑] ບຸກຄົນ ໒ ຈຳພວກນີ້ຫາໄດ້ຍາກໃນໂລກ

ບຸກຄົນ ໒ ຈຳພວກ ພວກໃດແດ່ ຄື

໑. ຄົນທີ່ອີ່ມເອງ ໒. ຄົນທີ່ໃຫ້ຜູ້ອື່ນອີ່ມ

ບຸກຄົນ ໒ ຈຳພວກນີ້ແລຫາໄດ້ຍາກໃນໂລກ (໓)

[໑໒໒] ບຸກຄົນ ໒ ຈຳພວກນີ້ໃຫ້ອີ່ມໄດ້ຍາກ

ບຸກຄົນ ໒ ຈຳພວກໃດແດ່ ຄື

໑. ຄົນທີ່ສະສົມສິ່ງທີ່ໄດ້ມາທຸກຄັ້ງ ໒. ຄົນທີ່ສະລະສິ່ງທີ່ໄດ້ມາທຸກຄັ້ງ

ບຸກຄົນ ໒ ຈຳພວກນີ້ແລໃຫ້ອີ່ມໄດ້ຍາກ (໔)

[໑໒໓] ບຸກຄົນ ໒ ຈຳພວກນີ້ໃຫ້ອີ່ມໄດ້ງ່າຍ

ບຸກຄົນ ໒ ຈຳພວກໃດແດ່ ຄື

໑. ຄົນທີ່ບໍ່ສະສົມສິ່ງທີ່ໄດ້ມາທຸກຄັ້ງ ໒. ຄົນທີ່ບໍ່ສະລະສິ່ງທີ່ໄດ້ມາທຸກຄັ້ງ

ບຸກຄົນ ໒ ຈຳພວກນີ້ແລໃຫ້ອີ່ມໄດ້ງ່າຍ (໕)

[໑໒໔] ປັດໄຈໃຫ້ເກີດຣາຄະ ໒ ຢ່າງນີ້

ປັດໄຈ ໒ ຢ່າງ ອັນໃດແດ່ ຄື

໑. ສຸພະນິມິດ໑ (ນິມິດງາມ)
໒. ອະໂຍນິໂສມະນະສິການ (ການມະນະສິການໂດຍບໍ່ແຍບຄາຍ)

ປັດໄຈໃຫ້ເກີດຣາຄະ ໒ ຢ່າງນີ້ແລ (໖)

[໑໒໕] ປັດໄຈໃຫ້ເກີດໂທສະ ໒ ຢ່າງນີ້

ປັດໄຈ ໒ ຢ່າງ ອັນໃດແດ່ ຄື

໑. ປະຕິຄະນິມິດ (ນິມິດໃຫ້ຂັດເຄືອງ) ໒. ອະໂຍນິໂສມະນະສິການ

ປັດໄຈໃຫ້ເກີດໂທສະ ໒ ຢ່າງນີ້ແລ (໗)

[໑໒໖] ປັດໄຈໃຫ້ເກີດມິດສາທິດຖິ ໒ ຢ່າງນີ້

ປັດໄຈ ໒ ຢ່າງ ອັນໃດແດ່ ຄື

໑. ປະຣະໂຕໂຄສະ (ສຽງຈາກຜູ້ອື່ນ) ໒. ອະໂຍນິໂສມະນະສິການ

ປັດໄຈໃຫ້ເກີດມິດສາທິດຖິ ໒ ຢ່າງນີ້ແລ (໘)

[໑໒໗] ປັດໄຈໃຫ້ເກີດສຳມາທິດຖິ ໒ ຢ່າງນີ້

ປັດໄຈ ໒ ຢ່າງ ອັນໃດແດ່ ຄື

໑. ປະຣະໂຕໂຄສະ

໔. ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ)

ປັດໄຈໃຫ້ເກີດສຳມາທິດຖິ ໔ ຢ່າງນີ້ແລ (໗)

[໑໔໘] ອາບັດ ໔ ຢ່າງນີ້

ອາບັດ ໔ ຢ່າງ ອັນໃດແດ່ ຄື

໑. ອາບັດເບົາ ໔. ອາບັດໜັກ

ອາບັດ ໔ ຢ່າງນີ້ແລ (໑໐)

[໑໔໙] ອາບັດ ໔ ຢ່າງນີ້

ອາບັດ ໔ ຢ່າງ ອັນໃດແດ່ ຄື

໑. ອາບັດຊົ່ວຫຍາບ ໔. ອາບັດບໍ່ຊົ່ວຫຍາບ

ອາບັດ ໔ ຢ່າງນີ້ແລ (໑໑)

[໑໕໐] ອາບັດ ໔ ຢ່າງນີ້

ອາບັດ ໔ ຢ່າງ ອັນໃດແດ່ ຄື

໑. ອາບັດທີ່ມີສ່ວນເຫຼືອ ໔. ອາບັດທີ່ບໍ່ມີສ່ວນເຫຼືອ

ພິກຂຸທັງຫຼາຍ ອາບັດ ໔ ຢ່າງນີ້ແລ (໑໔)

**ອາສາທຸປປະຊະຫະວັກທີ ໑ ຈົບ**

# ໔. ອາຍາຈະນະວັກ

## ໝວດວ່າດ້ວຍຄວາມປາຖະໜາ

[໑໕໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ມີສັດທາ ເມື່ອປາຖະໜາ ໂດຍຖືກຕ້ອງເພິ່ງປາຖະໜາແນວນີ້ວ່າ “ຂໍໃຫ້ເຮົາເປັນເຊັ່ນກັບພຣະສາຣີບຸດ ແລະພຣະໂມກຄັນລານະເທີ້ນ” ສາຣີບຸດ ແລະໂມກຄັນລານະນີ້ເປັນບັນທັດຖານ ເປັນມາດຕະຖານຂອງພິກຂຸສາວົກຂອງເຮົາ (໑)

[໑໓໔] ພິກຂຸນີຜູ້ມີສັດທາ ເມື່ອປາຖະໜາໂດຍຖືກຕ້ອງເພິ່ງປາຖະໜາແນວນີ້ວ່າ "ຂໍໃຫ້ເຮົາເປັນເຊັ່ນກັບພິກຂຸນີເຂມາ ແລະພິກຂຸນີອຸບົນວັນນາເທີ້ນ" ເຂມາ ແລະອຸບົນວັນນານີ້ເປັນບັນທັດຖານ ເປັນມາດຕະຖານຂອງພິກຂຸນີສາວິກາຂອງເຮົາ (໔)

[໑໓໕] ອຸປາສົກຜູ້ມີສັດທາ ເມື່ອປາຖະໜາໂດຍຖືກຕ້ອງ ເພິ່ງປາຖະໜາແນວນີ້ວ່າ "ຂໍໃຫ້ເຮົາເປັນເຊັ່ນກັບຈິດຕະຄະຫະບໍດີ ແລະຫັດຖະກະອຸປາສົກຊາວເມືອງອາລະວີເທີ້ນ" ຈິດຕະຄະຫະບໍດີ ແລະຫັດຖະກະອຸປາສົກຊາວ ເມືອງອາລະວີນີ້ເປັນບັນທັດຖານ ເປັນມາດຕະຖານຂອງອຸປາສົກສາວົກຂອງເຮົາ (໕)

[໑໓໖] ອຸປາສິກາຜູ້ມີສັດທາ ເມື່ອປາຖະໜາໂດຍຖືກຕ້ອງເພິ່ງປາຖະໜາແນວນີ້ ວ່າ

"ຂໍໃຫ້ເຮົາ ເປັນເຊັ່ນກັບອຸປາສິກາຂຸດຂຸດຕະຣາ ແລະອຸປາສິກາເວລຸກັນຕະກີນັນທະມາຕາເທີ້ນ" ຂຸດຊຸກາ ແລະເວລຸກັນຕະກີນັນທະມາຕານີ້ ເປັນບັນທັດຖານ ເປັນມາດຕະຖານຂອງອຸປາສິກາສາວິກາຂອງເຮົາ (໖)

[໑໓໗] ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທໍາ ໔ ປະການ ຍ່ອມບໍລິຫານຕົນໃຫ້ຖືກກໍາຈັດ ຖືກທໍາລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທໍາ ໔ ປະການ ອັນໃດແດ່ ຄື

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ເວົ້າສັນເສີນຄົນທີ່ຄວນຕິຕຽນ
໔. ບໍ່ພິຈາລະນາ ບໍ່ຮິ່ນຕອງ ເວົ້າຕິຕຽນຄົນທີ່ຄວນສັນເສີນ

ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທໍາ ໔ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກໍາຈັດ ຖືກທໍາລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທໍາ ໔ ປະການ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກໍາຈັດ ບໍ່ໃຫ້ຖືກທໍາລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ທໍາ ໔ ປະການ ອັນໃດແດ່ ຄື

໑. ພິຈາລະນາ ຮິ່ນຕອງແລ້ວ ເວົ້າຕິຕຽນຄົນທີ່ຄວນຕິຕຽນ
໔. ພິຈາລະນາ ຮິ່ນຕອງແລ້ວ ເວົ້າສັນເສີນຄົນທີ່ຄວນສັນເສີນ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ (໕)

[໑໓໖] ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ບໍ່ພິຈາລະນາ ບໍ່ຮິ່ນຕອງ ປຸກຄວາມເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ
໔. ບໍ່ພິຈາລະນາ ບໍ່ຮິ່ນຕອງ ປຸກຄວາມບໍ່ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ຄົນພານ ຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໔ ຢ່າງນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບັນດິດ ຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ພິຈາລະນາຮິ່ນຕອງແລ້ວ ປຸກຄວາມບໍ່ເຫຼື້ອມໃສໃນຖານະທີ່ບໍ່ຄວນເຫຼື້ອມໃສ
໔. ພິຈາລະນາຮິ່ນຕອງແລ້ວ ປຸກຄວາມເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໔ ປະການນີ້ແລຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ (໖)

[໑໓໗] ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນບຸກຄົນ ໔ ຈຳພວກ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ມານດາ ໔. ບິດາ

ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນບຸກຄົນ ໔ ຈຳພວກນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຊອບໃນບຸກຄົນ ໔ ຈຳພວກຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ບຸກຄົນ ໔ ຈຳພວກ ພວກໃດແດ່ ຄື

໑. ມານດາ ໔. ບິດາ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຖືກໃນບຸກຄົນ ໔ ຈຳພວກນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ (໗)

[໑໖໗] ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນບຸກຄົນ ໔ ຈຳພວກຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບຸກຄົນ ໔ ຈຳພວກໃດແດ່ ຄື

໑. ຕະຖາຄົດ ໔. ສາວົກຂອງຕະຖາຄົດ

ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະຕິບັດຜິດໃນບຸກຄົນ ໔ ຈຳພວກນີ້ແລ ຍ່ອມ ບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຊອບໃນບຸກຄົນ ໔ ຈຳພວກຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ບຸກຄົນ ໔ ຈຳພວກໃດແດ່ ຄື

໑. ຕະຖາຄົດ ໔. ສາວົກຂອງຕະຖາຄົດ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະຕິບັດຊອບໃນບຸກຄົນ ໔ ຈຳພວກນີ້ແລຍ່ອມ ບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ (໙)

[໑໓໙] ທຳ ໔ ປະການນີ້

ທຳ ໔ ປະການ ອັນໃດແດ່ ຄື

໑. ການຊຳຣະຈິດຂອງຕົນໃຫ້ຜ່ອງແຜ້ວ
໔. ຄວາມບໍ່ຖືໝັ້ນອັນໃດ ໆ ໃນໂລກ

ທຳ ໔ ປະການນີ້ແລ (໙)

[໑໔໐] ທຳ ໔ ປະການນີ້

ທຳ ໔ ປະການ ອັນໃດແດ່ ຄື

໑. ໂກທະ (ຄວາມໂກດ) ໔. ອຸປະນາຫະ (ຄວາມຜູກໂກດ)

ທຳ ໔ ປະການນີ້ແລ (໑໐)

[໑໔໑] ທຳ ໔ ປະການນີ້

ທຳ ໔ ປະການ ອັນໃດແດ່ ຄື

໑. ການກຳຈັດຄວາມໂກດ ໔. ການກຳຈັດອຸປະນາຫະ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ແລ (໑໑)

**ອາຍາຈະນະວັກທີ ໔ ຈົບ**

# ໓. ທານະວັກ

## ໝວດວ່າດ້ວຍທານ

[໑໔໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທານ ໔ ຢ່າງນີ້

ທານ ໒ ຢ່າງ ອັນໃດແດ່ ຄື

໑. ອາມິດສະທານ ໑ (ການໃຫ້ສິ່ງຂອງ) ໒. ທຳມະທານ (ການໃຫ້ທຳ)

ທານ ໒ ຢ່າງນີ້ແລ ບັນດາທານ ໒ ຢ່າງນີ້ ທຳມະທານເປັນເລີດ (໑)

[໑໔໓] ການບູຊາຍັນ ໒ ຢ່າງນີ້

ການບູຊາຍັນ ໒ ຢ່າງ ອັນໃດແດ່ ຄື

໑. ການບູຊາຍັນດ້ວຍອາມິດ ໒. ການບູຊາຍັນດ້ວຍທຳ

ການບູຊາຍັນ ໒ ຢ່າງນີ້ແລ ບັນດາການບູຊາຍັນ ໒ ຢ່າງນີ້ ການບູຊາຍັນດ້ວຍທຳເປັນເລີດ (໒)

[໑໔໔] ຈາຄະ (ການສະລະ) ໒ ຢ່າງນີ້

ຈາຄະ ໒ ຢ່າງ ອັນໃດແດ່ ຄື

໑. ອາມິດຈາຄະ (ການສະລະອາມິດ) ໒. ທຳມະຈາຄະ (ການສະລະທຳ)

ຈາຄະ ໒ ຢ່າງນີ້ແລ ບັນດາຈາຄະ ໒ ຢ່າງນີ້ ທຳມະຈາຄະເປັນເລີດ (໓)

[໑໔໕] ການບໍລິຈາກ ໒ ຢ່າງນີ້

ການບໍລິຈາກ ໒ ຢ່າງ ອັນໃດແດ່ ຄື

໑. ການບໍລິຈາກອາມິດ ໒. ການບໍລິຈາກທຳ

ການບໍລິຈາກ ໒ ຢ່າງນີ້ແລ ບັນດາການບໍລິຈາກ ໒ ຢ່າງນີ້ ການບໍລິຈາກທຳເປັນເລີດ (໔)

[໑໔໖] ການບໍຣິໂພກ ໒ ຢ່າງນີ້

ການບໍຣິໂພກ ໒ ຢ່າງ ອັນໃດແດ່ ຄື

໑. ການບໍຣິໂພກອາມິດ ໒. ການບໍຣິໂພກທຳ

ການບໍຣິໂພກ ໒ ຢ່າງນີ້ແລ ບັນດາການບໍຣິໂພກ ໒ ຢ່າງນີ້ ການບໍຣິໂພກທຳເປັນເລີດ (໕)

[໑໔໗] ການຄົບຫາກັນ ໔ ຢ່າງນີ້

ການຄົບຫາກັນ ໔ ຢ່າງ ອັນໃດແດ່ ຄື

໑. ການຄົບຫາກັນດ້ວຍອາມິດ ໔. ການຄົບຫາກັນດ້ວຍທຳ

ການຄົບຫາກັນ ໔ ຢ່າງນີ້ແລ ບັນດາການຄົບຫາກັນ ໔ ຢ່າງນີ້ ການຄົບຫາກັນດ້ວຍທຳ ເປັນເລີດ (໖)

[໑໔໘] ການຈຳແນກ ໔ ຢ່າງນີ້

ການຈຳແນກ ໔ ຢ່າງ ອັນໃດແດ່ ຄື

໑. ການຈຳແນກອາມິດ ໔. ການຈຳແນກທຳ

ການຈຳແນກ ໔ ຢ່າງນີ້ແລ ບັນດາການຈຳແນກ ໔ ຢ່າງນີ້ ການຈຳແນກທຳ ເປັນເລີດ (໗)

[໑໔໙] ການສົງເຄາະ ໔ ຢ່າງນີ້

ການສົງເຄາະ ໔ ຢ່າງ ອັນໃດແດ່ ຄື

໑. ການສົງເຄາະດ້ວຍອາມິດ ໔. ການສົງເຄາະດ້ວຍທຳ

ການສົງເຄາະ ໔ ຢ່າງນີ້ແລ ບັນດາການສົງເຄາະ ໔ ຢ່າງນີ້ ການສົງເຄາະດ້ວຍທຳເປັນເລີດ (໘)

[໑໕໐] ການອະນຸເຄາະ ໔ ຢ່າງນີ້

ການອະນຸເຄາະ ໔ ຢ່າງ ອັນໃດແດ່ ຄື

໑. ການອະນຸເຄາະດ້ວຍອາມິດ ໔. ການອະນຸເຄາະດ້ວຍທຳ

ການອະນຸເຄາະ ໔ ຢ່າງນີ້ແລ ບັນດາອະນຸເຄາະ ໔ ຢ່າງນີ້ ການອະນຸເຄາະດ້ວຍທຳ ເປັນເລີດ (໙)

[໑໕໑] ຄວາມເອື້ອເຟື້ອ ໔ ຢ່າງນີ້

ຄວາມເອື້ອເຟື້ອ ໔ ຢ່າງ ອັນໃດແດ່ ຄື

໑. ຄວາມເອື້ອເຟື້ອດ້ວຍອາມິດ ໒. ຄວາມເອື້ອເຟື້ອດ້ວຍທຳ

ຄວາມເອື້ອເຟື້ອ ໒ ຢ່າງນີ້ແລ ພິກຂຸທັງຫຼາຍ ບັນດາຄວາມເອື້ອເຟື້ອ ໒ ຢ່າງນີ້ ຄວາມເອື້ອເຟື້ອດ້ວຍທຳເປັນເລີດ (໑໐)

**ທານະວັກທີ ໓ ຈົບ**

# ໔. ສັນຖາຣະວັກ

## ໝວດວ່າດ້ວຍການຮັບຮອງ

[໑໕໒] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນຖາຣະ (ການຮັບຮອງ) ໒ ຢ່າງນີ້

ສັນຖາຣະ ໒ ຢ່າງ ອັນໃດແດ່ ຄື

໑. ອາມິດສັນຖາຣະ (ການຮັບຮອງດ້ວຍອາມິດ)
໒. ທຳມະສັນຖາຣະ (ການຮັບຮອງດ້ວຍທຳ)

ສັນຖາຣະ ໒ ຢ່າງນີ້ແລ ບັນດາສັນຖາຣະ ໒ ຢ່າງນີ້ ທຳມະສັນຖາຣະເປັນເລີດ (໑)

[໑໕໓] ປະຕິສັນຖານ(ການຕ້ອນຮັບ) ໒ ຢ່າງນີ້

ປະຕິສັນຖານ ໒ ຢ່າງ ອັນໃດແດ່ ຄື

໑. ອາມິດປະຕິສັນຖານ (ການຕ້ອນຮັບດ້ວຍອາມິດ)
໒. ທຳມະປະຕິສັນຖານ (ການຕ້ອນຮັບດ້ວຍທຳ)

ປະຕິສັນຖານ ໒ ຢ່າງນີ້ແລ ບັນດາປະຕິສັນຖານ ໒ ຢ່າງນີ້ ທຳມະປະຕິສັນຖານເປັນເລີດ (໒)

[໑໕໔] ການເສາະຫາ ໒ ຢ່າງນີ້

ການເສາະຫາ ໒ ຢ່າງ ອັນໃດແດ່ ຄື

໑. ການເສາະຫາອາມິດ ໒. ການເສາະຫາທຳ

ການເສາະຫາ ໒ ຢ່າງນີ້ ບັນດາການເສາະຫາ ໒ ຢ່າງນີ້ ການເສາະຫາທຳເປັນເລີດ (໓)

[໑໕໔] ການສະແຫວງຫາ ໒ ຢ່າງນີ້

ການສະແຫວງຫາ ໒ ຢ່າງ ອັນໃດແດ່ ຄື

໑. ການສະແຫວງຫາອາມິດ ໒. ການສະແຫວງຫາທຳ

ການສະແຫວງຫາ ໒ ຢ່າງນີ້ແລ ບັນດາການສະແຫວງຫາ ໒ ຢ່າງນີ້ ການສະແຫວງຫາທຳເປັນເລີດ (໔)

[໑໕໕] ການຄົ້ນຫາ ໒ ຢ່າງນີ້

ການຄົ້ນຫາ ໒ ຢ່າງ ອັນໃດແດ່ ຄື

໑. ການຄົ້ນຫາອາມິດ ໒. ການຄົ້ນຫາທຳ

ການຄົ້ນຫາ ໒ ຢ່າງນີ້ແລ ບັນດາການຄົ້ນຫາ ໒ ຢ່າງນີ້ ການຄົ້ນຫາທຳ ເປັນເລີດ (໕)

[໑໕໖] ບູຊາ ໒ ຢ່າງນີ້

ບູຊາ ໒ ຢ່າງ ອັນໃດແດ່ ຄື

໑. ອາມິດບູຊາ (ການບູຊາດ້ວຍອາມິດ)
໒. ທຳມະບູຊາ (ການບູຊາດ້ວຍທຳ)

ບູຊາ ໒ ຢ່າງນີ້ແລ ບັນດາບູຊາ ໒ ຢ່າງນີ້ ທຳມະບູຊາເປັນເລີດ (໖)

[໑໕໗] ຂອງຕ້ອນຮັບແຂກ ໒ ຢ່າງນີ້

ຂອງຕ້ອນຮັບແຂກ ໒ ຢ່າງ ອັນໃດແດ່ ຄື

໑. ຂອງຕ້ອນຮັບແຂກຄືອາມິດ ໒. ຂອງຕ້ອນຮັບແຂກຄືທຳ

ຂອງຕ້ອນຮັບແຂກ ໒ ຢ່າງນີ້ແລ ບັນດາຂອງຕ້ອນຮັບແຂກ ໒ ຢ່າງນີ້ ຂອງຕ້ອນຮັບແຂກຄືທຳເປັນເລີດ (໗)

[໑໕໘] ຄວາມສຳເລັດ ໒ ຢ່າງນີ້

ຄວາມສຳເລັດ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມສຳເລັດທາງອາມິດ　　　໒. ຄວາມສຳເລັດທາງທຳ

ຄວາມສຳເລັດ ໒ ຢ່າງນີ້ແລ ບັນດາຄວາມສຳເລັດ ໒ ຢ່າງນີ້ ຄວາມສຳເລັດທາງທຳເປັນເລີດ (໗)

[໑໖໐] ຄວາມຈະເລີນ ໒ ຢ່າງນີ້
ຄວາມຈະເລີນ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມຈະເລີນດ້ວຍອາມິດ　　　໒. ຄວາມຈະເລີນດ້ວຍທຳ

ຄວາມຈະເລີນ ໒ ຢ່າງນີ້ແລ ບັນດາຄວາມຈະເລີນ ໒ ຢ່າງນີ້ ຄວາມຈະເລີນດ້ວຍທຳເປັນເລີດ (໘)

[໑໖໑] ຣັດຕະນະ(ແກ້ວອັນປະເສີດ) ໒ ຢ່າງນີ້
ຣັດຕະນະ ໒ ຢ່າງ ອັນໃດແດ່ ຄື

໑. ອາມິດຣັດຕະນະ (ຣັດຕະນະຄືອາມິດ)
໒. ທຳມະຣັດຕະນະ (ຣັດຕະນະຄືທຳ)

ຣັດຕະນະ ໒ ຢ່າງນີ້ແລ ບັນດາຣັດຕະນະ ໒ ຢ່າງນີ້ ທຳມະຣັດຕະນະເປັນເລີດ (໑໐)

[໑໖໒] ການສະສົມ ໒ ຢ່າງນີ້

ການສະສົມ ໒ ຢ່າງ ອັນໃດແດ່ ຄື

໑. ການສະສົມອາມິດ　　　໒. ການສະສົມທຳ

ການສະສົມ ໒ ຢ່າງນີ້ແລ ບັນດາການສະສົມ ໒ ຢ່າງນີ້ ການສະສົມທຳເປັນເລີດ (໑໑)

[໑໖໓] ຄວາມໄພບູນ ໒ ຢ່າງນີ້
ຄວາມໄພບູນ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມໄພບູນແຫ່ງອາມິດ　　　໒. ຄວາມໄພບູນແຫ່ງທຳ

ຄວາມໄພບູນ ໒ ຢ່າງນີ້ແລ ພິກຂຸທັງຫຼາຍ ບັນດາຄວາມໄພບູນ ໒ ຢ່າງນີ້ ຄວາມໄພບູນແຫ່ງທຳເປັນເລີດ (໑໒)

**ສັນຖາຣະວັກທີ ໒ ຈົບ**

# ៥. ສະມາປັດຕິວັກ

## ໝວດວ່າດ້ວຍສະມາບັດ

[໑໗໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມເປັນຜູ້ສະຫຼາດໃນການເຂົ້າສະມາບັດ
໒. ຄວາມເປັນຜູ້ສະຫຼາດໃນການອອກຈາກສະມາບັດ

ທຳ ໒ ຢ່າງນີ້ແລ (໑)

[໑໗໕] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ອາດຊະວະ (ຄວາມຊື່ກົງ) ໒. ມັດທະວະ (ຄວາມອ່ອນໂຍນ)

ທຳ ໒ ຢ່າງນີ້ແລ (໒)

[໑໗໖] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຂັນຕິ (ຄວາມອົດທົນ) ໒. ໂສຣັດຈະ (ຄວາມສະຫງ່ຽມ)

ທຳ ໒ ຢ່າງນີ້ແລ (໓)

[໑໗໗] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ສາຂັນຍະ (ຄວາມມີວາຈາອ່ອນຫວານ)
໒. ປະຕິສັນຖານ (ການຕ້ອນຮັບ)

ທຳ ໒ ຢ່າງນີ້ແລ (໔)

[໑໖໗] ທຳ ໔ ຢ່າງນີ້

ທຳ ໔ ຢ່າງ ອັນໃດແດ່ ຄື

໑. ອະວິຫິງສາ (ຄວາມບໍ່ບຽດບຽນ)
໔. ໂສເຈີຍຍະ (ຄວາມສະອາດ)

ທຳ ໔ ຢ່າງນີ້ແລ (໕)

[໑໖໘] ທຳ ໔ ຢ່າງນີ້

ທຳ ໔ ຢ່າງ ອັນໃດແດ່ ຄື

໑. ຄວາມບໍ່ຄຸ້ມຄອງທະວານໃນອິນຊີ
໔. ຄວາມບໍ່ຮູ້ຈັກປະມານໃນການບໍຣິໂພກ

ທຳ ໔ ຢ່າງນີ້ແລ (໖)

[໑໗໐] ທຳ ໔ ຢ່າງນີ້

ທຳ ໔ ຢ່າງ ອັນໃດແດ່ ຄື

໑. ຄວາມຄຸ້ມຄອງທະວານໃນອິນຊີ
໔. ຄວາມຮູ້ຈັກປະມານໃນການບໍຣິໂພກ

ທຳ ໔ ຢ່າງນີ້ແລ (໗)

[໑໗໑] ທຳ ໔ ຢ່າງນີ້

ທຳ ໔ ຢ່າງ ອັນໃດແດ່ ຄື

໑. ປະຕິສັງຂານະພະລະ (ກຳລັງຄືການພິຈາລະນາ)
໔. ພາວະນາພະລະ (ກຳລັງຄືການຈະເລີນ)

ທຳ ໔ ຢ່າງນີ້ແລ (໘)

[໑໗໔] ທຳ ໔ ຢ່າງນີ້

ທຳ ໔ ຢ່າງ ອັນໃດແດ່ ຄື

໑. ສະຕິພະລະ (ກຳລັງຄືສະຕິ) ໒. ສະມາທິພະລະ (ກຳລັງຄືສະມາທິ)

ທຳ ໒ ຢ່າງນີ້ແລ (໙)

[໑໗໓] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ສະມະຖະ (ການເຝິກຈິດໃຫ້ສະຫງົບເປັນສະມາທິ)
໒. ວິປັດສະນາ (ຄວາມເຫັນແຈ້ງ)

ທຳ ໒ ຢ່າງນີ້ແລ (໑໐)

[໑໗໔] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ສີລະວິບັດ (ຄວາມວິບັດແຫ່ງສີນ)
໒. ທິດຖິວິບັດ (ຄວາມວິບັດແຫ່ງທິດຖິ)

ທຳ ໒ ຢ່າງນີ້ແລ (໑໑)

[໑໗໕] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ສີລະສຳປະທາ (ຄວາມເຖິງພ້ອມດ້ວຍສີນ)
໒. ທິດຖິສຳປະທາ (ຄວາມເຖິງພ້ອມດ້ວຍທິດຖິ)

ທຳ ໒ ຢ່າງນີ້ແລ (໑໒)

[໑໗໖] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ສີລະວິສຸດທິ (ຄວາມບໍລິສຸດແຫ່ງສີນ)
໒. ທິດຖິວິສຸດທິ (ຄວາມບໍລິສຸດແຫ່ງທິດຖິ)

ທຳ ໒ ຢ່າງນີ້ແລ (໑໓)

[໑໗໗] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ທິດຖິວິສຸດທິ (ຄວາມບໍລິສຸດແຫ່ງທິດຖິ)
໒. ປະທານ (ຄວາມພຽນ) ທີ່ສົມຄວນແກ່ສຳມາທິດຖິ

ທຳ ໒ ຢ່າງນີ້ແລ (໑໘)

[໑໗໘] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມບໍ່ສັນໂດດໃນກຸສົນທຳທັງຫຼາຍ
໒. ຄວາມບໍ່ທໍ້ຖອຍໃນການພຳເພັງພຽນ

ທຳ ໒ ຢ່າງນີ້ແລ (໑໕)

[໑໗໙] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ຄວາມຫຼົງລືມສະຕິ ໒. ຄວາມບໍ່ມີສຳປະຊັນຍະ

ທຳ ໒ ຢ່າງນີ້ແລ (໑໖)

[໑໘໐] ທຳ ໒ ຢ່າງນີ້

ທຳ ໒ ຢ່າງ ອັນໃດແດ່ ຄື

໑. ສະຕິ ໒. ສຳປະຊັນຍະ

ພິກຂຸທັງຫຼາຍ ທຳ ໒ ຢ່າງນີ້ແລ (໑໗)

**ສະມາປັດຕິວັກທີ ໕ ຈົບ**

**ຕະຕິຍະປັນນາດ ຈົບບໍລິບູນ**

# ໑. ໂກທະເປີຍຍາລະ

[໑໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍທຳ ໔ ຢ່າງນີ້

ທຳ ໔ ຢ່າງ ອັນໃດແດ່ ຄື

| | | | | |
|---|---|---|---|---|
| ໑. ໂກທະ | (ຄວາມໂກດ) | ໔. ອຸປະນາຫະ | (ຄວາມຜູກໂກດ) | ໆລໆ |
| ໑. ມັກຂະ | (ຄວາມລົບຫຼູ່ຄຸນທ່ານ) | ໔. ປະລາສະ | (ຄວາມຕີສະເໝີ) | ໆລໆ |
| ໑. ອິດສາ | (ຄວາມຣິດສະຫຍາ | ໔. ມັດສະຣິຍະ | (ຄວາມຂີ້ຖີ່) | ໆລໆ |
| ໑. ມາຍາ | (ມານຍາ) | ໔. ສາເຖີຍຍະ | (ຄວາມໂອ້ອວດ) | ໆລໆ |
| ໑. ອະຫິຣິກະ | (ຄວາມບໍ່ອາຍບາບ) | ໔. ອະໂນດຕັບປະ | (ຄວາມບໍ່ຢ້ານບາບ) | |

ພິກຂຸທັງຫຼາຍທຳ ໔ ຢ່າງນີ້ແລ (໑-໕)

[໑໗໔] ທຳ ໔ ຢ່າງນີ້

ທຳ ໔ ຢ່າງ ອັນໃດແດ່ ຄື

| | | | | |
|---|---|---|---|---|
| ໑. ອັກໂກທະ | (ຄວາມບໍ່ໂກດ) | ໔. ອະນຸປະນາຫະ | (ຄວາມບໍ່ຜູກໂກດ) | ໆລໆ |
| ໑. ອະມັກຂະ | (ຄວາມບໍ່ລົບຫຼູ່ຄຸນທ່ານ) | ໔. ອະປະລາສະ | (ຄວາມບໍ່ຕີສະເໝີ) | ໆລໆ |
| ໑. ອະນິດສາ | (ຄວາມບໍ່ຣິດສະຫຍາ) | ໔. ອະມັດສະຣິຍະ | (ຄວາມບໍ່ຂີ້ຖີ່) | ໆລໆ |
| ໑. ອະມາຍະ | (ບໍ່ມີມານຍາ) | ໔. ອະສາເຖີຍຍະ | (ຄວາມບໍ່ໂອ້ອວດ) | ໆລໆ |
| ໑. ຫິຣິ | (ຄວາມອາຍບາບ) | ໔. ໂອດຕັບປະ | (ຄວາມຢ້ານບາບ) | ໆລໆ |

ພິກຂຸທັງຫຼາຍທຳ ໔ ຢ່າງນີ້ແລ (໖-໑໐)

[໑໗໓] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔ ຢ່າງຍ່ອມຢູ່ເປັນທຸກ

ທຳ ໔ ຢ່າງ ອັນໃດແດ່ ຄື

| | | |
|---|---|---|
| ໑. ໂກທະ | ໔. ອຸປະນາຫະ | ໆລໆ |
| ໑. ມັກຂະ | ໔. ປະລາສະ | ໆລໆ |
| ໑. ອິດສາ | ໔. ມັດສະຣິຍະ | ໆລໆ |
| ໑. ມາຍາ | ໔. ສາເຖີຍຍະ | ໆລໆ |
| ໑. ອະຫິຣິກະ | ໔. ອະໂນດຕັບປະ | ໆລໆ |

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔ ຢ່າງນີ້ແລຍ່ອມຢູ່ເປັນທຸກ (໑໑-໑໕)

[໑໗໔] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔ ຢ່າງຍ່ອມຢູ່ເປັນສຸກ

ທຳ ໔ ຢ່າງອະໃດແດ່ ຄື

| | | |
|---|---|---|
| ໑. ອັກໂກທະ | ໔. ອະນຸປະນາຫະ | ໆລໆ |
| ໑. ອະມັກຂະ | ໔. ອະປະລາສະ | ໆລໆ |
| ໑. ອະນິດສາ | ໔. ອະມັດສະຣິຍະ | ໆລໆ |
| ໑. ອະມາຍະ | ໔. ອະສາເຖີຍຍະ | ໆລໆ |
| ໑. ຫິຣິ | ໔. ໂອດຕັບປະ | ໆລໆ |

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔ ຢ່າງນີ້ແລຍ່ອມຢູ່ເປັນສຸກ (໑໖-໔໐)

[໑໗໕] ທຳ ໔ ຢ່າງນີ້ຍ່ອມເປັນໄປເພື່ອຄວາມເສື່ອມຂອງພິກຂຸຜູ້ຍັງເປັນເສຂະ

ທຳ ໔ ຢ່າງ ອັນໃດແດ່ ຄື

| | | |
|---|---|---|
| ໑. ໂກທະ | ໔. ອຸປະນາຫະ | ໆລໆ |
| ໑. ມັກຂະ | ໔. ປະລາສະ | ໆລໆ |
| ໑. ອິດສາ | ໔. ມັດສະຣິຍະ | ໆລໆ |
| ໑. ມາຍາ | ໔. ສາເຖີຍຍະ | ໆລໆ |
| ໑. ອະຫິຣິກະ | ໔. ອະໂນດຕັບປະ | ໆລໆ |

ພິກຂຸທັງຫຼາຍທຳ ໔ ຢ່າງນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມຂອງພິກຂຸຜູ້ຍັງເປັນເສຂະ (໔໑-໔໕)

[໑໗໖] ທຳ ໔ ຢ່າງນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມຂອງພິກຂຸຜູ້ຍັງເປັນເສຂະ

ທຳ ໔ ຢ່າງ ອັນໃດແດ່ ຄື

| | | |
|---|---|---|
| ໑. ອັກໂກທະ | ໔. ອະນຸປະນາຫະ | ໆລໆ |
| ໑. ອະມັກຂະ | ໔. ອະປະລາສະ | ໆລໆ |
| ໑. ອະນິດສາ | ໔. ອະມັດສະຣິຍະ | ໆລໆ |
| ໑. ອະມາຍະ | ໔. ອະສາເຖີຍຍະ | ໆລໆ |
| ໑. ຫິຣິ | ໔. ໂອດຕັບປະ | ໆລໆ |

ພິກຂຸທັງຫຼາຍທຳ ໔ ຢ່າງນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມຂອງພິກຂຸຜູ້ຍັງເປັນເສຂະ (໔໙-໖໐)

[໑໗໗] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔ ຢ່າງຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ທຳ ໔ ຢ່າງ ອັນໃດແດ່ ຄື

| | | |
|---|---|---|
| ໑. ໂກທະ | ໔. ອຸປະນາຫະ | ໆລໆ |
| ໑. ມັກຂະ | ໔. ປະລາສະ | ໆລໆ |
| ໑. ອິດສາ | ໔. ມັດສະຣິຍະ | ໆລໆ |
| ໑. ມາຍາ | ໔. ສາເຖີຍຍະ | ໆລໆ |
| ໑. ອະຫິຣິກະ | ໔. ອະໂນດຕັບປະ | ໆລໆ |

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔ ຢ່າງນີ້ແລ ຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້ (໖໑-໖໕)

[໑໗໘] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔ ຢ່າງຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔ ຢ່າງ ອັນໃດແດ່ ຄື

| | | |
|---|---|---|
| ໑. ອັກໂກທະ | ໔. ອະນຸປະນາຫະ | ໆລໆ |
| ໑. ອະມັກຂະ | ໔. ອະປະລາສະ | ໆລໆ |
| ໑. ອະນິດສາ | ໔. ອະມັດສະຣິຍະ | ໆລໆ |
| ໑. ອະມາຍະ | ໔. ອະສາເຖີຍຍະ | ໆລໆ |
| ໑. ຫິຣິ | ໔. ໂອດຕັບປະ | ໆລໆ |

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔ ຢ່າງນີ້ແລຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ (໖໙-໘໐)

[໑໗໙] ພິກຂຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໔ ຢ່າງ

ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໔ ຢ່າງ ອັນໃດແດ່ ຄື

| | | |
|---|---|---|
| ໑. ໂກທະ | ໔. ອຸປະນາຫະ | ໆລໆ |
| ໑. ມັກຂະ | ໔. ປະລາສະ | ໆລໆ |
| ໑. ອິດສາ | ໔. ມັດສະຣິຍະ | ໆລໆ |
| ໑. ມາຍາ | ໔. ສາເຖີຍຍະ | ໆລໆ |
| ໑. ອະຫິຣິກະ | ໔. ອະໂນດຕັບປະ | ໆລໆ |

ພິກຂຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໔ ປະການນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ (໔໑-໔໕)

[໑໗໐] ພິກຂຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໔ ຢ່າງ ຫຼັງ ຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ທຳ ໔ ຢ່າງ ອັນໃດແດ່ ຄື

| | | |
|---|---|---|
| ໑. ອັກໂກທະ | ໔. ອະນຸປະນາຫະ | ໆລໆ |
| ໑. ອະມັກຂະ | ໔. ອະປະລາສະ | ໆລໆ |
| ໑. ອະນິດສາ | ໔. ອະມັດສະຣິຍະ | ໆລໆ |
| ໑. ອະມາຍະ | ໔. ອະສາເຖີຍຍະ | ໆລໆ |
| ໑. ຫິຣິ | ໔. ໂອດຕັບປະ | ໆລໆ |

ພິກຂຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໔ ຢ່າງນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ (໔໖-໕໐)

**ໂກທະເປີຍຍາລະ ຈົບ**

## ໔. ອະກຸສົນເປີຍຍາລະ

[໑໗໑-໔໐໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອະກຸສົນທຳ ໔ ຢ່າງນີ້ ໆລໆ ກຸສົນທຳ ໔ ຢ່າງນີ້ໆລໆ ທຳທີ່ມີໂທດ ໔ ຢ່າງນີ້ ໆລໆ ທຳທີ່ບໍ່ມີໂທດ ໔ ແນວນີ້ ໆລໆ ທຳທີ່ມີທຸກເປັນກຳໄລ ໔ ຢ່າງນີ້ ໆລໆ ທຳທີ່ມີສຸກເປັນກຳໄລ ໔ ຢ່າງນີ້ ໆລໆ ທຳທີ່ມີວິບາກເປັນທຸກ ໔ ຢ່າງນີ້ ໆລໆ ທຳທີ່ມີວິບາກເປັນສຸກ ໔ ຢ່າງນີ້ ໆລໆ ທຳທີ່ມີຄວາມບຽດບຽນ ໔ ຢ່າງນີ້ ໆລໆ ທຳທີ່ບໍ່ມີຄວາມບຽດບຽນ ໔ ຢ່າງນີ້

ທຳທີ່ບໍ່ມີຄວາມບຽດບຽນ ໔ ຢ່າງ ອັນໃດແດ່ ຄື

| | | | | |
|---|---|---|---|---|
| ๑. อักโกทะ | (ถวามบ่โกด) | ๔. อะนุปะนาหะ | (ถวามบ่ผูกโกด) | ฯลฯ |
| ๑. อะมักขะ | (ถวามบ่ลົບຫຼູ່ຄຸນທ່ານ) | ๔. อะปะລາສະ | (ຄວາມບໍ່ຕີສະເໝີ) | ฯลฯ |
| ๑. อะนิดสา | (ຄວາມບໍ່ຣິດສະຫຍາ) | ๔. อะมัดสะริยะ | (ຄວາມບໍ່ຂີ້ຖີ່) | ฯลฯ |
| ๑. อะมายะ | (ບໍ່ມີມານຍາ) | ๔. อะสาเถียยะ | (ຄວາມບໍ່ໂອ້ອວດ) | ฯลฯ |
| ๑. หิริ | (ຄວາມອາຍບາບ) | ๔. โอดตັບປະ | (ຄວາມຢ້ານບາບ) | ฯลฯ |

ພິກຂຸທັງຫຼາຍ ທຳທີ່ບໍ່ມີຄວາມບຽດບຽນ ໔ ຢ່າງນີ້ແລ (໑-໕໐)

**ອະກຸສົນເປີຍຍາລະ ຈົບ**

## ໖. ວິນະຍະເປີຍຍາລະ

[໔໐໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຕະຖາຄົດບັນຍັດສິກຂາບົດແກ່ເຫຼົ່າສາວົກໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ອຳນາດປະໂຫຍດ ໔ ປະການ ອັນໃດແດ່ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໔. ເພື່ອຄວາມຜາສຸກແຫ່ງສົງ

໑. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ

໑. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໔. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອັດກັ້ນເວນທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໔. ເພື່ອກຳຈັດເວນທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອັດກັ້ນໂທດທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໔. ເພື່ອກຳຈັດໂທດທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອັດກັ້ນໄພທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໔. ເພື່ອກຳຈັດໄພທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອັດກັ້ນອະກຸສົນທຳທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໘. ເພື່ອກຳຈັດອະກຸສົນທຳທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອະນຸເຄາະຄະລິຫັດ
໒. ເພື່ອຕັດຝັກຝ່າຍຂອງພິກຂຸຜູ້ປາຖະໜາຊົ່ວ

໑. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໒. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນຂອງຄົນທີ່ເຫຼື້ອມໃສແລ້ວ

໑. ເພື່ອຄວາມຕັ້ງໝັ້ນແຫ່ງສັດທຳ
໒. ເພື່ອເອື້ອເຟື້ອວິໄນ

ຕະຖາຄົດບັນຍັດສິກຂາບົດແກ່ເຫຼົ່າສາວິກ ໂດຍອາໄສອຳນາດປະໂຫຍດ ໒ ປະການ ນີ້ແລ (໑-໑໐)

[໔໐໔-໔໓໐] ຕະຖາຄົດບັນຍັດປາຕິໂມກແກ່ເຫຼົ່າສາວົກ ໆລໆ ບັນຍັດການສູດ ປາຕິໂມກ ໆລໆ ບັນຍັດການງົດສູດປາຕິໂມກ ໆລໆ ບັນຍັດປະວາຣະນາ ໆລໆ ບັນຍັດການງົດປະວາຣະນາ ໆລໆ ບັນຍັດຕັດຊະນີຍະກຳ ໆລໆ ບັນຍັດນິຍະສະກຳ ໆລໆ ບັນຍັດປັບພາຊະນີຍະກຳ ໆລໆ ບັນຍັດປະຕິສາຣະນີຍະກຳ ໆລໆ ບັນຍັດອຸກເຂປະນີຍະກຳ ໆລໆ ບັນຍັດການໃຫ້ປະຣິວາດ ໆລໆ

ບັນຍັດການດຶງເຂົ້າຫາອາບັດເດີມ ໆລໆ ບັນຍັດການໃຫ້ມານັດ ໆລໆ ບັນຍັດອັບພານ ໆລໆ ບັນຍັດການຮຽກເຂົ້າໝູ່ ໆລໆ ບັນຍັດການຂັບອອກຈາກໝູ່ ໆລໆ ບັນຍັດການອຸປະສົມບົດ ໆລໆ ບັນຍັດຍັດຕິກຳ ໆລໆ ບັນຍັດຍັດຕິທຸຕິຍະກຳ ໆລໆ ບັນຍັດຍັດຕິຈະຕຸດຖະກຳ ໆລໆ ບັນຍັດສິກຂາບົດທີ່ຍັງບໍ່ໄດ້ບັນຍັດ ໆລໆ ບັນຍັດເພີ່ມເຕີມສິກຂາບົດທີ່ບັນຍັດໄວ້ແລ້ວ ໆລໆ ບັນຍັດສຳມຸຂາວິໄນ ໆລໆ ບັນຍັດສະຕິວິໄນ ໆລໆ ບັນຍັດອະມູລະຫະວິໄນ ໆລໆ ບັນຍັດປະຕິນຍາຕະກະຣະນະ ໆລໆ ບັນຍັດເຍພຸຍຍະຊິກາ ໆລໆ ບັນຍັດຕັດສະປາປິຍະສິກາ ໆລໆ ບັນຍັດຕິນະວັດຖາຣະກະໂດຍອາໄສອຳນາດປະໂຫຍດ ໒ ປະການນີ້

ອຳນາດປະໂຫຍດ ໒ ປະການ ອັນໃດແດ່ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ

໑. ເພື່ອຂົ່ມບຸກຄົນຜູ້ເວົ້າຍາກ
໒. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສິນດີງາມ

໑. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໒. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອັດກັ້ນເວນທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໒. ເພື່ອກຳຈັດເວນທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອັດກັ້ນໂທດທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໒. ເພື່ອກຳຈັດໂທດທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອັດກັ້ນໄພທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໒. ເພື່ອກຳຈັດໄພທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອັດກັ້ນອະກຸສົນທຳທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໒. ເພື່ອກຳຈັດອະກຸສົນທຳທັງຫຼາຍອັນຈະບັງເກີດໃນອະນາຄົດ

໑. ເພື່ອອະນຸເຄາະຄະລິຫັດ
໒. ເພື່ອຕັດຝັກຝ່າຍຂອງພິກຂຸຜູ້ປາຖະໜາຊົ່ວ

໑. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໒. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນຂອງຄົນທີ່ເຫຼື້ອມໃສແລ້ວ

໑. ເພື່ອຄວາມຕັ້ງໝັ້ນແຫ່ງສັດທຳ
໒. ເພື່ອເອື້ອເຟື້ອວິໄນ

ພິກຂຸທັງຫຼາຍ ຕະຖາຄົດບັນຍັດຕິນະວັດຖາຣະກະແກ່ເຫຼົ່າສາວົກ ໂດຍອາໄສອຳນາດປະໂຫຍດ ໒ ປະການນີ້ແລ (໑໑-໖໐໐)

**ວິນະຍະເປີຍຍາລະ ຈົບ**

## ໒. ຣາຄະເປີຍຍາລະ

[໒໖໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໒ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໒ ປະການ ອັນໃດແດ່ ຄື

໑. ສະມະຖະ (ການເຝິກຈິດໃຫ້ສະງົບເປັນສະມາທິ)

໔. ວິປັດສະນາ (ຄວາມເຫັນແຈ້ງ)

ພິກຂຸຄວນຈະເລີນທຳ ໔ ປະການນີ້ເພື່ອຮູ້ຍິ່ງຣາຄະ ໆລໆ

ເພື່ອກຳນົດຮູ້ຣາຄະ (ຄວາມກຳໜັດ) ໆລໆ ເພື່ອຄວາມສິ້ນຣາຄະ ໆລໆ ເພື່ອລະຣາຄະ ໆລໆ ເພື່ອຄວາມສິ້ນໄປແຫ່ງຣາຄະ ໆລໆ ເພື່ອຄວາມເສື່ອມໄປແຫ່ງຣາຄະ ໆລໆ ເພື່ອຄວາມຄາຍອອກແຫ່ງຣາຄະ ໆລໆ ເພື່ອຄວາມດັບແຫ່ງຣາຄະ ຯລຯ ເພື່ອຄວາມສະລະຣາຄະ ໆລໆ ເພື່ອຄວາມສະລະຄືນຣາຄະ ພິກຂຸຄວນຈະເລີນທຳ ໔ ປະການນີ້ ຯລຯ (໑-໑໐)

[໔໓໔-໔໔໖] ເພື່ອຮູ້ຍິ່ງໂທສະ (ຄວາມຄິດປະທຸດສະຮ້າຍ) ໆລໆ ເພື່ອກຳນົດຮູ້ໂທສະ ໆລໆ ເພື່ອຄວາມສິ້ນໂທສະ ໆລໆ ເພື່ອລະໂທສະ ໆລໆ ເພື່ອຄວາມສິ້ນໄປແຫ່ງໂທສະ ໆລໆ ເພື່ອຄວາມເສື່ອມໄປ ແຫ່ງໂທສະ ໆລໆ ເພື່ອຄວາມຄາຍອອກແຫ່ງໂທສະ ໆລໆ ເພື່ອຄວາມດັບໄປແຫ່ງໂທສະ ໆລໆ ເພື່ອຄວາມສະລະໂທສະ ໆລໆ ເພື່ອຄວາມສະລະຄືນໂທສະ ໆລໆ ໂມຫະ(ຄວາມຫຼົງ) ໆລໆ ໂກທະ (ຄວາມໂກດ) ໆລໆ ອຸປະນາຫະ (ຄວາມຜູກໂກດ) ໆລໆ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ໆລໆ ປະລາສະ (ຄວາມຕີສະເໝີ) ໆລໆ ອິດສາ (ຄວາມຣິດສະຫຍາ) ໆລໆ ມັດສະຣິຍະ (ຄວາມຂີ້ຖີ່) ໆລໆ ມາຍາ (ມານຍາ) ໆລໆ ສາເຖີຍຍະ (ຄວາມໂອ້ອວດ) ໆລໆ ຖຳພະ (ຄວາມຫົວດື້) ໆລໆ ສາຣຳພະ (ຄວາມແຂ່ງດີ) ໆລໆ ມານະ (ຄວາມຖືໂຕ) ໆລໆ ອະຕິມານະ (ຄວາມດູໝິ່ນເຂົາ) ໆລໆ ມະທະ (ຄວາມມົວເມົາ) ໆລໆ ປະມາທະ (ຄວາມຜະໝາດ) ໆລໆ

ພິກຂຸຄວນຈະເລີນທຳ ໔ ປະການນີ້

ທຳ ໔ ປະການ ອັນໃດແດ່ ຄື

໑. ສະມະຖະ ໔. ວິປັດສະນາ

ພິກຂຸທັງຫຼາຍ ພິກຂຸຄວນຈະເລີນທຳ ໔ ປະການນີ້ ເພື່ອກຳຈັດຄວາມຜະໝາດ (໑໑-໑໗໐)

(ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນ ມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າ)

**ຣາຄະເປີຍຍາລະ ຈົບ**

**ທຸກະນິບາດ ຈົບບໍລິບູນ**

# ພຣະສູດຕັນຕະປິດົກ

## ອັງຄຸດຕະຣະນິກາຍ ຕິກນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

## ໑. ປະຖົມປັນນາດ

## ໑. ພາລະວັກ

### ໝວດວ່າດ້ວຍຄົນພານແລະບັນດິດ

### ໑. ພະຍະສູດ

### ວ່າດ້ວຍຜູ້ເປັນໄພແລະບໍ່ເປັນໄພ

[໑] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະ ເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງ ໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ໄພທີ່ເກີດຂຶ້ນທັງໝົດ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ອຸປັດທະວະທີ່ເກີດຂຶ້ນທັງໝົດ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ອຸປະສັກທີ່ເກີດຂຶ້ນທັງໝົດ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ

ໄພທີ່ເກີດຂຶ້ນທັງໝົດ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ອຸປັດທະວະທີ່ເກີດຂຶ້ນທັງໝົດ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ອຸປະສັກທີ່ເກີດຂຶ້ນທັງໝົດ ລ້ວນເກີດຈາກຄົນພານ ບໍ່ແມ່ນເກີດຈາກບັນດິດ ປຽບຄື ໄຟທີ່ລຸກລາມຈາກເຮືອນໄມ້ອໍ້ ຫຼື ເຮືອນຫຍ້າ ໄໝ້ແມ່ນເຮືອນຍອດທີ່ເຂົາໂບກທັງພາຍໃນ ແລະພາຍນອກ ລົມພັດເຂົ້າບໍ່ໄດ້ ມີບານປະຕູອັດແຈບດີ ປ່ອງຢ້ຽມອັດແຈບສະນິດ ສັນນັ້ນ ຄົນພານມີໄພ ບັນດິດບໍ່ມີໄພ ຄົນພານມີ

ອຸປັດທະວະ ບັນດິດບໍ່ມີອຸປັດທະວະ ຄົນພານມີອຸປະສັກ ບັນດິດບໍ່ມີອຸປະສັກ ໄພບໍ່ມີຈາກບັນດິດ ອຸປັດທະວະບໍ່ມີຈາກບັນດິດ ອຸປະສັກບໍ່ມີຈາກບັນດິດ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ບຸກຄົນປະກອບດ້ວຍທຳ ໓ ປະການໃດ ເພິ່ງຮູ້ວ່າ ເປັນຄົນພານ ເຮົາຈັກປະພຶດເວັ້ນທຳ ໓ ປະການນັ້ນ ບຸກຄົນປະກອບດ້ວຍທຳ ໓ ປະການໃດ ເພິ່ງຮູ້ວ່າ ເປັນບັນດິດ ເຮົາຈັກຖື ປະຕິບັດທຳ ໓ ປະການນັ້ນ"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ພະຍະສູດທີ ໑ ຈົບ**

## ໔. ລັກຂະນະສູດ

### ວ່າດ້ວຍລັກສະນະຄົນພານແລະບັນດິດ

[໔] ພິກຂຸທັງຫຼາຍ ຄົນພານມີກຳເປັນເຄື່ອງກຳນົດ ບັນດິດມີກຳເປັນເຄື່ອງກຳນົດ ປັນຍາເມື່ອໃຊ້ເປັນປະຈຳຈຶ່ງງົດງາມ ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນຄົນພານ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍກາຍ)
໔. ວະຈີທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍວາຈາ)
໓. ມະໂນທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍໃຈ)

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນຄົນພານ

ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນບັນດິດ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍສຸດຈະຣິດ (ຄວາມປະພຶດຖືກດ້ວຍກາຍ)
໔. ວະຈີສຸດຈະຣິດ (ຄວາມປະພຶດຖືກດ້ວຍວາຈາ)
໓. ມະໂນສຸດຈະຣິດ (ຄວາມປະພຶດຖືກດ້ວຍໃຈ)

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນບັນດິດ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ບຸກຄົນປະກອບດ້ວຍທຳ ໓ ປະການໃດ ເພິ່ງຮູ້ວ່າ ເປັນຄົນພານ ເຮົາຈັກປະພຶດເວັ້ນທຳ ໓ ປະການນັ້ນ ບຸກຄົນປະກອບດ້ວຍທຳ ໓ ປະການໃດ ເພິ່ງຮູ້ວ່າ ເປັນບັນດິດ ເຮົາຈັກຖືປະຕິບັດທຳ ໓ ປະການນັ້ນ"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ລັກຂະນະສູດ ທີ ໔ ຈົບ**

## ໓. ຈິນຕີສູດ

## ວ່າດ້ວຍຄວາມຄິດລະຫວ່າງຄົນພານກັບບັນດິດ

[໓] ພິກຂຸທັງຫຼາຍ ລັກສະນະແຫ່ງຄົນພານ ເຄື່ອງໝາຍແຫ່ງຄົນພານ ຄວາມປະພຶດບໍ່ຂາດສາຍແຫ່ງຄົນພານ ໓ ປະການນີ້

ລັກສະນະແຫ່ງຄົນພານ ໓ ປະການ ອັນໃດແດ່ ຄື ຄົນພານໃນໂລກນີ້

໑. ມັກຄິດແຕ່ເລື້ອງຊົ່ວ
໒. ມັກເວົ້າແຕ່ເລື້ອງຊົ່ວ
໓. ມັກເຮັດແຕ່ກຳຊົ່ວ

ຖ້າຄົນພານບໍ່ມັກຄິດເລື້ອງຊົ່ວ ບໍ່ມັກເວົ້າເລື້ອງຊົ່ວ ບໍ່ມັກເຮັດກຳຊົ່ວເຊັ່ນນັ້ນ ບັນດິດທັງຫຼາຍຈະເພິ່ງຮູ້ຈັກເຂົາດ້ວຍເຫດໃດວ່າ "ຜູ້ນີ້ເປັນຄົນພານ ບໍ່ແມ່ນຄົນດີ" ແຕ່ຍ້ອນ ຄົນພານມັກຄິດແຕ່ເລື້ອງຊົ່ວ ມັກເວົ້າແຕ່ເລື້ອງຊົ່ວ ແລະມັກເຮັດແຕ່ກຳຊົ່ວ ສັນນັ້ນບັນດິດ ທັງຫຼາຍຈຶ່ງຮູ້ຈັກເຂົາວ່າ "ຜູ້ນີ້ເປັນຄົນພານ ບໍ່ແມ່ນຄົນດີ"

ລັກສະນະແຫ່ງຄົນພານ ເຄື່ອງໝາຍແຫ່ງຄົນພານ ຄວາມປະພຶດບໍ່ຂາດສາຍແຫ່ງຄົນພານ ໓ ປະການນີ້ແລ

ລັກສະນະແຫ່ງບັນດິດ ເຄື່ອງໝາຍແຫ່ງບັນດິດ ຄວາມປະພຶດບໍ່ຂາດສາຍແຫ່ງບັນດິດ ໓ ປະການນີ້

ລັກສະນະແຫ່ງບັນດິດ ໓ ປະການ ອັນໃດແດ່ ຄື ບັນດິດໃນໂລກນີ້

໑. ມັກຄິດແຕ່ເລື້ອງດີ
໒. ມັກເວົ້າແຕ່ເລື້ອງດີ
໓. ມັກເຮັດແຕ່ກຳດີ

ຖ້າບັນດິດບໍ່ມັກຄິດເລື້ອງດີ ບໍ່ມັກເວົ້າເລື້ອງດີ ແລະບໍ່ມັກເຮັດກຳດີເຊັ່ນນັ້ນ ບັນດິດທັງຫຼາຍຈະເພິ່ງຮູ້ຈັກເຂົາດ້ວຍເຫດໃດວ່າ “ຜູ້ນີ້ເປັນບັນດິດ ເປັນຄົນດີ” ແຕ່ຍ້ອນບັນດິດມັກຄິດແຕ່ເລື້ອງດີ ມັກເວົ້າແຕ່ເລື້ອງດີ ແລະມັກເຮັດແຕ່ກຳດີ ສັນນັ້ນບັນດິດ ທັງຫຼາຍຈຶ່ງຮູ້ຈັກເຂົາວ່າ “ຜູ້ນີ້ເປັນບັນດິດເປັນຄົນດີ”

ລັກສະນະແຫ່ງບັນດິດ ເຄື່ອງໝາຍແຫ່ງບັນດິດ ຄວາມປະພຶດບໍ່ຂາດສາຍແຫ່ງບັນດິດ ໓ ປະການນີ້ແລ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ “ບຸກຄົນປະກອບດ້ວຍ ທຳ ໓ ປະການໃດ ເພິ່ງຮູ້ວ່າ ເປັນຄົນພານ ເຮົາຈັກປະພຶດເວັ້ນທຳ ໓ ປະການນັ້ນ ບຸກຄົນປະກອບດ້ວຍທຳ ໓ ປະການໃດ ເພິ່ງຮູ້ວ່າ ເປັນບັນດິດ ເຮົາຈັກຖືປະຕິບັດທຳ ໓ ປະການນັ້ນ”

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ແລ

**ຈິນຕີສູດ ທີ ໓ ຈົບ**

## ໔. ອັດຈະຍະສູດ

## ວ່າດ້ວຍການເຫັນໂທດແລະບໍ່ເຫັນໂທດ

[໔] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນຄົນພານ

ທຳ ໓ ປະການ ອັນໃດແດ່ ຄື

໑. ບໍ່ເຫັນໂທດໂດຍຄວາມເປັນໂທດ
໒. ເຫັນໂທດໂດຍຄວາມເປັນໂທດແລ້ວ ບໍ່ແກ້ໄຂຕາມສົມຄວນແກ່ຄວາມຜິດ
໓. ເມື່ອຜູ້ອື່ນຊີ້ໂທດຢູ່ ບໍ່ຍອມຮັບຕາມສົມຄວນແກ່ຄວາມຜິດ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນຄົນພານ

ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນບັນດິດ

ທຳ ໓ ປະການ ອັນໃດແດ່ ຄື

໑. ເຫັນໂທດໂດຍຄວາມເປັນໂທດ
໒. ເຫັນໂທດໂດຍຄວາມເປັນໂທດແລ້ວ ແກ້ໄຂຕາມສົມຄວນແກ່ຄວາມຜິດ

໓. ເມື່ອຜູ້ອື່ນຊີ້ໂທດຢູ່ ກໍຍອມຮັບຕາມສົມຄວນແກ່ຄວາມຜິດ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນບັນດິດ
ຍ້ອນເຫດນັ້ນ ຯລຯ

**ອັດຈະຍະສູດ ທີ ໔ ຈົບ**

# ໕. ອະໂຍນິໂສສູດ

## ວ່າດ້ວຍການຖາມ - ຕອບໂດຍບໍ່ແຍບຄາຍ

[໕] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນ ຄົນພານ

ທຳ ໓ ປະການ ອັນໃດແດ່ ຄື

໑. ຕັ້ງບັນຫາໂດຍບໍ່ແຍບຄາຍ
໒. ຕອບບັນຫາໂດຍບໍ່ແຍບຄາຍ
໓. ບໍ່ຊົມຊື່ນຍິນດີບັນຫາທີ່ຜູ້ອື່ນຕອບໂດຍແຍບຄາຍ ດ້ວຍບົດພະຍັນຊະນະທີ່ເໝາະສົມ ສະຫຼະສະຫຼວຍ ເຂົ້າຮູບ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນຄົນພານ

ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນບັນດິດ

ທຳ ໓ ປະການ ອັນໃດແດ່ ຄື

໑. ຕັ້ງບັນຫາໂດຍແຍບຄາຍ
໒. ຕອບບັນຫາໂດຍແຍບຄາຍ
໓. ຊົມຊື່ນຍິນດີບັນຫາທີ່ຜູ້ອື່ນຕອບໂດຍແຍບຄາຍ ດ້ວຍບົດພະຍັນຊະນະທີ່ເໝາະສົມ ສະຫຼະສະຫຼວຍ ເຂົ້າຮູບ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນບັນດິດ
ຍ້ອນເຫດນັ້ນ ຯລຯ

**ອະໂຍນິໂສສູດ ທີ ໕ ຈົບ**

## ໖. ອະກຸສົນລະສູດ

## ວ່າດ້ວຍອະກຸສົນກຳ

[໖] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນຄົນພານ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ເປັນອະກຸສົນ ໒. ວະຈີກຳທີ່ເປັນອະກຸສົນ
໓. ມະໂນກຳທີ່ເປັນອະກຸສົນ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນຄົນພານ

ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນບັນດິດ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ເປັນກຸສົນ ໒. ວະຈີກຳທີ່ເປັນກຸສົນ
໓. ມະໂນກຳທີ່ເປັນກຸສົນ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນບັນດິດ
ຍ້ອນເຫດນັ້ນ ຯລຯ

**ອະກຸສົນລະສູດທີ ໖ ຈົບ**

## ໗. ສາວັດຊະສູດ

## ວ່າດ້ວຍກຳທີ່ມີໂທດ

[໗] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນ ຄົນພານ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ມີໂທດ ໒. ວະຈີກຳທີ່ມີໂທດ
໓. ມະໂນກຳທີ່ມີໂທດ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນຄົນພານ

ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນບັນດິດ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ບໍ່ມີໂທດ
໒. ວະຈີກຳທີ່ບໍ່ມີໂທດ
໓. ມະໂນກຳທີ່ບໍ່ມີໂທດ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນບັນດິດ
ຍ້ອນເຫດນັ້ນ ຯລຯ

**ສາວັດຊະສູດ ທີ ໗ ຈົບ**

## ໘. ສັບພະຍາປັດຊະສູດ

## ວ່າດ້ວຍກຳທີ່ມີຄວາມບຽດບຽນ

[໘] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນຄົນພານ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ມີຄວາມບຽດບຽນ
໒. ວະຈີກຳທີ່ມີຄວາມບຽດບຽນ
໓. ມະໂນກຳທີ່ມີຄວາມບຽດບຽນ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນຄົນພານ

ບຸກຄົນປະກອບດ້ວຍທຳ ໓ ປະການ ເພິ່ງຮູ້ວ່າ ເປັນບັນດິດ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳທີ່ບໍ່ມີຄວາມບຽດບຽນ
໒. ວະຈີກຳທີ່ບໍ່ມີຄວາມບຽດບຽນ
໓. ມະໂນກຳທີ່ບໍ່ມີຄວາມບຽດບຽນ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ເພິ່ງຮູ້ວ່າ ເປັນບັນດິດ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ບຸກຄົນປະກອບດ້ວຍ ທຳ ໓ ປະການໃດ ເພິ່ງຮູ້ວ່າ ເປັນຄົນພານ ເຮົາຈັກປະພຶດເວັ້ນທຳ ໓ ປະການ ນັ້ນ ບຸກຄົນປະກອບດ້ວຍທຳ ໓ ປະການໃດ ເພິ່ງຮູ້ວ່າ ເປັນບັນດິດ ເຮົາຈັກຖື ປະຕິບັດທຳ ໓ ປະການນັ້ນ"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ສັບພະຍາປັດຊະສູດທີ ໗ ຈົບ**

## ໘. ຂະຕະສູດ

## ວ່າດ້ວຍການບໍລິຫານຕົນໃຫ້ຖືກກຳຈັດ

[໘] ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໓ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບ໑ສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍທຸດຈະຣິດ

໒. ວະຈີທຸດຈະຣິດ

໓. ມະໂນທຸດຈະຣິດ

ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໓ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໓ ປະການ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍສຸດຈະຣິດ

໒. ວະຈີສຸດຈະຣິດ

໓. ມະໂນສຸດຈະຣິດ

ພິກຂຸທັງຫຼາຍ ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໓ ປະການນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະ ປະສົບບຸນຫຼວງຫຼາຍ

**ຂະຕະສູດ ທີ ໙ ຈົບ**

## ໑໐. ມະລະສູດ

## ວ່າດ້ວຍການລະມົນທິນ

[໑໐] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ບໍ່ລະມົນທິນ[1] ໓ ປະການ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໓ ປະການ ອັນໃດແດ່ ຄື

໑. ເປັນຄົນທຸສິນແລະບໍ່ລະມົນທິນຄືຄວາມເປັນຄົນທຸສິນ
໒. ເປັນຄົນຣິດສະຫຍາແລະບໍ່ລະມົນທິນຄືຄວາມຣິດສະຫຍາ
໓. ເປັນຄົນຂີ້ຖີ່ແລະບໍ່ລະມົນທິນຄືຄວາມຂີ້ຖີ່

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ບໍ່ລະມົນທິນ ໓ ປະການນີ້ດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ບຸກຄົນປະກອບດ້ວຍທຳ ໓ ປະການ ລະມົນທິນ ໓ ປະການ ຍ່ອມດຳລົງຢູ່ໃນ ສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໓ ປະການ ອັນໃດແດ່ ຄື

໑. ມີສິນແລະລະມົນທິນຄືຄວາມເປັນຄົນທຸສິນ
໒. ບໍ່ຣິດສະຫຍາແລະລະມົນທິນຄືຄວາມຣິດສະຫຍາ
໓. ບໍ່ຂີ້ຖີ່ແລະລະມົນທິນຄືຄວາມຂີ້ຖີ່

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການນີ້ແລ ລະມົນທິນ ໓ ປະການນີ້ດຳ ລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມະລະສູດ ທີ ໑໐ ຈົບ**

**ພາລະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື



# ໔. ຣະຖະກາຣະວັກ

## ໝວດວ່າດ້ວຍຊ່າງລົດ

### ໑. ຍາຕະສູດ

### ວ່າດ້ວຍພິກຂຸຜູ້ມີຊື່ສຽງ

[໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸທີ່ມີຊື່ສຽງ ປະກອບດ້ວຍທໍາ ໓ ປະການ ປະຕິບັດເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດ ທັງຫຼາຍ

ທໍາ ໓ ປະການ ອັນໃດແດ່ ຄື

໑. ຊັກຊວນໃນກາຍຍະກໍາທີ່ບໍ່ສົມຄວນ
໒. ຊັກຊວນໃນວະຈີກໍາທີ່ບໍ່ສົມຄວນ
໓. ຊັກຊວນໃນທໍາທີ່ບໍ່ສົມຄວນ

ພິກຂຸທີ່ມີຊື່ສຽງ ປະກອບດ້ວຍທໍາ ໓ ປະການນີ້ແລ ປະຕິບັດເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະມະນຸດທັງຫຼາຍ

ພິກຂຸທີ່ມີຊື່ສຽງ ປະກອບດ້ວຍທໍາ ໓ ປະການ ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

ທໍາ ໓ ປະການ ອັນໃດແດ່ ຄື

໑. ຊັກຊວນໃນກາຍຍະກຳທີ່ສົມຄວນ ໒. ຊັກຊວນໃນວະຈີກຳທີ່ສົມຄວນ
໓. ຊັກຊວນໃນທຳທີ່ສົມຄວນ

ພິກຂຸທັງຫຼາຍ ພິກຂຸທີ່ມີຊື່ສຽງ ປະກອບດ້ວຍທຳ ໓ ປະການນີ້ແລ ປະຕິບັດເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອປະໂຫຍດແກ່ຄົນທັງຫຼາຍ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ

**ຍາຕະສູດ ທີ ໑ ຈົບ**

## ໒. ສາຣະນີຍະສູດ

## ວ່າດ້ວຍສະຖານທີ່ອັນກະສັດແລະພິກຂຸເພິ່ງຣະນຶກເຖິງຕະຫຼອດຊີວິດ

[໑໒] ພິກຂຸທັງຫຼາຍ ສະຖານທີ ໓ ແຫ່ງນີ້ເປັນສະຖານທີ່ອັນກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກ໑ແລ້ວເພິ່ງຣະນຶກເຖິງຕະຫຼອດພຣະຊົນມະຊີບ

ສະຖານທີ ໓ ແຫ່ງ ອັນໃດແດ່ ຄື

໑. ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ປະສູດທີ່ສະຖານບ່ອນໃດສະຖານທີ່ນີ້ເປັນສະຖານທີ່ແຫ່ງທີ ໑ ອັນກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ເພິ່ງຣະນຶກເຖິງຕະຫຼອດພຣະຊົນມະຊີບ

໒. ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວທີ່ສະຖານບ່ອນໃດ ສະຖານທີ່ນີ້ເປັນສະຖານທີ່ແຫ່ງທີ ໒ ອັນກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວເພິ່ງຣະນຶກເຖິງຕະຫຼອດພຣະຊົນມະຊີບ

໓. ກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ຊົງຊະນະສົງຄາມຄັ້ງໃຫຍ່ ພິຊິດໄຊສົງຄາມ ຄອບຄອງສະໜາມຮົບໃດ ສະໜາມຮົບນີ້ເປັນສະຖານທີ່ແຫ່ງທີ ໓ ອັນກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ເພິ່ງຣະນຶກເຖິງຕະຫຼອດ ພຣະຊົນມະຊີບ

ສະຖານທີ ໓ ແຫ່ງນີ້ແລ ອັນກະສັດຕາທິຣາດຜູ້ໄດ້ຮັບມຸດທາພິເສກແລ້ວ ເພິ່ງຣະນຶກເຖິງຕະຫຼອດພຣະຊົນມະຊີບ

ແນວນັ້ນຄືກັນແລ ສະຖານທີ ໓ ແຫ່ງນີ້ອັນພິກຂຸເພິ່ງຣະນຶກເຖິງຕະຫຼອດຊີວິດ

ສະຖານທີ ໔ ແຫ່ງ ອັນໃດແດ່ ຄື

໑. ພິກຂຸແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນ ບວດເປັນບັນພະຊິດທີ່ສະຖານບ່ອນໃດ ສະຖານທີ່ນີ້ເປັນສະຖານທີ່ແຫ່ງທີ ໑ ອັນ ພິກຂຸເພິ່ງຣະນຶກເຖິງຕະຫຼອດຊີວິດ

໔. ພິກຂຸຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)" ທີ່ສະຖານບ່ອນໃດ ສະຖານທີ່ນີ້ເປັນສະຖານທີ່ແຫ່ງທີ ໔ ອັນພິກຂຸເພິ່ງຣະນຶກເຖິງຕະຫຼອດຊີວິດ

໕. ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນ ອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນທີ່ສະຖານບ່ອນໃດສະຖານທີ່ນີ້ເປັນສະຖານທີ່ແຫ່ງທີ ໕ ອັນພິກຂຸເພິ່ງຣະນຶກເຖິງຕະຫຼອດຊີວິດ

ພິກຂຸທັງຫຼາຍ ສະຖານທີ່ ໕ ແຫ່ງນີ້ແລ ອັນພິກຂຸເພິ່ງຣະນຶກເຖິງຕະຫຼອດຊີວິດ

**ສາຣະນີຍະສູດ ທີ ໔ ຈົບ**

## ໕. ອາສັງສະສູດ

## ວ່າດ້ວຍຄວາມຫວັງທາງໂລກແລະທາງທໍາ

[໑໕] ພິກຂຸທັງຫຼາຍ ບຸກຄົນ ໓ ຈໍາພວກມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈໍາພວກ ພວກໃດແດ່ ຄື

໑. ບຸກຄົນທີ່ໝົດຄວາມຫວັງ

໒. ບຸກຄົນທີ່ຍັງມີຄວາມຫວັງ

໓. ບຸກຄົນທີ່ປາສະຈາກຄວາມຫວັງ

ບຸກຄົນທີ່ໝົດຄວາມຫວັງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເກີດໃນຕະກູນຕໍ່າ ຄືຕະກູນຈັນທານ ຕະກູນຊ່າງສານ ຕະກູນນາຍພານ ຕະກູນຊ່າງລົດ ຫຼື ຕະກູນຄົນຂົນຂີ້ເຫຍື້ອ ເປັນຕະກູນຍາກຈົນ ມີເຂົ້າ ນໍ້າ ແລະສິ່ງຂອງເຄື່ອງໃຊ້ໜ້ອຍ ເປັນໄປຢ່າງຝືດເຄືອງ ເປັນແຫຼ່ງທີ່ຫາຂອງກິນ ແລະເຄື່ອງນຸ່ງຫົ່ມ

ໄດ້ຍາກ ແລະເຂົາມີຜິວພັນໝົ່ນໝອງ ບໍ່ໜ້າເບິ່ງ ຕ່ຳຕ້ອຍ ມີຄວາມເຈັບປ່ວຍຫຼາຍ ຕາບອດ ເປັນງ່ອຍ ເປັນຄົນບໍ່ສົມປະກອບ ຫຼື ເປັນພະຍາດອຳມະພາດ ມັກບໍ່ໄດ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ແລະເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງທີ່ເຮັດໃຫ້ເກີດແສງ ສະຫວ່າງ ເຂົາຟັງຂ່າວວ່າ "ກະສັດຊົງພຣະນາມແນວນີ້ ໄດ້ຮັບແຕ່ງຕັ້ງໂດຍການອະພິເສກໃຫ້ ເປັນກະສັດ" ເຂົາບໍ່ມີຄວາມຄິດວ່າ "ພວກກະສັດຈັກແຕ່ງຕັ້ງໂຕເຮົາໂດຍການອະພິເສກໃຫ້ເປັນ ກະສັດຈັກເທື່ອໜຶ່ງຢ່າງແນ່ນອນ" ນີ້ຮຽກວ່າ ບຸກຄົນທີ່ໝົດຄວາມຫວັງ

ບຸກຄົນທີ່ຍັງມີຄວາມຫວັງ ເປັນແນວໃດ?

ຄື ພຣະຣາດຊະໂອຣົດພຣະອົງອ້າຍຂອງພຣະຣາຊາມະຫາກະສັດ ຜູ້ໄດ້ຮັບມຸດທາພິ ເສກແລ້ວໃນໂລກນີ້ ຜູ້ຍັງບໍ່ໄດ້ຮັບການແຕ່ງຕັ້ງໂດຍການອະພິເສກ ເຖິງຄວາມບໍ່ຫວັ່ນໄຫວ ພຣະອົງສະດັບວ່າ "ກະສັດຜູ້ມີພຣະນາມແນວນີ້ໄດ້ຮັບແຕ່ງຕັ້ງໂດຍການອະພິເສກໃຫ້ເປັນ ກະສັດ" ພຣະອົງ ຊົງດຳຣິແນວນີ້ວ່າ "ພວກກະສັດຈັກແຕ່ງຕັ້ງເຮົາໂດຍການອະພິເສກໃຫ້ເປັນ ກະສັດຈັກເທື່ອໜຶ່ງຢ່າງແນ່ນອນ" ນີ້ຮຽກວ່າ ບຸກຄົນທີ່ຍັງມີຄວາມຫວັງ

ບຸກຄົນທີ່ປາສະຈາກຄວາມຫວັງ ເປັນແນວໃດ?

ຄື ພຣະຣາຊາໃນໂລກນີ້ ເປັນກະສັດຜູ້ໄດ້ຮັບມຸດທາພິເສກແລ້ວ ພຣະອົງສະດັບວ່າ "ກະສັດຜູ້ມີພຣະນາມແນວນີ້ໄດ້ຮັບແຕ່ງຕັ້ງໂດຍການອະພິເສກໃຫ້ເປັນກະສັດ" ພຣະອົງຍ່ອມບໍ່ ຊົງດຳຣິວ່າ "ພວກກະສັດຈັກແຕ່ງຕັ້ງແນ່ນເຮົາໂດຍການອະພິເສກໃຫ້ເປັນກະສັດຈັກເທື່ອໜຶ່ງ ຢ່າງແນ່ນອນ" ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຄວາມຫວັງໃນການອະພິເສກຂອງພຣະອົງ ເມື່ອຄັ້ງຍັງ ບໍ່ໄດ້ຮັບການອະພິເສກລະງັບໄປແລ້ວ ນີ້ຮຽກວ່າ ບຸກຄົນທີ່ປາສະຈາກຄວາມຫວັງ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ ສັນໃດ

ບຸກຄົນ ໓ ຈຳພວກກໍມີຜາກົດຢູ່ໃນໝູ່ພິກຂຸ ຄືກັນສັນນັ້ນແລ

ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນທີ່ໝົດຄວາມຫວັງ
໒. ບຸກຄົນທີ່ຍັງມີຄວາມຫວັງ
໓. ບຸກຄົນທີ່ປາສະຈາກຄວາມຫວັງ

ບຸກຄົນທີ່ໝົດຄວາມຫວັງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຄົນທຸສີນ[១] ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ ໜ້າລັງກຽດ ມີການງານປົກປິດ ບໍ່ແມ່ນສະມະນະ ແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມ

ມະຈາຣີ ແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນຄືຂີ້ເຫຍື້ອ ທ່ານສະດັບວ່າ "ພິກຂຸຊື່ນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໝົດໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ທ່ານບໍ່ມີຄວາມຄິດແນວນີ້

ວ່າ "ແມ່ນເຮົາກໍຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະ ໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນຈັກເທື່ອໜຶ່ງຢ່າງແນ່ນອນ" ນີ້ຮຽກວ່າ ບຸກຄົນທີ່ໝົດຄວາມຫວັງ

ບຸກຄົນທີ່ຍັງມີຄວາມຫວັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສິນ ມີກັນລະຍານະທຳ ທ່ານສະດັບວ່າ "ພິກຂຸຊື່ນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ" ທ່ານມີຄວາມຄິດແນວນີ້ວ່າ "ແມ່ນເຮົາກໍຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນຈັກເທື່ອໜຶ່ງຢ່າງແນ່ນອນ" ນີ້ຮຽກວ່າ ບຸກຄົນທີ່ຍັງມີຄວາມຫວັງ

ບຸກຄົນທີ່ປາສະຈາກຄວາມຫວັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນພຣະອະຣະຫັນ ສິ້ນອາສະວະ ທ່ານສະດັບວ່າ "ພິກຂຸຊື່ນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປນຳປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ທ່ານບໍ່ມີຄວາມຄິດແນວນີ້ວ່າ "ແມ່ນເຮົາກໍຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປນຳປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນຈັກເວລາໜຶ່ງຢ່າງແນ່ນອນ" ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຄວາມຫວັງໃນຄວາມ ລຸດພົ້ນຂອງທ່ານເມື່ອຄັ້ງຍັງບໍ່ລຸດພົ້ນລະງັບໄປແລ້ວ ນີ້ຮຽກວ່າ ບຸກຄົນທີ່ປາສະຈາກຄວາມຫວັງ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລມີຜາກົດຢູ່ໃນໝູ່ພິກຂຸ

**ອາສັງສະສູດທີ ໓ ຈົບ**

## ໔. ຈັກກະວັດຕິສູດ

### ວ່າດ້ວຍຄວາມເປັນຣາຊາຂອງພຣະເຈົ້າຈັກກະພັດແລະພຣະພຸດທະເຈົ້າ

[໑໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳມະຣາຊາ ຍ່ອມບໍ່ຊົງໃຫ້ກົງຈັກທີ່ບໍ່ແມ່ນຂອງພຣະຣາຊາໝຸນໄປ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດເປັນຣາຊາຂອງພຣະເຈົ້າຈັກກະພັດຜູ້ຊົງທຳເປັນທຳມະຣາຊາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ທຳເປັນຣາຊາຂອງພຣະເຈົ້າຈັກກະພັດຜູ້ຊົງທຳເປັນທຳມະຣາຊາ" ແລ້ວຕັດຕໍ່ໄປ ວ່າ

໑. ພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳມະຣາຊາໃນໂລກນີ້ຊົງອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຖືຮັກສາ ປ້ອງກັນ ແລະຄຸ້ມຄອງ ຊົນພາຍໃນໂດຍທຳ

໔. ພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳມະຣາຊາ ຊົງອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຖືຮັກສາ ປ້ອງກັນ ແລະຄຸ້ມຄອງພວກກະສັດ ຜູ້ຕາມສະເດັດ ກຳລັງພົນ ພາມ ຄະຫະບໍດີ ຊາວນິຄົມ ຊາວຊົນນະບົດ ສະມະນະພາມ ສັດຈຳພວກເນື້ອ ແລະນົກໂດຍທຳ

໕. ພຣະເຈົ້າຈັກກະພັດນັ້ນແລຜູ້ຊົງທຳ ເປັນທຳມະຣາຊາ ຊົງອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຖືຮັກສາ ປ້ອງກັນ ແລະຄຸ້ມຄອງ ຊົນພາຍໃນ ພວກກະສັດ ໆລໆ ກຳລັງພົນ ໆລໆ ພາມ ຄະຫະບໍດີ ໆລໆ ຊາວນິຄົມ ຊາວຊົນນະບົດ ໆລໆ ສະມະນະພາມ ໆລໆ ສັດຈຳພວກເນື້ອ ແລະນົກໂດຍທຳ ແລ້ວຈຶ່ງໃຫ້ກົງຈັກໝຸນໄປໂດຍທຳທີ່ນັ້ນ ກົງຈັກນັ້ນໃຜ ໆ ທີ່ເປັນມະນຸດ ເປັນຂ້າເສິກ ແລະເປັນສັດມີຊີວິດ ໃຫ້ໝຸນກັບບໍ່ໄດ້

ໃນທຳນອງດຽວກັນ

໑. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າຜູ້ຊົງທຳ ເປັນທຳມະຣາຊາ ຊົງ ອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຖືຮັກສາ ປ້ອງກັນ ແລະ ຄຸ້ມຄອງກາຍຍະກຳໂດຍທຳວ່າ "ກາຍຍະກຳແນວນີ້ຄວນເສບ ກາຍຍະກຳແນວນີ້ບໍ່ຄວນເສບ"

໔. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຜູ້ຊົງທຳ ເປັນທຳມະຣາຊາ ຊົງອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຖືຮັກສາ ປ້ອງກັນ ແລະ ຄຸ້ມຄອງວະຈີກຳໂດຍທຳວ່າ "ວະຈີກຳແບບນີ້ຄວນເສບ ວະຈີກຳແບບນີ້ບໍ່ຄວນເສບ"

໕. ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຜູ້ຊົງທຳ ເປັນທຳມະຣາຊາ ຊົງອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຖືຮັກສາ ປ້ອງກັນ ແລະ ຄຸ້ມຄອງມະໂນກຳໂດຍທຳວ່າ "ມະໂນກຳແບບນີ້ຄວນເສບ ມະໂນກຳແບບນີ້ບໍ່ຄວນເສບ"

ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນແລ ຜູ້ຊົງທຳ ເປັນທຳມະຣາຊາ ຊົງອາໄສທຳທີ່ນັ້ນ ສັກກາຣະທຳ ເຄົາລົບທຳ ນອບນ້ອມທຳ ເຊີດຊູທຳ ຍ້ອງຍໍທຳ ມີທຳເປັນໃຫຍ່ ຊົງຈັດການຖືຮັກສາ ປ້ອງກັນ ແລະຄຸ້ມຄອງກາຍຍະກຳ ວະຈີກຳ ແລະມະໂນກຳໂດຍທຳແລ້ວ ຈຶ່ງຊົງໃຫ້ທຳມະຈັກທີ່ຍອດຢ້ຽມໝຸນໄປໂດຍທຳທີ່ນັ້ນ ຈັກນັ້ນອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກໃຫ້ໝຸນກັບບໍ່ໄດ້

**ຈັກກະວັດຕິສູດ ທີ ໔ ຈົບ**

## ໕. ປະເຈຕະນະສູດ

## ວ່າດ້ວຍພຣະເຈົ້າປະເຈຕະນະຮັບສັ່ງໃຫ້ຊ່າງເຮັດລໍ້ລົດ

[໑໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ມີພຣະຣາຊາພຣະອົງໜຶ່ງຊົງພຣະນາມວ່າ ປະເຈຕະນະ ຄັ້ງນັ້ນ ພຣະເຈົ້າປະເຈຕະນະຮັບສັ່ງຮຽກນາຍຊ່າງລົດມາຕັດວ່າ "ນາຍຊ່າງລົດສະຫາຍຮັກ ນັບແຕ່ນີ້ໄປອີກ ໖ ເດືອນ ເຮົາຈະເຮັດສົງຄາມ ທ່ານຈະສາມາດເຮັດລໍ້ຄູ່ໃໝ່ໃຫ້ເຮົາໄດ້ບໍ?"

ນາຍຊ່າງລົດທູນວ່າ "ສາມາດ ຂ້ານ້ອຍ"

ລຳດັບນັ້ນ ນາຍຊ່າງລົດເຮັດລໍ້ຂ້າງໜຶ່ງສຳເລັດໂດຍໃຊ້ເວລາ ໕ ເດືອນ ໒໔ ມື້

ພຣະເຈົ້າປະເຈຕະນະຮັບສັ່ງຮຽກນາຍຊ່າງລົດມາຕັດວ່າ "ນາຍຊ່າງລົດສະຫາຍຮັກ ນັບຈາກນີ້ໄປ ໖ ມື້ ເຮົາຈະເຮັດສົງຄາມ ລໍ້ຄູ່ໃໝ່ເຮັດສຳເລັດແລ້ວບໍ?"

ນາຍຊ່າງລົດທູນວ່າ "ລໍ້ຂ້າງໜຶ່ງເຮັດສຳເລັດແລ້ວໂດຍໃຊ້ເວລາ ໕ ເດືອນ ໔໔ ມື້ ຂ້ານ້ອຍ"

ພຣະເຈົ້າປະເຈຕະນະຕັດຖາມວ່າ "ນາຍຊ່າງລົດສະຫາຍຮັກ ໂດຍໃຊ້ເວລາ ໖ ມື້ນັບຈາກມື້ນີ້ທ່ານຈັກສາມາດເຮັດລໍ້ທີ ໔ ສຳເລັດໄດ້ບໍ?"

ນາຍຊ່າງລົດທູນຮັບຮອງວ່າ "ສາມາດ ຂ້ານ້ອຍ" ແລ້ວເຮັດລໍ້ທີ ໔ ສຳເລັດໂດຍໃຊ້ເວລາ ໖ ມື້ ຖືລໍ້ຄູ່ໃໝ່ເຂົ້າໄປເຝົ້າພຣະເຈົ້າປະເຈຕະນະຮອດບ່ອນຢູ່ ໄດ້ທູນພຣະເຈົ້າ ປະເຈຕະນະວ່າ "ຂໍເດຊະ ລໍ້ຄູ່ໃໝ່ນີ້ຂອງພຣະອົງສຳເລັດແລ້ວ"

ພຣະເຈົ້າປະເຈຕະນະຮັບສັ່ງຖາມວ່າ "ນາຍຊ່າງລົດສະຫາຍຮັກ ລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໕ ເດືອນ ໔໔ ມື້ ກັບລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໖ ມື້ຂອງທ່ານ ມີເຫດອັນໃດເຮັດໃຫ້ແຕກຕ່າງກັນ ເຮົາຈະເຫັນເຫດທີ່ເຮັດໃຫ້ແຕກຕ່າງກັນໄດ້ແນວໃດ"

ນາຍຊ່າງລົດທູນວ່າ "ຂໍເດຊະ ເຫດທີ່ເຮັດໃຫ້ແຕກຕ່າງກັນມີຢູ່ ຂໍພຣະອົງຈົ່ງທອດພຣະເນດຄວາມແຕກຕ່າງກັນເທີ້ນ"

ລຳດັບນັ້ນແລ ນາຍຊ່າງລົດໝຸນລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໖ ມື້ ລໍ້ນັ້ນເມື່ອນາຍຊ່າງລົດໝຸນກໍໝຸນໄປໄດ້ທໍ່ທີ່ນາຍຊ່າງລົດໝຸນແລ້ວໝຸນວຽນລົ້ມລົງທີ່ພື້ນດິນ ນາຍຊ່າງລົດໝຸນລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໕ ເດືອນ ໔໔ ມື້ ລໍ້ນັ້ນເມື່ອນາຍຊ່າງລົດໝຸນກໍໝຸນໄປໄດ້ທໍ່ທີ່ນາຍຊ່າງລົດໝຸນແລ້ວຕັ້ງຢູ່ໄດ້ຄືຢູ່ໃນເພົາ

ພຣະເຈົ້າປະເຈຕະນະຕັດຖາມວ່າ "ອັນໃດນໍ ເປັນເຫດເປັນປັດໄຈໃຫ້ລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໖ ມື້ນີ້ເມື່ອທ່ານໝຸນໄປຈຶ່ງໝຸນໄປໄດ້ທໍ່ທີ່ທ່ານໝຸນແລ້ວໝຸນວຽນລົ້ມລົງທີ່ພື້ນດິນ ອັນໃດເປັນເຫດເປັນປັດໄຈໃຫ້ລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໕ ເດືອນ ໔໔ ມື້ ເມື່ອທ່ານໝຸນຈຶ່ງໝຸນໄປໄດ້ທໍ່ທີ່ທ່ານໝຸນແລ້ວຕັ້ງຢູ່ໄດ້ຄືຢູ່ໃນເພົາ"

ນາຍຊ່າງລົດຂາບທູນວ່າ "ຂໍເດຊະ ກົງຂອງລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໖ ມື້ຄົດ ມີຕຸ່ມຕາ ທັງແກ່ນແລະນອກຍັງມີຢາງ ແມ່ນກຳກໍຄົດ ມີຕຸ່ມຕາ ທັງແກ່ນແລະນອກ ຍັງມີຢາງ ແມ່ນດຸມກໍຄົດ ມີຕຸ່ມຕາ ທັງແກ່ນແລະນອກຍັງມີຢາງ ຍ້ອນກົງຄົດ ເປັນຕຸ່ມຕາ ທັງແກ່ນແລະນອກຍັງມີຢາງ ຍ້ອນແມ່ນກຳກໍຄົດ ເປັນຕຸ່ມຕາ ທັງແກ່ນແລະນອກຍັງມີຢາງ ຍ້ອນແມ່ນດຸມກໍຄົດ ເປັນຕຸ່ມຕາ ທັງແກ່ນ ແລະນອກຍັງມີຢາງ ລໍ້ນັ້ນ ເມື່ອຂ້າພຣະອົງໝຸນຈຶ່ງໝຸນໄປໄດ້ທໍ່

ທີ່ຂ້າພຣະອົງໝຸນແລ້ວໝຸນວຽນລົ້ມລົງທີ່ພື້ນດິນ ຂໍເດຊະ ສ່ວນກົງຂອງລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໕ ເດືອນ ໔໔ ມື້ ບໍ່ຄົດ ບໍ່ມີຕຸ່ມຕາ ບໍ່ມີແກ່ນແລະມອກທີ່ມີຢາງ ແມ່ນກຳກໍບໍ່ຄົດ ບໍ່ມີຕຸ່ມຕາ ບໍ່ມີແກ່ນແລະມອກທີ່ມີຢາງ ແມ່ນດຸມ ກໍບໍ່ຄົດ ບໍ່ມີຕຸ່ມຕາ ບໍ່ມີແກ່ນແລະມອກທີ່ມີຢາງ ຍ້ອນກົງບໍ່ຄົດ ບໍ່ມີຕຸ່ມຕາ ບໍ່ມີແກ່ນແລະມອກທີ່ມີຢາງ ຍ້ອນແມ່ນກຳກໍບໍ່ຄົດ ບໍ່ມີຕຸ່ມຕາ ບໍ່ມີແກ່ນແລະມອກທີ່ມີຢາງ ຍ້ອນແມ່ນດຸມກໍບໍ່ຄົດ ບໍ່ມີຕຸ່ມຕາ ບໍ່ມີແກ່ນແລະມອກທີ່ມີຢາງ ລໍ້ນັ້ນເມື່ອຂ້າພຣະອົງໝຸນ ຈຶ່ງໝຸນໄປໄດ້ທໍ່ທີ່ຂ້າພຣະອົງໝຸນແລ້ວຕັ້ງຢູ່ໄດ້ຄືຢູ່ໃນເພົາ”

ພິກຂຸທັງຫຼາຍ ທ່ານທັງຫຼາຍອາຈຈະຄິດແນວນີ້ວ່າ “ສະໄໝນັ້ນ ນາຍຊ່າງລົດຄົງເປັນຄົນອື່ນແນ່” ແຕ່ຂໍ້ນີ້ທ່ານທັງຫຼາຍບໍ່ເພິ່ງເຫັນແນວນີ້ສະໄໝນັ້ນ ເຮົາຄືນາຍຊ່າງລົດນັ້ນ ໃນຄັ້ງນັ້ນເຮົາເປັນຄົນສະຫຼາດໃນຄວາມຄົດຂອງໄມ້ ໃນຕຸ່ມຕາຂອງໄມ້ ໃນແກ່ນແລະມອກທີ່ມີຢາງຂອງໄມ້ ແຕ່ໃນປັດຈຸບັນນີ້ເຮົາເປັນອະຣະຫັນຕະສຳມາສຳພຸດທະເຈົ້າ (໑) ສະຫຼາດໃນຄວາມຄົດຂອງກາຍ ໂທດຂອງກາຍ ມົນທິນຂອງກາຍ (໒) ສະຫຼາດໃນຄວາມຄົດຂອງວາຈາ ໂທດຂອງວາຈາ ມົນທິນຂອງວາຈາ (໓) ສະຫຼາດໃນຄວາມຄົດຂອງໃຈ ໂທດຂອງໃຈ ມົນທິນຂອງໃຈ ພິກຂຸ ຫຼືພິກຂຸນີຜູ້ບໍ່ລະຄວາມຄົດຂອງກາຍ ໂທດຂອງກາຍ ມົນທິນຂອງກາຍ ບໍ່ລະຄວາມຄົດຂອງວາຈາ ໂທດຂອງວາຈາ ມົນທິນຂອງວາຈາ ແລະບໍ່ລະຄວາມຄົດຂອງໃຈ ໂທດຂອງໃຈ ມົນທິນຂອງໃຈຊື່ວ່າໄດ້ພາດຕົກໄປຈາກທຳວິໄນນີ້ຄືລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໖ ມື້

ພິກຂຸຫຼືພິກຂຸນີຜູ້ລະຄວາມຄົດຂອງກາຍ ໂທດຂອງກາຍ ແລະມົນທິນຂອງກາຍ ລະຄວາມຄົດຂອງວາຈາ ໂທດຂອງວາຈາ ແລະມົນທິນຂອງວາຈາ ລະຄວາມຄົດຂອງໃຈ ໂທດຂອງໃຈ ແລະມົນທິນຂອງໃຈ ຊື່ວ່າ ດຳລົງໝັ້ນຢູ່ໃນທຳວິໄນນີ້ຄືລໍ້ຂ້າງທີ່ເຮັດສຳເລັດໂດຍໃຊ້ເວລາ ໕ ເດືອນ ໔໔ ມື້

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ “ເຮົາທັງຫຼາຍຈັກລະຄວາມຄົດຂອງກາຍ ໂທດຂອງກາຍ ແລະມົນທິນຂອງກາຍ ຈັກລະຄວາມຄົດຂອງວາຈາ ໂທດຂອງວາຈາ ແລະມົນທິນຂອງວາຈາ ຈັກລະຄວາມຄົດຂອງໃຈ ໂທດຂອງໃຈ ແລະມົນທິນຂອງໃຈ”

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ປະເຈຕະນະສູດ ທີ ໕ ຈົບ**

# ໒. ອະປັນນະກະສູດ

## ວ່າດ້ວຍຂໍ້ປະຕິບັດບໍ່ຜິດ

[໑໒] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໓ ປະການ ຊື່ວ່າປະຕິບັດບໍ່ຜິດ ແລະ ທ່ານຊື່ວ່າ ຜາຣົບເຫດເພື່ອຄວາມສິ້ນອາສະວະ

ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຄຸ້ມຄອງທະວານໃນອິນຊີ ໒. ຮູ້ປະມານໃນການບໍຣິໂພກອາຫານ
໓. ປະກອບຄວາມພຽນເຄື່ອງຕື່ນຢູ່ສະເໝີ ໆ

ພິກຂຸຊື່ວ່າ ຄຸ້ມຄອງທະວານໃນອິນຊີ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບດ້ວຍຕາແລ້ວບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳ ຄື ອະພິດຊາ (ເພ່ງເລັງຢາກໄດ້ຂອງເຂົາ) ແລະໂທມະນັດ (ຄວາມທຸກໃຈ) ຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນ ຈັກຂຸນຊີ ຟັງສຽງດ້ວຍຫູ ຯລຯ ດົມກິ່ນດ້ວຍດັງ ຯລຯ ຊີມຣົດດ້ວຍລີ້ນ ຯລຯ ຖືກຕ້ອງໂຜດຖັບພະດ້ວຍກາຍ ຯລຯ ຮູ້ແຈ້ງທຳມາຣົມດ້ວຍໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເພິ່ງເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸຊື່ວ່າ ຄຸ້ມຄອງທະວານໃນອິນຊີ ເປັນແນວນີ້ແລ

ພິກຂຸຊື່ວ່າ ຮູ້ປະມານໃນການບໍຣິໂພກອາຫານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍແລ້ວ ສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ພຽງເພື່ອຄວາມດຳລົງຢູ່ໄດ້ ແຫ່ງກາຍນີ້ເພື່ອໃຫ້ກາຍນີ້ເປັນໄປໄດ້ ເພື່ອກຳຈັດຄວາມບຽດບຽນ ເພື່ອອະນຸເຄາະ ພົມມະຈັນດ້ວຍຄິດເຫັນວ່າ "ເຮົາຈັກກຳຈັດເວທະນາເກົ່າ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະຄວາມຢູ່ຜາສຸກຈັກມີແກ່ເຮົາ" ພິກຂຸຊື່ວ່າ ຮູ້ປະມານໃນການບໍຣິໂພກອາຫານ ເປັນແນວນີ້ແລ

ພິກຂຸຊື່ວ່າ ປະກອບຄວາມພຽນເຄື່ອງຕື່ນຢູ່ສະເໝີ ໆ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຊຳຣະຈິດໃຫ້ບໍລິສຸດຈາກທຳທີ່ເປັນໂຕຂັດຂວາງດ້ວຍການຈົງກົມ ດ້ວຍການນັ່ງເມີດມື້ ຊຳຣະຈິດໃຫ້ບໍລິສຸດຈາກທຳທີ່ເປັນໂຕຂັດຂວາງດ້ວຍການຈົງກົມ ດ້ວຍການນັ່ງຕະຫຼອດປະຖົມມະຍາມແຫ່ງຣາຕີ ນອນຄືຣາດຊະສີໂດຍຂ້າງເບື້ອງຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳປະຊັນຍະ ໝາຍໃຈວ່າຈະລຸກຂຶ້ນໃນມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນ ຊຳຣະຈິດໃຫ້ບໍລິສຸດຈາກທຳທີ່ເປັນໂຕຂັດຂວາງດ້ວຍການຈົງກົມ ດ້ວຍການນັ່ງຕະຫຼອດປັດສິມຍາມແຫ່ງຣາຕີ ພິກຂຸຊື່ວ່າປະກອບຄວາມພຽນເຄື່ອງຕື່ນຢູ່ສະເໝີ ໆ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການນີ້ແລ ຊື່ວ່າປະຕິບັດບໍ່ຜິດ ແລະທ່ານຊື່ວ່າຜາຣົບເຫດເພື່ອຄວາມສິ້ນອາສະວະ

**ອະປັນນະກະສູດທີ ໒ ຈົບ**

## ໗. ອັດຕະພະຍາພາທະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອບຽດບຽນຕົນ

[໑໗] ພິກຂຸທັງຫຼາຍ ທຳ ໓ ປະການນີ້ເປັນໄປເພື່ອບຽດບຽນຕົນເອງ ເປັນໄປເພື່ອບຽດບຽນຜູ້ອື່ນ ແລະເປັນໄປເພື່ອບຽດບຽນທັງ ໒ ຝ່າຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍກາຍ)
໒. ວະຈີທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍວາຈາ)
໓. ມະໂນທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍໃຈ)

ທຳ ໓ ປະການນີ້ແລ ເປັນໄປເພື່ອບຽດບຽນຕົນເອງ ເປັນໄປເພື່ອບຽດບຽນຜູ້ອື່ນ ແລະເປັນໄປເພື່ອບຽດບຽນທັງ ໒ ຝ່າຍ

ທຳ ໓ ປະການນີ້ບໍ່ເປັນໄປເພື່ອບຽດບຽນຕົນເອງ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນ ແລະບໍ່ເປັນໄປເພື່ອບຽດບຽນທັງ ໒ ຝ່າຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍສຸດຈະຣິດ (ຄວາມປະພຶດຖືກດ້ວຍກາຍ)
໒. ວະຈີສຸດຈະຣິດ (ຄວາມປະພຶດຖືກດ້ວຍວາຈາ)

໓. ມະໂນສຸດຈະຣິດ (ຄວາມປະພຶດຖືກດ້ວຍໃຈ)

ທຳ ໓ ປະການນີ້ແລບໍ່ເປັນໄປເພື່ອບຽດບຽນຕົນເອງ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນ ແລະ ບໍ່ເປັນໄປເພື່ອບຽດບຽນທັງ ๒ ຝ່າຍ

**ອັດຕະພະຍາພາທະສູດ ທີ ໗ ຈົບ**

## ໘. ເທວະໂລກະສູດ

## ວ່າດ້ວຍເທວະໂລກ

[໑໘] "ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກຈະເພິ່ງຖາມທ່ານທັງຫຼາຍ ແນວນີ້ວ່າ "ພວກທ່ານປະພຶດພົມມະຈັນໃນພຣະສະມະນະໂຄດົມ ເພື່ອເຂົ້າເຖິງເທວະໂລກແມ່ນບໍ?" ທ່ານທັງຫຼາຍຖູກະຖາມແນວນີ້ ເພິ່ງອຶດອັດ ຣະອາ ລັງກຽດ ບໍ່ແມ່ນບໍ?"

ເມື່ອພິກຂຸພວກນັ້ນ ຂາບທູນວ່າ "ເປັນເຊັ່ນນັ້ນ ຂ້ານ້ອຍ" ຈຶ່ງຕັດຕໍ່ໄປວ່າ "ຮູ້ມາວ່າ ທ່ານທັງຫຼາຍອຶດອັດ ຣະອາ ລັງກຽດອາຍຸທິບ ວັນນະທິບ ສຸກທິບ ຍົດທິບ ແລະອະທິປະໄຕທິບ ແຕ່ເບື້ອງຕົ້ນຢ່າງແນ່ນອນ ທ່ານທັງຫຼາຍຄວນອຶດອັດ ຣະອາ ລັງກຽດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ"

**ເທວະໂລກະສູດທີ ໘ ຈົບ**

## ໙. ປະຖົມປາປະນິກະສູດ

## ວ່າດ້ວຍຄຸນສົມບັດຂອງພໍ່ຄ້າສູດທີ ໑

[໑໙] ພິກຂຸທັງຫຼາຍ ພໍ່ຄ້າປະກອບດ້ວຍອົງ ໓ ປະການ ບໍ່ອາດໄດ້ໂພຄະຊັບ ທີ່ຍັງບໍ່ໄດ້ ຫຼື ເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນຫຼາຍຂຶ້ນ

ອົງ ໓ ປະການ ອັນໃດແດ່ ຄື

ພໍ່ຄ້າໃນໂລກນີ້

໑. ເວລາເຊົ້າ ບໍ່ຕັ້ງໃຈຈັດແຈງການງານໃຫ້ດີ
໒. ເວລາທ່ຽງ ບໍ່ຕັ້ງໃຈຈັດແຈງການງານໃຫ້ດີ

໓. ເວລາຄ່ຳ ບໍ່ຕັ້ງໃຈຈັດແຈງການງານໃຫ້ດີ

ພໍ່ຄ້າປະກອບດ້ວຍອົງ ໓ ປະການນີ້ແລ ບໍ່ອາດໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼື ເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນຫຼາຍຂຶ້ນ ສັນໃດ

ພິກຂຸປະກອບດ້ວຍທຳ ໓ ປະການ ກໍຄືກັນສັນນັ້ນແລ ບໍ່ອາດບັນລຸ ກຸສົນທຳທີ່ຍັງບໍ່ໄດ້ບັນລຸ ຫຼື ເຮັດກຸສົນທຳທີ່ໄດ້ບັນລຸແລ້ວໃຫ້ຈະເລີນຫຼາຍຂຶ້ນ

ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເວລາເຊົ້າ ບໍ່ຕັ້ງໃຈເຂົ້າສະມາທິ
໒. ເວລາທ່ຽງ ບໍ່ຕັ້ງໃຈເຂົ້າສະມາທິ
໓. ເວລາຄ່ຳ ບໍ່ຕັ້ງໃຈເຂົ້າສະມາທິ

ພິກຂຸປະກອບດ້ວຍທຳ ໓ ປະການນີ້ແລ ບໍ່ອາດບັນລຸກຸສົນທຳທີ່ຍັງບໍ່ໄດ້ບັນລຸ ຫຼືເຮັດກຸສົນທຳທີ່ໄດ້ບັນລຸແລ້ວໃຫ້ຈະເລີນຫຼາຍຂຶ້ນ

ພໍ່ຄ້າປະກອບດ້ວຍອົງ ໓ ປະການ ອາດໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼືເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນຫຼາຍຂຶ້ນ

ອົງ ໓ ປະການ ອັນໃດແດ່ ຄື

ພໍ່ຄ້າໃນໂລກນີ້

໑. ເວລາເຊົ້າ ຕັ້ງໃຈຈັດແຈງການງານດີ
໒. ເວລາທ່ຽງ ຕັ້ງໃຈຈັດແຈງການງານດີ
໓. ເວລາຄ່ຳ ຕັ້ງໃຈຈັດແຈງການງານດີ

ພໍ່ຄ້າປະກອບດ້ວຍອົງ ໓ ປະການນີ້ແລ ອາດໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼື ເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນຫຼາຍຂຶ້ນ ສັນໃດ

ພິກຂຸປະກອບດ້ວຍທຳ ໓ ປະການ ກໍຄືກັນສັນນັ້ນແລ ອາດບັນລຸກຸສົນທຳ ທີ່ຍັງບໍ່ໄດ້ບັນລຸ ຫຼື ເຮັດກຸສົນທຳທີ່ໄດ້ບັນລຸແລ້ວໃຫ້ຈະເລີນຫຼາຍຂຶ້ນ

ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເວລາເຊົ້າ ຕັ້ງໃຈເຂົ້າສະມາທິ
໒. ເວລາທ່ຽງ ຕັ້ງໃຈເຂົ້າສະມາທິ
໓. ເວລາຄ່ຳ ຕັ້ງໃຈເຂົ້າສະມາທິ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການນີ້ແລ ອາດບັນລຸກຸສົນທຳທີ່ຍັງບໍ່ໄດ້ບັນລຸ ຫຼືເຮັດກຸສົນທຳທີ່ໄດ້ບັນລຸແລ້ວໃຫ້ຈະເລີນຫຼາຍຂຶ້ນ

**ປະຖົມປາປະນິກະສູດທີ ໙ ຈົບ**

## ໑໐. ທຸຕິຍະປາປະນິກະສູດ

## ວ່າດ້ວຍຄຸນສົມບັດຂອງພໍ່ຄ້າ ສູດ ທີ ໒

[໒໐] ພິກຂຸທັງຫຼາຍ ພໍ່ຄ້າປະກອບດ້ວຍອົງ ໓ ປະການ ບໍ່ດົນປານໃດກໍເຖິງຄວາມເປັນຜູ້ຍິ່ງໃຫຍ່ໄພບູນໃນໂພຄະຊັບ

ອົງ ໓ ປະການ ອັນໃດແດ່ ຄື ພໍ່ຄ້າໃນໂລກນີ້

໑. ມີຕາດີ
໒. ມີທຸລະກິດດີ
໓. ພຽບພ້ອມດ້ວຍບ່ອນພັກພິງອາໄສ

ພໍ່ຄ້າຊື່ວ່າມີຕາດີ ເປັນແນວໃດ?

ຄື ພໍ່ຄ້າໃນໂລກນີ້ຮູ້ຈັກສິນຄ້າວ່າ “ສິນຄ້ານີ້ຊື້ມາທໍ່ນີ້ ຂາຍໄປແນວນີ້ ຈັກມີມູນຄ່າປະມານທໍ່ນີ້ ມີກຳໄລທໍ່ນີ້” ພໍ່ຄ້າຊື່ວ່າ ມີຕາດີ ເປັນແນວນີ້ແລ

ພໍ່ຄ້າຊື່ວ່າ ມີທຸລະກິດດີ ເປັນແນວໃດ?

ຄື ພໍ່ຄ້າເປັນຄົນສະຫຼາດຊື້ ແລະຂາຍສິນຄ້າໄດ້ ພໍ່ຄ້າຊື່ວ່າ ມີທຸລະກິດດີ ເປັນແນວນີ້ແລ

ພໍ່ຄ້າຊື່ວ່າພຽບພ້ອມດ້ວຍບ່ອນພັກພິງອາໄສ ເປັນແນວໃດ?

ຄື ຄະຫະບໍດີຫຼືບຸດຄະຫະບໍດີຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຊັບຫຼາຍ ຍ່ອມຮູ້ຈັກ ພໍ່ຄ້າໃນໂລກນີ້ແນວນີ້ວ່າ "ພໍ່ຄ້າຜູ້ນີ້ແລ ມີຕາດີ ມີທຸລະກິດດີ ແລະສາມາດທີ່ຈະລ້ຽງດູ ບຸດພັນລະຍາໄດ້ທັງໃຊ້ຄືນໃຫ້ແກ່ພວກເຮົາໄດ້ຕາມກຳນົດເວລາ" ຄະຫະບໍດີຫຼືບຸດຄະຫະບໍດີເຫຼົ່ານັ້ນ ຍ່ອມເຊື້ອເຊີນພໍ່ຄ້ານັ້ນດ້ວຍ ໂພຄະຊັບວ່າ "ນັບແຕ່ນີ້ໄປ ທ່ານຈົ່ງນຳໂພຄະຊັບໄປລ້ຽງດູ ບຸດພັນລະຍາ ແລະໃຊ້ຄືນໃຫ້ພວກເຮົາຕາມກຳນົດເວລາ" ພໍ່ຄ້າຊື່ວ່າ ພຽບພ້ອມດ້ວຍບ່ອນພັກພິງອາໄສ ເປັນແນວນີ້ແລ

ພໍ່ຄ້າປະກອບດ້ວຍອົງ ໓ ປະການນີ້ແລ ບໍ່ດົນປານໃດກໍເຖິງຄວາມເປັນຜູ້ຍິ່ງໃຫຍ່ ໄພບູນໃນໂພຄະຊັບ ສັນໃດ

ພິກຂຸປະກອບດ້ວຍທຳ ໓ ປະການ ກໍຄືກັນສັນນັ້ນແລ ບໍ່ດົນປານໃດກໍບັນລຸຄວາມເປັນຜູ້ຍິ່ງໃຫຍ່ໄພບູນໃນກຸສົນທຳ

ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ມີຕາດີ
໒. ມີທຸລະດີ
໓. ພຽບພ້ອມດ້ວຍບ່ອນພັກພິງອາໄສ

ພິກຂຸຊື່ວ່າມີຕາດີ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ພິກຂຸຊື່ວ່າມີຕາດີ ເປັນແນວນີ້ແລ

ພິກຂຸຊື່ວ່າ ມີທຸລະດີ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເປົ່າໃນກຸສົນທຳທັງຫຼາຍ ພິກຂຸຊື່ວ່າມີທຸລະດີ ເປັນແນວນີ້ແລ

ພິກຂຸຊື່ວ່າ ພຽບພ້ອມດ້ວຍບ່ອນພັກພິງອາໄສ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຂົ້າໄປຫາພິກຂຸຜູ້ເປັນພະຫູສູດ ຜູ້ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາ ຕາມເວລາສົມຄວນ ສອບສວນໄຕ່ຖາມວ່າ "ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມ

ແຫ່ງພຸດທະພົດນີ້ເປັນແນວໃດ?" ທ່ານຜູ້ຄົງແກ່ຮຽນເຫຼົ່ານັ້ນ ຍ່ອມເປີດເຜີຍທຳທີ່ຍັງບໍ່ໄດ້ເປີດເຜີຍ ເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ໄດ້ເຮັດໃຫ້ງ່າຍ ແລະບັນເທົາຄວາມສົງໄສ ໃນທຳທີ່ໜ້າສົງໄສຫຼາຍແນວ ພິກຂຸຊື່ວ່າ ພຽບພ້ອມດ້ວຍບ່ອນພັກພິງອາໄສ ເປັນແນວນີ້ແລ

ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ບໍ່ດົນປານໃດກໍບັນລຸຄວາມເປັນຜູ້ຍິ່ງໃຫຍ່ໄພບູນໃນກຸສົນທຳ

**ທຸຕິຍະປາປະນິກະສູດທີ ໑໐ ຈົບ**

**ຣະຖະກາຣະວັກທີ ໔ ຈົບ**

**ປະຖົມພານະວາຣະ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

| | |
|---|---|
| ໑. ຍາຕະສູດ | ໖. ສາຣະນີຍະສູດ |
| ໒. ອາສັງສະສູດ | ໗. ຈັກກະວັດຕິສູດ |
| ໓. ປະເຈຕະນະສູດ | ໘. ອະປັນນະກະສູດ |
| ໔. ອັດຕະພະຍາພາທະສູດ | ໙. ເທວະໂລກະສູດ |
| ໕. ປະຖົມປາປະນິກະສູດ | ໑໐. ທຸຕິຍະປາປະນິກະສູດ |

# ໒. ປຸກຄະລະວັກ

## ໝວດວ່າດ້ວຍບຸກຄົນ

## ໑. ສະວິດຖະສູດ

### ວ່າດ້ວຍພຣະສະວິດຖະແລະມະຫາໂກດຖິຕະ

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະສະວິດຖະ ແລະທ່ານພຣະມະຫາໂກດຖິຕະເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນ

ທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະສະວິດຖະ ດັ່ງນີ້ ວ່າ

ທ່ານສະວິດຖະ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ກາຍະສັກຂີບຸກຄົນ ໒. ທິດຖິປັດຕະບຸກຄົນ

໓. ສັດທາວິມຸດຕະບຸກຄົນ

ບຸກຄົນ ໓ ຈຳພວກນີ້ແລມີຜາກົດຢູ່ໃນໂລກ ບັນດາບຸກຄົນ ໓ ຈຳພວກນີ້ທ່ານ ພໍໃຈບຸກຄົນຈຳພວກໃດເຊິ່ງດີຍິ່ງກວ່າ ແລະປະນີດກວ່າ

ທ່ານພຣະສະວິດຖະຕອບວ່າ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກໃດແດ່ ຄື

໑. ກາຍະສັກຂີບຸກຄົນ ໒. ທິດຖິປັດຕະບຸກຄົນ

໓. ສັດທາວິມຸດຕະບຸກຄົນ

ບຸກຄົນ ໓ ຈຳພວກນີ້ແລມີຜາກົດຢູ່ໃນໂລກ ບັນດາບຸກຄົນ ໓ ຈຳພວກນີ້ຂ້ານ້ອຍພໍໃຈສັດທາວິມຸດຕະບຸກຄົນ ເຊິ່ງດີຍິ່ງກວ່າແລະປະນີດກວ່າ ຂໍ້ນັ້ນຍ້ອນເຫດໃດ ຍ້ອນສັດທິນຊີຂອງບຸກຄົນນີ້ແກ່ຮຸນແຮງຫຼາຍ

ລຳດັບນັ້ນ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະມະຫາໂກດຖິຕະດັ່ງນີ້ວ່າ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກໃດແດ່ ຄື

໑. ກາຍະສັກຂີບຸກຄົນ ໒. ທິດຖິປັດຕະບຸກຄົນ

໓. ສັດທາວິມຸດຕະບຸກຄົນ

ບຸກຄົນ ໓ ຈຳພວກນີ້ແລມີຜາກົດຢູ່ໃນໂລກ ບັນດາບຸກຄົນ ໓ ຈຳພວກນີ້ທ່ານ ພໍໃຈບຸກຄົນຈຳພວກໃດເຊິ່ງດີຍິ່ງກວ່າ ແລະປະນີດກວ່າ

ທ່ານພຣະມະຫາໂກດຖິຕະຕອບວ່າ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ๓ ຈຳພວກໃດແດ່ ຄື

໑. ກາຍະສັກຂີບຸກຄົນ ໒. ທິດຖິປັດຕະບຸກຄົນ

๓. ສັດທາວິມຸດຕະບຸກຄົນ

ບຸກຄົນ ๓ ຈຳພວກນີ້ແລມີຜາກົດຢູ່ໃນໂລກ ບັນດາບຸກຄົນ ๓ ຈຳພວກນີ້ຂ້ານ້ອຍພໍໃຈກາຍະສັກຂີບຸກຄົນເຊິ່ງດີຍິ່ງກວ່າແລະປະນີດກວ່າ ຂໍ້ນັ້ນຍ້ອນເຫດໃດ ຍ້ອນສະມາທິນຊີ ຂອງບຸກຄົນນີ້ແກ່ຮຸນແຮງຫຼາຍ

ລຳດັບນັ້ນ ທ່ານພຣະມະຫາໂກດຖິຕະໄດ້ຖາມບັນຫານີ້ກັບທ່ານພຣະສາຣີບຸດດັ່ງນີ້ ວ່າ

ບຸກຄົນ ๓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ๓ ຈຳພວກໃດແດ່ ຄື

໑. ກາຍະສັກຂີບຸກຄົນ ໒. ທິດຖິປັດຕະບຸກຄົນ
๓. ສັດທາວິມຸດຕະບຸກຄົນ

ບຸກຄົນ ๓ ຈຳພວກນີ້ແລມີຜາກົດຢູ່ໃນໂລກ ບັນດາບຸກຄົນ ๓ ຈຳພວກນີ້ທ່ານ ພໍໃຈບຸກຄົນຈຳພວກໃດເຊິ່ງດີຍິ່ງກວ່າ ແລະປະນີດກວ່າ

ທ່ານພຣະສາຣີບຸດຕອບວ່າ ບຸກຄົນ ๓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ๓ ຈຳພວກໃດແດ່ ຄື

໑. ກາຍະສັກຂີບຸກຄົນ ໒. ທິດຖິປັດຕະບຸກຄົນ
๓. ສັດທາວິມຸດຕະບຸກຄົນ

ບຸກຄົນ ๓ ຈຳພວກນີ້ແລມີຜາກົດຢູ່ໃນໂລກ ບັນດາບຸກຄົນ ๓ ຈຳພວກນີ້ຂ້ານ້ອຍພໍໃຈທິດຖິປັດຕະບຸກຄົນເຊິ່ງດີຍິ່ງກວ່າແລະປະນີດກວ່າ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນປັນຍິນຊີ ຂອງບຸກຄົນນີ້ແກ່ກ້າຫຼາຍ

ລຳດັບນັ້ນ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະສະວິດຖະ ແລະທ່ານພຣະມະຫາໂກດຖິຕະ ດັ່ງນີ້ວ່າ "ພວກເຮົາທັງໝົດຕ່າງໆຕອບບັນຫາຕາມປະຕິພານຂອງຕົນ ມາໄປນຳກັນເທີ້ນ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຂາບທູນຂໍ້ຄວາມນີ້ເຮົາຈັກຊົງຈຳ

ຂໍ້ຄວາມ ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດຕອບແກ່ເຮົາ" ທ່ານພຣະສະວິດຖະ ແລະທ່ານພຣະມະຫາໂກດຖິຕະ ຕອບຮັບທ່ານພຣະສາຣີບຸດແລ້ວ

ລຳດັບນັ້ນ ທ່ານພຣະສາຣີບຸດ ທ່ານພຣະສະວິດຖະ ແລະທ່ານພຣະມະຫາໂກດຖິຕະເຂົ້າ ໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍບັງຄົມແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະສາຣີບຸດຜູ້ນັ່ງຢູ່ບ່ອນ ທີ່ສົມຄວນແລ້ວ ໄດ້ຂາບທູນຂໍ້ສົນທະນາທັງໝົດກັບທ່ານພຣະສະວິດຖະແລະທ່ານພຣະມະຫາໂກດຖິຕະແດ່ພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໃນເລື້ອງນີ້ການຕອບບັນຫາໂດຍໄນດງວວ່າ ບັນດາ ບຸກຄົນ ໓ ຈຳພວກນີ້ບຸກຄົນນີ້ດີຍິ່ງກວ່າ ແລະປະນີດກວ່າ ບໍ່ແມ່ນຈະເຮັດໄດ້ງ່າຍ ຍ້ອນອາດເປັນໄປໄດ້ວ່າ ສັດທາວິມຸດຕະບຸກຄົນເປັນຜູ້ປະຕິບັດເພື່ອຄວາມເປັນອະຣະຫັນ ກາຍະສັກຂີບຸກຄົນເປັນສະກະທາຄາມີຫຼືອະນາຄາມີ ທິດຖິປັດຕະບຸກຄົນເປັນສະກະທາຄາມີຫຼືອະນາຄາມີ

ໃນເລື້ອງນີ້ການຕອບບັນຫາໂດຍໄນດງວວ່າ ບັນດາບຸກຄົນ ໓ ຈຳພວກນີ້ບຸກຄົນ ນີ້ດີຍິ່ງກວ່າແລະປະນີດກວ່າ ບໍ່ແມ່ນຈະເຮັດໄດ້ງ່າຍ ຍ້ອນອາດເປັນໄປໄດ້ວ່າ ກາຍະສັກຂີບຸກຄົນ ເປັນຜູ້ປະຕິບັດເພື່ອຄວາມເປັນອະຣະຫັນ ສັດທາວິມຸດຕະບຸກຄົນເປັນສະກະທາຄາມີຫຼືອະນາຄາມີ ທິດຖິປັດຕະບຸກຄົນເປັນສະກະທາຄາມີຫຼືອະນາຄາມີ

ໃນເລື້ອງນີ້ການຕອບບັນຫາໂດຍໄນດງວວ່າ ບັນດາບຸກຄົນ ໓ ຈຳພວກນີ້ບຸກຄົນ ນີ້ດີຍິ່ງກວ່າແລະປະນີດກວ່າ ບໍ່ແມ່ນຈະເຮັດໄດ້ງ່າຍ ຍ້ອນອາດເປັນໄປໄດ້ວ່າ ທິດຖິປັດຕະບຸກຄົນເປັນຜູ້ປະຕິບັດເພື່ອຄວາມເປັນອະຣະຫັນ ສັດທາວິມຸດຕະບຸກຄົນເປັນສະກະທາຄາມີຫຼືອະນາຄາມີ ກາຍະສັກຂີບຸກຄົນເປັນສະກະທາຄາມີຫຼືອະນາຄາມີ

ໃນເລື້ອງນີ້ການຕອບບັນຫາໂດຍໄນດງວວ່າ ບັນດາບຸກຄົນ ໓ ຈຳພວກນີ້ບຸກຄົນນີ້ດີຍິ່ງກວ່າແລະປະນີດກວ່າ ບໍ່ແມ່ນຈະເຮັດໄດ້ງ່າຍ

**ສະວິດຖະສູດ ທີ ໑ ຈົບ**

## ໘. ຄິລານະສູດ

## ວ່າດ້ວຍຄົນໄຂ້ແລະບຸກຄົນຜູ້ປຽບດ້ວຍຄົນໄຂ້

[໘໘] ພິກຂຸທັງຫຼາຍ ຄົນໄຂ້ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ຄົນໄຂ້ ໓ ຈຳພວກ ພວກໃດແດ່ ຄື

໑. ຄົນໄຂ້ລາງຄົນໃນໂລກນີ້ ໄດ້ໂພຊະນະທີ່ເປັນສັບປາຍະ ບໍໄດ້ໂພຊະນະທີ່ເປັນສັບປາຍະກໍຕາມ ໄດ້ຢາທີ່ເປັນສັບປາຍະ ບໍໄດ້ຢາທີ່ເປັນສັບປາຍະກໍຕາມ ແລະໄດ້ຄົນປິ່ນປົວທີ່ເໝາະສົມ ບໍໄດ້ຄົນປິ່ນປົວທີ່ເໝາະສົມກໍຕາມ ຍ່ອມບໍ່ຫາຍຈາກອາພາດນັ້ນໄດ້ເລີຍ

໒. ຄົນໄຂ້ລາງຄົນໃນໂລກນີ້ ໄດ້ໂພຊະນະທີ່ເປັນສັບປາຍະ ບໍ່ໄດ້ໂພຊະນະທີ່ເປັນສັບປາຍະກໍຕາມ ໄດ້ຢາທີ່ເປັນສັບປາຍະ ບໍໄດ້ຢາທີ່ເປັນສັບປາຍະກໍຕາມ ແລະໄດ້ຄົນປິ່ນປົວທີ່ເໝາະສົມ ບໍ່ໄດ້ຄົນປິ່ນປົວທີ່ເໝາະສົມກໍຕາມ ຍ່ອມຫາຍຈາກອາພາດນັ້ນໄດ້

໓. ຄົນໄຂ້ລາງຄົນໃນໂລກນີ້ ໄດ້ໂພຊະນະທີ່ເປັນສັບປາຍະ ຈຶ່ງຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ ຍ່ອມບໍ່ຫາຍ ໄດ້ຢາທີ່ເປັນສັບປາຍະຈຶ່ງຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ຍ່ອມບໍ່ຫາຍ ແລະໄດ້ຄົນປິ່ນປົວທີ່ເໝາະສົມ ຈຶ່ງຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ຍ່ອມບໍ່ຫາຍ

ບັນດາຄົນໄຂ້ ໓ ຈໍາພວກນັ້ນ ຄົນໄຂ້ໃດໄດ້ໂພຊະນະທີ່ເປັນສັບປາຍະ ຈຶ່ງຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ຍ່ອມບໍ່ຫາຍ ໄດ້ຢາທີ່ເປັນສັບປາຍະຈຶ່ງຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ຍ່ອມບໍ່ຫາຍ ແລະໄດ້ຄົນປິ່ນປົວທີ່ເໝາະສົມ ຈຶ່ງຫາຍຈາກອາພາດນັ້ນ ເມື່ອບໍ່ໄດ້ຍ່ອມບໍ່ຫາຍ ຍ້ອນອາໄສຄົນໄຂ້ນີ້ແລ ເຮົາຈຶ່ງອະນຸຍາດອາຫານສໍາລັບພິກຂຸໄຂ້ ອະນຸຍາດຢາສໍາລັບ ພິກຂຸໄຂ້ ແລະອະນຸຍາດຄົນປິ່ນປົວສໍາລັບພິກຂຸໄຂ້ ກໍຍ້ອນອາໄສຄົນໄຂ້ນີ້ຄົນໄຂ້ແມ່ນອື່ນ ໆ ກໍຄວນໄດ້ຮັບການປິ່ນປົວດ້ວຍ ຄົນໄຂ້ ໓ ຈໍາພວກນີ້ແລມີຜາກົດຢູ່ໃນໂລກ ສັນໃດ

ບຸກຄົນທີ່ປຽບໄດ້ກັບຄົນໄຂ້ ໓ ຈໍາພວກນີ້ກໍຄືກັນສັນນັ້ນແລ ມີຜາກົດຢູ່ໃນໂລກ

ບຸກຄົນທີ່ປຽບໄດ້ກັບຄົນໄຂ້ ໓ ຈໍາພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ ໄດ້ເຫັນຕະຖາຄົດ ບໍໄດ້ເຫັນຕະຖາຄົດກໍຕາມ ໄດ້ຟັງທໍາວິໄນທີ່ຕະຖາຄົດປະກາດໄວ້ ບໍໄດ້ຟັງທໍາວິໄນທີ່ຕະຖາຄົດປະກາດໄວ້ກໍຕາມ ຍ່ອມບໍ່ຢັ່ງລົງສູ່ຄວາມເຫັນຖືກທີ່ກໍານົດໃນກຸສົນທໍາທັງຫຼາຍ

໒. ບຸກຄົນລາງຄົນໃນໂລກນີ້ ໄດ້ເຫັນຕະຖາຄົດ ບໍໄດ້ເຫັນຕະຖາຄົດກໍຕາມ ໄດ້ຟັງທໍາວິໄນທີ່ຕະຖາຄົດປະກາດໄວ້ ບໍໄດ້ຟັງທໍາວິໄນທີ່ຕະຖາຄົດປະກາດໄວ້ກໍຕາມ ຍ່ອມຢັ່ງລົງສູ່ຄວາມເຫັນຖືກທີ່ກໍານົດໃນກຸສົນທໍາທັງຫຼາຍ

໓. ບຸກຄົນລາງຄົນໃນໂລກນີ້ ໄດ້ເຫັນຕະຖາຄົດຈຶ່ງຢັ່ງລົງສູ່ຄວາມເຫັນຖືກທີ່ກໍານົດ ໃນກຸສົນທໍາທັງຫຼາຍ ເມື່ອບໍ່ໄດ້ເຫັນຍ່ອມບໍ່ຢັ່ງລົງ ໄດ້ຟັງທໍາວິໄນທີ່ຕະຖາຄົດປະກາດໄວ້ ຈຶ່ງຢັ່ງສູ່ຄວາມເຫັນຖືກທີ່ກໍານົດໃນກຸສົນທໍາທັງຫຼາຍ ເມື່ອບໍ່ໄດ້ຟັງຍ່ອມບໍ່ຢັ່ງລົງ

ບັນດາບຸກຄົນ ໓ ຈໍາພວກນັ້ນ ບຸກຄົນໃດໄດ້ເຫັນຕະຖາຄົດຈຶ່ງຢັ່ງລົງສູ່ຄວາມເຫັນຖືກ ທີ່ກໍານົດໃນກຸສົນທໍາທັງຫຼາຍ ເມື່ອບໍ່ໄດ້ເຫັນຍ່ອມບໍ່ຢັ່ງລົງ ໄດ້ຟັງທໍາວິໄນທີ່ຕະຖາຄົດປະກາດໄວ້ ຈຶ່ງຢັ່ງລົງສູ່ຄວາມເຫັນຖືກທີ່ກໍານົດໃນກຸສົນທໍາທັງຫຼາຍ ເມື່ອບໍ່ໄດ້ຟັງຍ່ອມບໍ່ຢັ່ງລົງ ຍ້ອນອາໄສບຸກຄົນນີ້ແລ ເຮົາຈຶ່ງອະນຸຍາດການສະແດງທໍາ ກໍຍ້ອນອາໄສບຸກຄົນນີ້ຈຶ່ງຄວນສະແດງທໍາແກ່ບຸກຄົນແມ່ນເຫຼົ່າອື່ນ

ພິກຂຸທັງຫຼາຍ ບຸກຄົນທີ່ປຽບໄດ້ກັບຄົນໄຂ້ ໓ ຈໍາພວກນີ້ແລ ມີຜາກົດຢູ່ໃນໂລກ

**ຄິລານະສູດ ທີ ໒ ຈົບ**

## ໓. ສັງຂາຣະສູດ

## ວ່າດ້ວຍສັງຂານ

[໒໓] ພິກຂຸທັງຫຼາຍ ບຸກຄົນ ໓ ຈໍາພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈໍາພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ ປຸງແຕ່ງກາຍສັງຂານ ທີ່ມີຄວາມບຽດບຽນ ປຸງແຕ່ງວະຈີສັງຂານ ທີ່ມີຄວາມບຽດບຽນ ແລະປຸງແຕ່ງມະໂນສັງຂານ ທີ່ມີຄວາມບຽດບຽນ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນ ຜັດສະທີ່ມີຄວາມບຽດບຽນ ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນນັ້ນ ເຂົາຖືກຜັດສະທີ່ມີຄວາມບຽດບຽນກະທົບເຂົ້າ ຍ່ອມສະເຫວີຍເວທະນາທີ່ມີຄວາມບຽດບຽນ ເປັນທຸກໂດຍສ່ວນດຽວຄືພວກສັດນະຮົກ

໒. ບຸກຄົນລາງຄົນໃນໂລກນີ້ ປຸງແຕ່ງກາຍສັງຂານທີ່ບໍ່ມີຄວາມບຽດບຽນ ປຸງແຕ່ງວະຈີສັງຂານທີ່ບໍ່ມີຄວາມບຽດບຽນ ແລະປຸງແຕ່ງມະໂນສັງຂານທີ່ບໍ່ມີຄວາມບຽດບຽນ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ບໍ່ມີຄວາມບຽດບຽນ ຜັດສະທີ່ບໍ່ມີຄວາມບຽດບຽນຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່

ບໍ່ມີຄວາມບຽດບຽນນັ້ນ ເຂົາຖືກຜັດສະທີ່ບໍ່ມີຄວາມບຽດບຽນກະທົບເຂົ້າ ຍ່ອມສະເຫວີຍເວທະນາທີ່ບໍ່ມີຄວາມບຽດບຽນ ເປັນສຸກໂດຍສ່ວນດຽວຄືສຸພະກິນຫະພົມ

໓. ບຸກຄົນລາງຄົນໃນໂລກນີ້ ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ປຸງແຕ່ງວະຈີສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ແລະປຸງແຕ່ງມະໂນສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາຖືກຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ກະທົບເຂົ້າ ຍ່ອມສະເຫວີຍເວທະນາທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ມີສຸກແລະທຸກຜະສົມກັນຄືມະນຸດ ເທວະດາລາງພວກ ແລະເຜດລາງພວກ

ພິກຂຸທັງຫຼາຍ ບຸກຄົນ ໓ ຈໍາພວກນີ້ແລມີຜາກົດຢູ່ໃນໂລກ

**ສັງຂາຣະສູດທີ ໓ ຈົບ**

## ໔. ພະຫຸກາຣະສູດ

## ວ່າດ້ວຍບຸກຄົນທີ່ມີອຸປະກາຣະຫຼາຍ

[໔໔] ພິກຂຸທັງຫຼາຍ ບຸກຄົນ ໓ ຈໍາພວກນີ້ມີອຸປະກາຣະຫຼາຍແກ່ບຸກຄົນ

ບຸກຄົນ ໓ ຈໍາພວກໃດແດ່ ຄື

໑. ບຸກຄົນອາໄສບຸກຄົນໃດແລ້ວ ນັບຖືພຣະພຸດທະເຈົ້າວ່າເປັນບ່ອນເພິ່ງທີ່ຣະນຶກ ນັບຖື ພຣະທໍາວ່າເປັນບ່ອນເພິ່ງທີ່ຣະນຶກ ແລະນັບຖືພຣະສົງວ່າເປັນບ່ອນເພິ່ງທີ່ຣະນຶກ ບຸກຄົນນີ້ຊື່ວ່າມີອຸປະກາຣະຫຼາຍແກ່ບຸກຄົນນີ້

໒. ບຸກຄົນອາໄສບຸກຄົນໃດແລ້ວຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ(ເຫດເກີດທຸກ) ນີ້ທຸກຂະນິໂຣທະ(ຄວາມດັບທຸກ) ນີ້ທຸກຂະນິໂຣທະ

ຄາມີນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ບຸກຄົນນີ້ຊື່ວ່າມີອຸປະກາຣະຫຼາຍແກ່ບຸກຄົນນີ້

໓. ບຸກຄົນອາໄສບຸກຄົນໃດແລ້ວເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ບຸກຄົນນີ້ຊື່ວ່າ ມີອຸປະກາຣະຫຼາຍແກ່ບຸກຄົນນີ້

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລຊື່ວ່າ ມີອຸປະກາຣະຫຼາຍແກ່ບຸກຄົນນີ້

ພິກຂຸທັງຫຼາຍ ເຮົາກ່າວວ່າ ບໍ່ມີບຸກຄົນອື່ນນອກຈາກບຸກຄົນ ໓ ຈຳພວກນີ້ທີ່ຊື່ວ່າ ເປັນຜູ້ມີອຸປະກາຣະຫຼາຍແກ່ບຸກຄົນນີ້ ການທີ່ບຸກຄົນນີ້ຈະປະຕິບັດຕອບແທນແກ່ບຸກຄົນ ໓ ຈຳພວກ ນີ້ດ້ວຍການຕອບແທນ ຄືດ້ວຍການຂາບໄຫວ້ ການລຸກຮັບ ການປະນົມມືໄຫວ້ ການສະແດງຄວາມເຄົາລົບ ການໃຫ້ຜ້ານຸ່ງຫົ່ມ ອາຫານ ບ່ອນຢູ່ອາໄສ ແລະຢາປິ່ນປົວພະຍາດ ເຮົາກ່າວວ່າບໍ່ແມ່ນຈະເຮັດໄດ້ໂດຍງ່າຍ

**ພະຫຸກາຣະສູດ ທີ ໔ ຈົບ**

## ໕. ອະຣຸກູປະມະສູດ

## ວ່າດ້ວຍບຸກຄົນທີ່ມີຈິດຄືເພັດ

[໔໕] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ມີປາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກໃດແດ່ ຄື

໑. ບຸກຄົນທີ່ມີຈິດຄືບາດເກົ່າ
໒. ບຸກຄົນທີ່ມີຈິດຄືຟ້າແມບ
໓. ບຸກຄົນທີ່ມີຈິດຄືເພັດ

ບຸກຄົນທີ່ມີຈິດຄືບາດເກົ່າ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຄົນມັກໂກດ ຫຼາຍໄປນຳຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນພຽງເລັກໜ້ອຍກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ປຽບຄືບາດເກົ່າຖືກໄມ້ຫຼືກະເບື້ອງກະທົບເຂົ້າ ຍ່ອມໃຫ້ເກີດຄວາມະເຈັບປວດຫຼາຍຂຶ້ນ ແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນແລ ເປັນຄົນ ມັກໂກດ ຫຼາຍໄປ

ນຳຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນພຽງເລັກໜ້ອຍກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ນີ້ຮຽກວ່າ ບຸກຄົນທີ່ມີຈິດຄືບາດເກົ່າ

ບຸກຄົນທີ່ມີຈິດຄືຟ້າແມບ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ປຽບຄື ຄົນມີຕາດີເຫັນຮູບໄດ້ໃນຂະນະຟ້າແມບໃນເວລາກາງຄືນທີ່ມືດມິດ ແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນແລ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ນີ້ຮຽກວ່າ ບຸກຄົນທີ່ມີຈິດຄືຟ້າແມບ

ບຸກຄົນທີ່ມີຈິດຄືເພັດ[១] ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ປຽບຄື ແກ້ວມະນີຫຼືຫີນບາງຊະນິດທີ່ເພັດຈະທຳລາຍບໍ່ໄດ້ບໍ່ມີ ແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນແລໆລໆ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ນີ້ຮຽກວ່າ ບຸກຄົນທີ່ມີຈິດຄືເພັດ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ວະຊິຣູປະມະສູດ ທີ ໕ ຈົບ**

## ໖. ເສວິຕັບພະສູດ

## ວ່າດ້ວຍບຸກຄົນທີ່ຄວນຄົບ

[໒໖] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນທີ່ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້
໒. ບຸກຄົນທີ່ຄວນຄົບຫາ ລ້ຽງແກວ່ນ ຄວນເຂົ້າໄປນັ່ງໃກ້
໓. ບຸກຄົນທີ່ຄວນສັກກາຣະ ເຄົາລົບແລ້ວຈຶ່ງຄົບຫາ ລ້ຽງແກວ່ນ ເຂົ້າໄປນັ່ງໃກ້

ບຸກຄົນທີ່ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນບໍ່ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຕ່ຳຊາມກວ່າຕົນໃນດ້ານສິນ ສະມາທິ ປັນຍາ ບຸກຄົນແນວນີ້ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້ ນອກຈາກຈະເມດຕາອະນຸເຄາະບຸກຄົນທີ່ຄວນຄົບຫາ ລ້ຽງແກວ່ນ ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ສະເໝີຕົນໃນດ້ານສິນ ສະມາທິ ປັນຍາ ບຸກຄົນແນວນີ້ຄວນຄົບຫາ ຄວນລ້ຽງແກວ່ນ ຄວນເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນການສົນທະນາກ່ຽວກັບສິນ ສະມາທິ ປັນຍາ ຈັກມີແກ່ເຮົາທັງຫຼາຍ ຜູ້ເຖິງຄວາມສະເໝີກັນໃນດ້ານສິນ ສະມາທິ ປັນຍາ ການສົນທະນາຂອງເຮົາທັງຫຼາຍນັ້ນ ຈັກດຳເນີນໄປໄດ້ ແລະຈັກເປັນຄວາມສຸກສະບາຍ ຍ້ອນເຫດນັ້ນ ບຸກຄົນແນວນີ້ຈຶ່ງຄວນຄົບຫາ ຄວນລ້ຽງແກວ່ນ ຄວນເຂົ້າໄປນັ່ງໃກ້

ບຸກຄົນທີ່ຄວນສັກກາຣະ ເຄົາລົບ ແລ້ວຈຶ່ງຄົບຫາ ລ້ຽງແກວ່ນ ເຂົ້າໄປນັ່ງໃກ້ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເໜືອກວ່າຕົນໃນດ້ານສິນ ສະມາທິ ປັນຍາ ບຸກຄົນແນວນີ້ຄວນສັກກາຣະ ເຄົາລົບແລ້ວຈຶ່ງຄົບຫາ ລ້ຽງແກວ່ນ ເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນ ແນວນີ້ຄິດວ່າ ຈັກພ່ຳເພັງສິນຂັນ(ກອງສິນ) ສະມາທິຂັນ(ກອງສະມາທິ) ປັນຍາຂັນ(ກອງປັນຍາ)ທີ່ຍັງບໍ່ບໍລິບູນໃຫ້ບໍລິບູນ ຫຼືຈັກອະນຸເຄາະສິນຂັນ ສະມາທິຂັນ ປັນຍາຂັນ ທີ່ບໍລິບູນດ້ວຍປັນຍາໃນບ່ອນນັ້ນ ໆ ຍ້ອນເຫດນັ້ນ ບຸກຄົນແນວນີ້ຈຶ່ງຄວນສັກກາຣະ ເຄົາລົບແລ້ວຈຶ່ງຄົບຫາ ລ້ຽງແກວ່ນ ເຂົ້າໄປນັ່ງໃກ້

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ບຸກຄົນຄົບຜູ້ຕ່ຳຊາມຍ່ອມພອຍຕ່ຳຊາມໄປນຳ
ແຕ່ຄົບຜູ້ທີ່ສະເໝີກັນຍ່ອມບໍ່ເສື່ອມໃນການໃດ ໆ
ຄົບຜູ້ທີ່ສູງກວ່າຍ່ອມເດ່ນຂຶ້ນທັນຕາເຫັນ
ຍ້ອນແນວນັ້ນ ຈຶ່ງຄວນຄົບຜູ້ທີ່ສູງກວ່າຕົນ

**ເສວິຕັບພະສູດທີ ໖ ຈົບ**

# ៗ. ຂິຄຸດສິຕັບພະສູດ

## ວ່າດ້ວຍບຸກຄົນທີ່ຄວນລັງກຽດ

[໔ໆ] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນທີ່ຄວນລັງກຽດ ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້
໔. ບຸກຄົນທີ່ຄວນວາງເສີຍ ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້
໓. ບຸກຄົນທີ່ຄວນຄົບຫາ ລ້ຽງແກວ່ນ ຄວນເຂົ້າໄປນັ່ງໃກ້

ບຸກຄົນທີ່ຄວນລັງກຽດ ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຄົນທຸສິນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າລັງກຽດ ມີການງານປົກປິດ ບໍ່ແມ່ນສະມະນະ ແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນຄືຂີ້ເຫຍື່ອ ບຸກຄົນແນວນີ້ຄວນລັງກຽດ ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຄົນທົ່ວໄປແມ່ນຈະບໍ່ໄດ້ເອົາຢ່າງບຸກຄົນແນວນັ້ນ ແຕ່ກິດຕິສັບອັນຊົ່ວຂອງເຂົາກໍຊ່າລືໄປວ່າ "ຄົນຄົບມິດຊົ່ວ ຄົບສະຫາຍຊົ່ວ ຄົບເພື່ອນຊົ່ວ" ປຽບຄື ງູທີ່ຈົມຢູ່ໃນຄູດ ແມ່ນຈະບໍ່ກັດໃຜ ໆ ກໍແມ່ນ ແຕ່ກໍເຮັດເຂົາໃຫ້ເປື້ອນໄດ້ ແມ່ນສັນໃດ ຄົນທົ່ວໄປກໍຄືກັນສັນນັ້ນ ແມ່ນຈະບໍ່ໄດ້ເອົາຢ່າງບຸກຄົນແນວນີ້ ແຕ່ກິດຕິສັບອັນຊົ່ວຂອງເຂົາກໍຊ່າລືໄປວ່າ "ຄົນຄົບມິດຊົ່ວ ຄົບສະຫາຍຊົ່ວ ຄົບເພື່ອນຊົ່ວ" ຍ້ອນເຫດນັ້ນ ບຸກຄົນແນວນີ້ ຈຶ່ງຄວນລັງກຽດ ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້

ບຸກຄົນທີ່ຄວນວາງເສີຍ ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວ ແມ່ນພຽງເລັກໜ້ອຍກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶງຄຽດ ສະແດງອາການໂກດຂັດເຄືອງ ແລະບໍ່ພໍໃຈ

ປຽບຄື ບາດເກົ່າຖືກໄມ້ ຫຼື ກະເບື້ອງກະທົບເຂົ້າຍ່ອມເຮັດໃຫ້ເກີດຄວາມເຈັບປວດ ຫຼາຍຂຶ້ນ ແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນພຽງເລັກໜ້ອຍກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ

ປຽບຄື ຖ່ານໄມ້ໝາກພັບຖືກໄມ້ ຫຼື ກະເບື້ອງກະທົບເຂົ້າຍ່ອມປະທຸເກີນປະມານ ແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນພຽງເລັກໜ້ອຍກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ

ປຽບຄື ຂຸມຄູດຖືກໄມ້ຫຼືກະເບື້ອງກະທົບເຂົ້າຍ່ອມສົ່ງກິ່ນເໝັນຮຸນແຮງຂຶ້ນ ແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍສັນນັ້ນເໝືອກັນ ເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມຄັບແຄ້ນໃຈ ຖືກວ່າກ່າວແມ່ນພຽງເລັກໜ້ອຍກໍຂັດໃຈ ໂກດເຄືອງ ພະຍາບາດ ຂຶ້ງຄຽດ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ

ບຸກຄົນແນວນັ້ນຄວນວາງເສີຍ ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນວ່າບຸກຄົນນັ້ນອາດດ່າເຮົາແດ່ ກ່າວໂທດເຮົາແດ່ ເຮັດເຮົາໃຫ້ສູນຫາຍແດ່ ຍ້ອນເຫດນັ້ນ ບຸກຄົນແນວນີ້ຈຶ່ງຄວນວາງເສີຍ ບໍ່ຄວນຄົບຫາ ບໍ່ຄວນລ້ຽງແກວ່ນ ບໍ່ຄວນເຂົ້າໄປນັ່ງໃກ້

ບຸກຄົນທີ່ຄວນຄົບຫາ ລ້ຽງແກວ່ນ ຄວນເຂົ້າໄປນັ່ງໃກ້ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີສີນ ມີທຳງາມ ບຸກຄົນແນວນີ້ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນວ່າຄົນທົ່ວໄປແມ່ນຈະບໍ່ໄດ້ເອົາຢ່າງບຸກຄົນ ແນວນີ້ແຕ່ກິດຕິສັບອັນງາມຂອງເຂົາກໍຊ່າລືໄປວ່າ “ຄົນຄົບມິດດີ ຄົບສະຫາຍດີ ຄົບເພື່ອນດີ” ຍ້ອນເຫດນັ້ນ ບຸກຄົນແນວນີ້ຈຶ່ງຄວນຄົບຫາ ລ້ຽງແກວ່ນ ຄວນເຂົ້າໄປນັ່ງໃກ້

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

ບຸກຄົນຄົບຜູ້ຕໍ່າຊາມຍ່ອມພອຍຕໍ່າຊາມໄປນຳ
ແຕ່ຄົບຜູ້ທີ່ສະເໝີກັນຍ່ອມບໍ່ເສື່ອມໃນການໃດ ໆ
ຄົບຜູ້ທີ່ສູງກວ່າຍ່ອມເດັ່ນຂຶ້ນທັນຕາເຫັນ
ຍ້ອນແນວນັ້ນຈຶ່ງຄວນຄົບຜູ້ທີ່ສູງກວ່າຕົນ

**ຊິຄູດສິຕັບພະສູດ ທີ ໗ ຈົບ**

# ໗. ຄູຖະພານີສູດ

## ວ່າດ້ວຍບຸກຄົນຜູ້ເວົ້າພາສາຄູດ

[໘໗] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ມີປາກົດຢູ່ໃນໂລກ ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຜູ້ເວົ້າພາສາຄູດ
໒. ບຸກຄົນຜູ້ເວົ້າພາສາດອກໄມ້
໓. ບຸກຄົນຜູ້ເວົ້າພາສານ້ຳເຜີ້ງ

ບຸກຄົນຜູ້ເວົ້າພາສາຄູດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ "ທ່ານຮູ້ສິ່ງໃດຈົ່ງກ່າວສິ່ງນັ້ນ" ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ "ຮູ້" ຫຼືຮູ້ກໍກ່າວວ່າ "ບໍ່ຮູ້" ບໍ່ເຫັນກໍກ່າວວ່າ "ເຫັນ" ຫຼືເຫັນກໍກ່າວວ່າ "ບໍ່ເຫັນ" ກ່າວຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່ ດ້ວຍປະການດັ່ງນີ້ນີ້ຮຽກວ່າ ບຸກຄົນຜູ້ເວົ້າພາສາຄູດ

ບຸກຄົນຜູ້ເວົ້າພາສາດອກໄມ້ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ "ທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ" ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ "ບໍ່ຮູ້" ຫຼືຮູ້ກໍກ່າວວ່າ "ຮູ້" ບໍ່ເຫັນກໍກ່າວວ່າ "ບໍ່ເຫັນ" ຫຼືເຫັນກໍກ່າວວ່າ "ເຫັນ" ບໍ່ກ່າວຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່ ດ້ວຍປະການດັ່ງນີ້ນີ້ຮຽກວ່າ ບຸກຄົນຜູ້ເວົ້າພາສາດອກໄມ້

ບຸກຄົນຜູ້ເວົ້າພາສານ້ຳເຜີ້ງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄືເວົ້າແຕ່ຄຳທີ່ບໍ່ມີໂທດ ມ່ວນ ໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ ນີ້ຮຽກວ່າ ບຸກຄົນຜູ້ເວົ້າພາສານ້ຳເຜີ້ງ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລມີປາກົດຢູ່ໃນໂລກ

**ຄູຖະພານີສູດທີ ໗ ຈົບ**

# ໙. ອັນທະສູດ

## ວ່າດ້ວຍບຸກຄົນຕາບອດ

[໒໙] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ມີປາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນຕາບອດ
໒. ບຸກຄົນຕາດຽວ
໓. ບຸກຄົນສອງຕາ

ບຸກຄົນຕາບອດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ບໍ່ມີໜ່ວຍຕາ ເປັນເຫດໃຫ້ໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼື ເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນ ແລະເຂົາບໍ່ມີໜ່ວຍຕາເປັນເຄື່ອງຮູ້ທຳທີ່ເປັນກຸສົນ ແລະອະກຸສົນ ຮູ້ທຳທີ່ມີໂທດແລະບໍ່ມີໂທດ ຮູ້ທຳທີ່ຊົ່ວແລະປະນີດ ຮູ້ທຳທີ່ມີສ່ວນປຽບ ດ້ວຍທຳຝ່າຍດຳແລະທຳຝ່າຍຂາວ ນີ້ຮຽກວ່າ ບຸກຄົນຕາບອດ

ບຸກຄົນຕາດຽວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ມີໜ່ວຍຕາເປັນເຫດໃຫ້ໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼືເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນ ແຕ່ເຂົາບໍ່ມີໜ່ວຍຕາເປັນເຄື່ອງຮູ້ທຳທີ່ເປັນກຸສົນແລະອະກຸສົນ ຮູ້ທຳທີ່ມີໂທດແລະບໍ່ມີໂທດ ຮູ້ທຳທີ່ຊົ່ວແລະປະນີດ ຮູ້ທຳທີ່ມີສ່ວນປຽບ ດ້ວຍທຳຝ່າຍດຳແລະທຳຝ່າຍຂາວ ນີ້ຮຽກວ່າ ບຸກຄົນຕາດຽວ

ບຸກຄົນສອງຕາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ມີໜ່ວຍຕາເປັນເຫດໃຫ້ໄດ້ໂພຄະຊັບທີ່ຍັງບໍ່ໄດ້ ຫຼືເຮັດໂພຄະຊັບທີ່ໄດ້ແລ້ວໃຫ້ເພີ່ມພູນ ແລະເຂົາມີໜ່ວຍຕາເປັນເຄື່ອງຮູ້ທຳທີ່ເປັນກຸສົນແລະອະກຸສົນ ຮູ້ທຳທີ່ມີໂທດແລະບໍ່ມີໂທດ ຮູ້ທຳທີ່ຊົ່ວແລະປະນີດ ຮູ້ທຳທີ່ມີສ່ວນປຽບ ດ້ວຍທຳຝ່າຍດຳແລະທຳຝ່າຍຂາວ ນີ້ຮຽກວ່າ ບຸກຄົນສອງຕາ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລມີປາກົດຢູ່ໃນໂລກ

ໂພຄະຊັບແນວນັ້ນບໍ່ມີແກ່ບຸກຄົນຕາບອດ
ແລະບຸກຄົນຕາບອດຍ່ອມບໍ່ທຳບຸນ
ໂທດເຄາະຍ່ອມມີແກ່ບຸກຄົນຕາບອດ
ຜູ້ມີໜ່ວຍຕາເສຍໃນໂລກທັງສອງ

ໃນການຕໍ່ມາ ເຮົາໄດ້ກ່າວເຖິງບຸກຄົນຕາດຽວນີ້ໄວ້ ກໍບຸກຄົນຕາດຽວໝົກມຸ້ນກັບທຳ ແລະອະທຳ ສະແຫວງຫາໂພຄະຊັບດ້ວຍການຄົດໂກງແລະການເວົ້າຕົວະ ອັນເປັນການລັກເອົາທັງສອງຢ່າງ

ກໍມານົບຜູ້ເປັນກາມໂພຄີບຸກຄົນ
ເປັນຄົນສະຫຼາດທີ່ຈະຮີບໂຮມໂພຄະຊັບ
ເຂົາເປັນຄົນຕາດຽວຈາກໂລກນີ້ໄປສູ່ນະຮົກຍ່ອມເດືອດຮ້ອນ
ສ່ວນບຸກຄົນສອງຕາ
ເຮົາກ່າວວ່າເປັນບຸກຄົນຜູ້ປະເສີດທີ່ສຸດ
ເຂົາໃຫ້ຊັບທີ່ຕົນໄດ້ມາດ້ວຍຄວາມໝັ່ນເປັນທານ
ຈາກໂພຄະຊັບທີ່ຕົນຫາໄດ້ໂດຍຖືກຕ້ອງຕາມທຳ
ມີຄວາມດຳຣິປະເສີດ ມີຈິດໃຈບໍ່ວອກແວກ
ຍ່ອມເຂົ້າເຖິງຖານະທີ່ຈະເລີນເຊິ່ງໄປແລ້ວບໍ່ເສົ້າໂສກ
ບຸກຄົນຄວນເວັ້ນໃຫ້ຫ່າງໄກຈາກບຸກຄົນຕາບອດແລະບຸກຄົນຕາດຽວ
ແຕ່ຄວນຄົບບຸກຄົນສອງຕາທີ່ປະເສີດທີ່ສຸດ

**ອັນທະສູດທີ ໙ ຈົບ**

## ໑໐. ອະວະກຸດຊະສູດ

## ວ່າດ້ວຍບຸກຄົນມີປັນຍາຄືໝໍ້ຂວ້ຳ

[໓໐] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນມີປັນຍາຄືໝໍ້ຂວ້ຳ
໒. ບຸກຄົນມີປັນຍາຄືຫໍ່ສົ້ນແພ
໓. ບຸກຄົນມີປັນຍາກວ້າງຂວາງ (ຄືໝໍ້ຫງາຍ)

ບຸກຄົນມີປັນຍາຄືໝໍ້ຂວ້ຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກພິກຂຸທັງຫຼາຍ ພິກຂຸທັງຫຼາຍສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນ ຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ແມ່ນລຸກຈາກບ່ອນນັ້ນແລ້ວກໍຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດຂອງກະຖານັ້ນບໍ່ໄດ້ ປຽບຄື ໝໍ້ຂວ້ຳທີ່ເຂົາຖອກນ້ຳລົງໄປ ນ້ຳຍ່ອມໄຫຼຮາດໄປ ບໍ່ຂັງຢູ່ແມ່ນສັນໃດ ບຸກຄົນລາງຄົນໃນໂລກ ນີ້ກໍຄືກັນສັນນັ້ນ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກພິກຂຸທັງຫຼາຍ ພິກຂຸທັງຫຼາຍ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນ ຈື່ເບື້ອງຕົ້ນທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນກໍບໍ່ໄດ້ ແມ່ນລຸກຈາກບ່ອນນັ້ນແລ້ວກໍຍັງຈື່ເບື້ອງຕົ້ນທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ນີ້ຮຽກວ່າ ບຸກຄົນມີປັນຍາຄືໝໍ້ຂວ້ຳ

ບຸກຄົນມີປັນຍາຄືຫໍ່ສົ້ນແພ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກພິກຂຸທັງຫຼາຍ ພິກຂຸທັງຫຼາຍ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ແກ່ເຂົາ ເຂົານັ່ງກົງບ່ອນນັ້ນ ຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ແຕ່ລຸກຈາກ ບ່ອນນັ້ນແລ້ວກໍຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ປຽບຄື ບຸຣຸດເກັບຂອງກິນຕ່າງ ໆ ຄື ງາ ເຂົ້າສານ ເຂົ້າຕົ້ມ ໝາກກະທັນໄວ້ທີ່ສົ້ນແພ ບຸຣຸດນັ້ນ ເມື່ອລຸກຈາກບ່ອນນັ້ນເພິ່ງເຮັດເຮ່ຍຊະ ຍ້ອນເຜີສະຕິແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກພິກຂຸທັງຫຼາຍ ພິກຂຸທັງຫຼາຍ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນ ຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ແຕ່ລຸກຈາກບ່ອນນັ້ນແລ້ວ ກໍຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນບໍ່ໄດ້ ນີ້ຮຽກວ່າ ບຸກຄົນມີປັນຍາຄືຫໍ່ສົ້ນແພ

ບຸກຄົນມີປັນຍາກວ້າງຂວາງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ໄປວັດເປັນປະຈຳເພື່ອຟັງທຳໃນສຳນັກພິກຂຸທັງຫຼາຍ ພິກຂຸທັງຫຼາຍສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ແກ່ເຂົາ

ເຂົານັ່ງຢູ່ບ່ອນນັ້ນ ຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ແມ່ນລຸກຈາກບ່ອນນັ້ນແລ້ວກໍຍັງຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ປຽບຄື ໝໍ້ຫງາຍ ທີ່ເຂົາຖອກນ້ຳລົງໄປ ນ້ຳຍ່ອມຂັງຢູ່ບໍ່ໄຫຼຮາດໄປ ແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍສັນນັ້ນ ຄືກັນແລ ໄປວັດເປັນປະຈຳ ເພື່ອຟັງທຳໃນສຳນັກພິກຂຸທັງຫຼາຍ ພິກຂຸທັງຫຼາຍ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນແກ່ເຂົາ ເຂົານັ່ງຢູ່ບ່ອນນັ້ນ ຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ແມ່ນລຸກຈາກບ່ອນນັ້ນແລ້ວກໍຍັງ ຈື່ເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນໄດ້ ນີ້ຮຽກວ່າ ບຸກຄົນມີປັນຍາກວ້າງຂວາງ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

ບຸກຄົນມີປັນຍາຄືໝໍ້ຂວ້ຳ
ເປັນຄົນຈ້ຳ ບໍ່ມີປັນຍາສຳລັບພິຈາລະນາ
ບຸກຄົນເຊັ່ນນັ້ນແມ່ນຈະໝັ່ນໄປໃນສຳນັກພິກຂຸທັງຫຼາຍ
ກໍບໍ່ອາດຮ່ຳຮຽນເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖາໄດ້
ຍ້ອນເຂົາບໍ່ມີປັນຍາ
ບຸກຄົນມີປັນຍາຄືຫໍ່ສົ້ນແພ
ເຮົາກ່າວວ່າ ດີກວ່າບຸກຄົນທີ່ມີປັນຍາຄືໝໍ້ຂວ້ຳ
ບຸກຄົນເຊັ່ນນັ້ນແມ່ນໝັ່ນໄປໃນສຳນັກພິກຂຸທັງຫຼາຍ
ນັ່ງຢູ່ບ່ອນນັ້ນຮຽນເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖາ
ເມື່ອລຸກຂຶ້ນແລ້ວກໍກຳນົດຮູ້ພະຍັນຊະນະບໍ່ໄດ້
ຍ້ອນພະຍັນຊະນະທີ່ເຂົາຮຽນແລ້ວເລີເລືອນໄປ
ສ່ວນບຸກຄົນມີປັນຍາກວ້າງຂວາງ
ເຮົາກ່າວວ່າ ດີກວ່າບຸກຄົນທີ່ມີປັນຍາຄືຫໍ່ສົ້ນແພ
ບຸກຄົນເຊັ່ນນັ້ນໝັ່ນໄປໃນສຳນັກພິກຂຸທັງຫຼາຍ
ນັ່ງຢູ່ບ່ອນນັ້ນຮຽນເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດແຫ່ງກະຖານັ້ນ
ຈື່ພະຍັນຊະນະໄດ້ ມີຄວາມດຳຣິປະເສີດ
ມີຈິດໃຈບໍ່ວອກແວກ ປະຕິບັດທຳສົມຄວນແກ່ທຳ
ເພິ່ງເຮັດບ່ອນສຸດແຫ່ງທຸກໄດ້

**ອະວະກຸດຊະສູດທີ ໑໐ ຈົບ**

**ປຸກຄະລະວັກທີ ໓ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ຄື



# ໔. ເທວະທູຕະວັກ

## ໝວດວ່າດ້ວຍເທວະທູດ

## ໑. ສະພົມມະກະສູດ

## ວ່າດ້ວຍສະກຸນທີ່ມີພົມ

[໓໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸດຂອງສະກຸນໃດບູຊາບິດາມານດາໃນເຮືອນຕົນ ສະກຸນນັ້ນຊື່ວ່າມີພົມ ບຸດຂອງສະກຸນໃດບູຊາບິດາມານດາໃນເຮືອນຕົນ ສະກຸນນັ້ນຊື່ວ່າມີບຸຣະພາຈານ ບຸດຂອງສະກຸນໃດບູຊາບິດາມານດາໃນເຮືອນຕົນ ສະກຸນນັ້ນຊື່ວ່າ ມີອາຫຸໄນຍະບຸກຄົນ

ຄຳວ່າ ພົມ ນີ້ ເປັນຊື່ຂອງບິດາມານດາ ຄຳວ່າ ບຸຣະພາຈານ ນີ້ ເປັນຊື່ຂອງບິດາມານດາ ຄຳວ່າ ອາຫຸໄນຍະບຸກຄົນ ນີ້ ເປັນຊື່ຂອງບິດາມານດາ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບິດາມານດາມີອຸປະກາຣະຫຼາຍ ບຳລຸງລ້ຽງ ສະແດງໂລກນີ້ແກ່ບຸດ

ບິດາມານດາຜູ້ອະນຸເຄາະປະຊາ
ທ່ານຮຽກວ່າ ພົມ ບຸຣະພາຈານ
ແລະອາຫຸໄນຍະບຸກຄົນຂອງບຸດ
ຍ້ອນເຫດນັ້ນ ບັນດິດເພິ່ງນະມັດສະການ
ແລະສັກກາຣະບິດາມານດານັ້ນດ້ວຍເຂົ້າ ນ້ຳ ຜ້າ ບ່ອນນອນ
ການອົບກິ່ນ ການໃຫ້ອາບນ້ຳ ແລະການລ້າງຕີນ
ຍ້ອນການປົບນິບັດບິດາມານດານັ້ນ
ບັນດິດຈຶ່ງສັນເສີນໃນໂລກນີ້ເອງ
ເຂົາຕາຍໄປແລ້ວຍ່ອມບັນເທີງໃນສະຫວັນ

**ສະພົມມະກະສູດ ທີ ໑ ຈົບ**

# ໘. ອານັນທະສູດ

## ວ່າດ້ວຍພຣະອານົນທູນຖາມພຣະຜູ້ມີພຣະພາກເຈົ້າ

[໓໘] ຄັ້ງນັ້ນ ທ່ານພຣະອານົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ການທີ່ພິກຂຸໄດ້ສະມາທິແນວທີ່ບໍ່ຕ້ອງມີອະຫັງການ (ການຖືວ່າເປັນເຮົາ) ມະມັງການ (ການຖືວ່າເປັນຂອງເຮົາ) ແລະມານານຸໄສ (ກິເລດນອນຈົມຄືຄວາມຖືໂຕ) ທັງໃນກາຍທີ່ມີວິນຍານນີ້ ແລະໃນນິມິດພາຍນອກທັງປວງ ແລະການທີ່ພິກຂຸຜູ້ເຂົ້າເຖິງ ເຈໂຕວິມຸດຕິ ປັນຍາວິມຸດຕິບໍ່ມີອະຫັງການ ມະມັງການ ແລະມານານຸໄສຢູ່ ເພິ່ງມີໄດ້ຢູ່ບໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ການທີ່ພິກຂຸໄດ້ສະມາທິແນວທີ່ບໍ່ຕ້ອງມີອະຫັງການ ມະມັງການ ແລະມານານຸໄສທັງໃນກາຍທີ່ມີວິນຍານນີ້ ແລະໃນນິມິດພາຍນອກ ທັງປວງ ແລະການທີ່ພິກຂຸຜູ້ເຂົ້າເຖິງເຈໂຕວິມຸດຕິ ປັນຍາວິມຸດຕິບໍ່ມີອະຫັງການ ມະມັງການ ແລະມານານຸໄສຢູ່ ເພິ່ງມີໄດ້"

ທ່ານພຣະອານົນທູນຖາມວ່າ "ການທີ່ພິກຂຸໄດ້ສະມາທິແນວທີ່ບໍ່ຕ້ອງມີອະຫັງການ ມະມັງການ ແລະມານານຸໄສທັງໃນກາຍທີ່ມີວິນຍານນີ້ ແລະໃນນິມິດພາຍນອກທັງປວງ ແລະການທີ່ພິກຂຸຜູ້ເຂົ້າເຖິງເຈໂຕວິມຸດຕິ ປັນຍາວິມຸດຕິ ບໍ່ມີອະຫັງການ ມະມັງການ ແລະມານານຸໄສຢູ່ ເພິ່ງມີໄດ້ແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ພິກຂຸໃນທຳວິໄນນີ້ ມີຄວາມຄິດແນວນີ້ວ່າ "ທຳມະຊາດ ນັ້ນສະງົບ ນັ້ນປະນີດ ຄື ຄວາມສະງົບສັງຂານທັງປວງ ຄວາມສະລະຄືນອຸປະທິທັງປວງ ຄວາມໝົດສິ້ນຕັນຫາ ຄວາມຄາຍກຳໜັດ ຄວາມດັບທຸກ ນິບພານ" ອານົນ ການທີ່ພິກຂຸ ໄດ້ສະມາທິແນວທີ່ບໍ່ຕ້ອງມີອະຫັງການ ມະມັງການ ແລະມານານຸໄສທັງໃນກາຍທີ່ມີວິນຍານນີ້ ແລະໃນນິມິດພາຍນອກທັງປວງ ແລະການທີ່ພິກຂຸຜູ້ເຂົ້າເຖິງເຈໂຕວິມຸດຕິ ປັນຍາວິມຸດຕິບໍ່ມີອະຫັງການ ມະມັງການ ແລະມານານຸໄສຢູ່ ເພິ່ງມີໄດ້ຢ່າງງນີ້ແລ

ອານົນ ເຮົາໝາຍເອົາແນວນີ້ ຈຶ່ງກ່າວໄວ້ໃນປຸນນະກະປັນຫາໃນປາຣາຍະນະວັກດັ່ງນີ້ວ່າ

ບຸກຄົນໃດຮູ້ອັດຕະພາບຂອງຜູ້ອື່ນແລະຂອງຕົນໃນໂລກ
ບໍ່ມີກິເລດເປັນເຫດໃຫ້ຫວັ່ນໄຫວໃນໂລກໃດ ໆ
ເຮົາກ່າວວ່າບຸກຄົນນັ້ນເປັນຜູ້ສະງົບ

ບໍ່ມີກິເລດເຮັດໃຫ້ຈິດມົວໝອງ ບໍ່ມີກິເລດກະທົບຈິດ
ບໍ່ມີຄວາມທະເຍີທະຍານ ຂ້າມພົ້ນຊາດແລະຊະຣາໄດ້ແລ້ວ

**ອານັນທະສູດ ທີ ໘ ຈົບ**

## ໙. ສາຣີປຸດຕະສູດ

## ວ່າດ້ວຍພຣະສາຣີບຸດຂາບທູນພຣະຜູ້ມີພຣະພາກເຈົ້າ

[໙໙] ຄັ້ງນັ້ນ ທ່ານພຣະສາຣີບຸດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດກັບທ່ານພຣະສາຣີບຸດດັ່ງນີ້ ວ່າ

"ສາຣີບຸດ ເຮົາສະແດງທຳໂດຍຫຍໍ້ກໍໄດ້ ເຮົາສະແດງທຳໂດຍພິດສະດານກໍໄດ້ ເຮົາສະແດງທຳທັງໂດຍຫຍໍ້ ແລະໂດຍພິດສະດານກໍໄດ້ ແຕ່ບຸກຄົນຜູ້ຮູ້ທົ່ວເຖິງທຳຫາໄດ້ຍາກ"

ທ່ານພຣະສາຣີບຸດຂາບທູນວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການ ຂ້າແດ່ພຣະສຸຄົດເຈົ້າ ບັດນີ້ເປັນເວລາທີ່ພຣະຜູ້ມີພຣະພາກເຈົ້າ ເພິ່ງສະແດງທຳໂດຍຫຍໍ້ ເພິ່ງສະແດງທຳໂດຍພິດສະດານ ເພິ່ງສະແດງທຳທັງໂດຍຫຍໍ້ ແລະໂດຍພິດສະດານ ຈັກມີຜູ້ຮູ້ທົ່ວເຖິງທຳໄດ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ສາຣີບຸດ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ ແນວນີ້ວ່າ "ຈັກບໍ່ມີອະຫັງການ ມະມັງການ ແລະມານານຸໄສທັງໃນກາຍທີ່ມີວິນຍານນີ້ແລະ ໃນນິມິດພາຍນອກທັງປວງ ແລະເຮົາທັງຫຼາຍຈັກເຂົ້າເຖິງເຈໂຕວິມຸດຕິ ປັນຍາວິມຸດຕິບໍ່ມີ ອະຫັງການມະມັງການ ແລະມານານຸໄສຢູ່" ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້

ຍ້ອນພິກຂຸບໍ່ມີອະຫັງການ ມະມັງການ ແລະມານານຸໄສທັງໃນກາຍທີ່ມີວິນຍານນີ້ແລະໃນນິມິດພາຍນອກທັງປວງ ແລະຍ້ອນພິກຂຸຜູ້ເຂົ້າເຖິງເຈໂຕວິມຸດຕິ ປັນຍາວິມຸດຕິບໍ່ມີອະຫັງການມະມັງການ ແລະມານານຸໄສຢູ່ ເຮົາຈຶ່ງຮຽກວ່າ ພິກຂຸນີ້ຕັດຕັນຫາ ຖອນສັງໂຍດ ເຮັດບ່ອນສຸດແຫ່ງທຸກ ຍ້ອນຮູ້ຍິ່ງດ້ວຍການລະມານະໄດ້ໂດຍຖືກຕ້ອງ

ເຮົາໝາຍເອົາແນວນີ້ ຈຶ່ງກ່າວໄວ້ໃນອຸທະຍະບັນຫາໃນປາຣາຍະນະວັກ ດັ່ງນີ້ວ່າ

ເຮົາກ່າວອັນຍາວິໂມກ ເຊິ່ງເປັນທຳ
ສຳລັບລະທຳທັງສອງຄືການສັນຍາແລະໂທມະນັດ
ເປັນທຳບັນເທົາຖີນະ (ຄວາມງ່ວງ)

ເປັນທຳອັດກັ້ນກຸກກຸດຈະ (ຄວາມຮ້ອນໃຈ)
ເຊິ່ງບໍລິສຸດຍ້ອນອຸເປກຂາແລະສະຕິ
ມີການຮື່ນຕອງທຳ ເປັນທຳເກີດກ່ອນ
ແລະເປັນທຳເຄື່ອງທຳລາຍອະວິດຊາ (ຄວາມບໍ່ຮູ້ແຈ້ງ)

**ສາຣີປຸດຕະສູດທີ ໓ ຈົບ**

## ໔. ນິທານະສູດ

## ວ່າດ້ວຍເຫດເກີດແຫ່ງກຳ

[໓໔] ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ ໓ ປະການນີ້

ເຫດໃຫ້ເກີດກຳ ໓ ປະການ ອັນໃດແດ່ ຄື

໑. ໂລພະ (ຄວາມຢາກໄດ້) ເປັນເຫດໃຫ້ເກີດກຳ
໒. ໂທສະ (ຄວາມຄິດປະທຸດສະຮ້າຍ) ເປັນເຫດໃຫ້ເກີດກຳ
໓. ໂມຫະ (ຄວາມຫຼົງ) ເປັນເຫດໃຫ້ເກີດກຳ

ກຳທີ່ຖືກໂລພະຄອບງຳ ເກີດຈາກໂລພະ ມີໂລພະເປັນເຫດ ມີໂລພະເປັນແດນເກີດ ຍ່ອມໃຫ້ຜົນໃນບ່ອນ ເຊິ່ງອັດຕະພາບຂອງເຂົາເກີດ ບຸກຄົນຕ້ອງສະເຫວີຍຜົນກຳນັ້ນໃນຂັນທີ່ກຳນັ້ນໃຫ້ຜົນໃນປັດຈຸບັນ ໃນລຳດັບທີ່ເກີດ ຫຼື ໃນໄລຍະຕໍ່ໄປ

ກຳທີ່ຖືກໂທສະຄອບງຳ ເກີດຈາກໂທສະ ມີໂທສະເປັນເຫດ ມີໂທສະເປັນແດນເກີດ ຍ່ອມໃຫ້ຜົນໃນບ່ອນ ເຊິ່ງອັດຕະພາບຂອງເຂົາເກີດ ບຸກຄົນຕ້ອງສະເຫວີຍຜົນກຳນັ້ນໃນຂັນທີ່ກຳນັ້ນໃຫ້ຜົນໃນປັດຈຸບັນ ໃນລຳດັບທີ່ເກີດ ຫຼື ໃນໄລຍະຕໍ່ໄປ

ກຳທີ່ຖືກໂມຫະຄອບງຳ ເກີດຈາກໂມຫະ ມີໂມຫະເປັນເຫດ ມີໂມຫະເປັນແດນເກີດ ຍ່ອມໃຫ້ຜົນໃນບ່ອນ ເຊິ່ງອັດຕະພາບຂອງເຂົາເກີດ ບຸກຄົນຕ້ອງສະເຫວີຍຜົນກຳນັ້ນໃນຂັນທີ່ກຳນັ້ນໃຫ້ຜົນໃນປັດຈຸບັນ ໃນລຳດັບທີ່ເກີດ ຫຼື ໃນໄລຍະຕໍ່ໄປ

ປຽບຄື ເມັດພືດທີ່ບໍ່ແຕກຫັກ ບໍ່ເສຍຫາຍ ບໍ່ຖືກລົມແລະແດດກະທົບ ມີແກ່ນໃນ ຖືກເກັບໄວ້ຢ່າງດີ ຖືກຫວ່ານລົງເທິງພື້ນດິນທີ່ກຽມໄວ້ດີ ໃນນາດີ ແລະຝົນກໍຕົກດີ ເມັດພືດທີ່ຝົນຕົກໃສ່ແນວນັ້ນ ຍ່ອມເຖິງຄວາມຈະເລີນງອກງາມ ໄພບູນ ແມ່ນສັນໃດ

ກຳທີ່ຖືກໂລພະຄອບງຳ ເກີດຈາກໂລພະ ມີໂລພະເປັນເຫດ ມີໂລພະເປັນແດນເກີດ ກໍຄື ກັນສັນນັ້ນ ຍ່ອມໃຫ້ຜົນໃນບ່ອນເຊິ່ງອັດຕະພາບຂອງເຂົາເກີດ ບຸກຄົນຕ້ອງສະເຫວີຍຜົນກຳນັ້ນ ໃນຂັນທີ່ກຳນັ້ນໃຫ້ຜົນໃນປັດຈຸບັນ ໃນລຳດັບທີ່ເກີດ ຫຼື ໃນໄລຍະຕໍ່ໄປ

ກຳທີ່ຖືກໂທສະຄອບງຳ ຯລຯ ກຳທີ່ຖືກໂມຫະຄອບງຳ ເກີດຈາກໂມຫະ ມີໂມຫະ ເປັນເຫດ ມີໂມຫະເປັນແດນເກີດ ຍ່ອມໃຫ້ຜົນໃນບ່ອນ ເຊິ່ງອັດຕະພາບຂອງເຂົາເກີດ ບຸກຄົນຕ້ອງສະເຫວີຍ ຜົນກຳນັ້ນ ໃນຂັນທີ່ກຳນັ້ນ ໃຫ້ຜົນໃນປັດຈຸບັນ ໃນລຳດັບທີ່ເກີດ ຫຼື ໃນໄລຍະຕໍ່ໄປ

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ ໓ ປະການນີ້ແລ

ເຫດໃຫ້ເກີດກຳ ໓ ປະການນີ້

ເຫດໃຫ້ເກີດກຳ ໓ ປະການ ອັນໃດແດ່ ຄື

໑. ອະໂລພະ (ຄວາມບໍ່ໂລບ) ເປັນເຫດໃຫ້ເກີດກຳ
໒. ອະໂທສະ (ຄວາມບໍ່ຄິດປະທຸດສະຮ້າຍ) ເປັນເຫດໃຫ້ເກີດກຳ
໓. ອະໂມຫະ (ຄວາມບໍ່ຫຼົງ) ເປັນເຫດໃຫ້ເກີດກຳ

ກຳທີ່ຖືກອະໂລພະຄອບງຳ ເກີດຈາກອະໂລພະ ມີອະໂລພະເປັນເຫດ ມີອະໂລພະເປັນແດນ ເກີດ ເມື່ອໝົດສິ້ນໂລພະແລ້ວ ເປັນອັນບຸກຄົນລະກຳນັ້ນໄດ້ ຕັດຮາກກົ່ນເຫງົ້າໄດ້ຄືຕົ້ນຕານ ທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ກຳທີ່ຖືກອະໂທສະຄອບງຳ ເກີດຈາກອະໂທສະ ມີອະໂທສະເປັນເຫດ ມີອະໂທສະເປັນແດນ ເກີດ ເມື່ອສິ້ນໂທສະແລ້ວ ເປັນອັນບຸກຄົນລະກຳນັ້ນໄດ້ ຕັດຮາກກົ່ນເຫງົ້າໄດ້ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ກຳທີ່ຖືກອະໂມຫະຄອບງຳ ເກີດຈາກອະໂມຫະ ມີອະໂມຫະເປັນເຫດ ມີອະໂມຫະເປັນແດນ ເກີດ ເມື່ອສິ້ນໂມຫະແລ້ວ ເປັນອັນບຸກຄົນລະກຳນັ້ນໄດ້ ຕັດຮາກກົ່ນເຫງົ້າໄດ້ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ເມັດພືດບໍ່ແຕກຫັກ ບໍ່ເສຍຫາຍ ບໍ່ຖືກລົມແລະແດດກະທົບ ມີແກ່ນໃນ ຖືກເກັບ ໄວ້ຢ່າງດີ ບຸຣຸດເພິ່ງເອົາໄຟເຜົາເມັດພືດເຫຼົ່ານັ້ນ ເມື່ອເອົາໄຟເຜົາແລ້ວ ເຮັດໃຫ້ເປັນຂີ້ ເມື່ອເຮັດໃຫ້ເປັນຂີ້ແລ້ວເພິ່ງໂຮຍລົງໃນລົມທີ່ພັດແຮງ ຫຼື ລອຍໃນແມ່ນ້ຳທີ່ມີແລວນ້ຳໄຫຼແຮງ ເມັດພືດອັນນັ້ນຊື່ວ່າຖືກຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ແມ່ນສັນໃດ

ກຳທີ່ຖືກອະໂລພະຄອບງຳ ເກີດຈາກອະໂລພະ ມີອະໂລພະເປັນເຫດ ມີອະໂລພະເປັນແດນ ເກີດ ກໍຄືກັນສັນນັ້ນ ເມື່ອສິ້ນໂລພະແລ້ວ ເປັນອັນບຸກຄົນລະກຳນັ້ນໄດ້ ຕັດຮາກກົ່ນເຫງົ້າໄດ້ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນ ຕໍ່ໄປບໍ່ໄດ້

ກຳທີ່ຖືກອະໂທສະຄອບງຳ ຯລຯ ກຳທີ່ຖືກອະໂມຫະຄອບງຳ ເກີດຈາກອະໂມຫະ ມີອະໂມຫະເປັນເຫດ ມີອະໂມຫະເປັນແດນເກີດ ເມື່ອສິ້ນໂມຫະແລ້ວ ເປັນອັນບຸກຄົນລະກຳນັ້ນໄດ້ ຯລຯ ເກີດຂຶ້ນຕໍ່ໄປບໍ່ໄດ້

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ ໓ ປະການນີ້ແລ

ຄົນຈົ໊າເຮັດກຳທີ່ເກີດຍ້ອນໂລພະ ໂທສະ ແລະໂມຫະ
ກຳທີ່ຄົນຈົ໊ານັ້ນເຮັດແລ້ວຈະຫຼາຍຫຼືໜ້ອຍກໍຕາມ
ຍ່ອມໃຫ້ຜົນໃນອັດຕະພາບນີ້ແລ
ສິ່ງອື່ນ (ທີ່ຈະຮອງຮັບຜົນກຳນັ້ນ) ບໍ່ມີ
ຍ້ອນເຫດນັ້ນ ພິກຂຸຜູ້ຮູ້ໂລພະ ໂທສະ ແລະໂມຫະ
(ຈຶ່ງບໍ່ເຮັດ) ກຳທີ່ເກີດ ຍ້ອນເມື່ອເຮັດວິດຊາ ໃຫ້ເກີດຂຶ້ນ
ຍ່ອມລະທຸກຄະຕິທັງປວງໄດ້

**ນິທານະສູດ ທີ ໔ ຈົບ**

## ໕. ຫັດຖະກະສູດ

### ວ່າດ້ວຍຫັດຖະກະກຸມານທູນຖາມເຖິງຄວາມສຸກ

[໓໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ເທິງທີ່ລາດໃບໄມ້ໃນສີສະປາວັນ (ປ່າໄມ້ສີສຽດ) ໃກ້ທາງທຽວຂອງງົວ ເຂດນະຄອນອາລະວີ

ຄັ້ງນັ້ນ ຫັດຖະກະກຸມານຊາວນະຄອນອາລະວີ ຍ່າງພັກຜ່ອນອິລິຍາບົດ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ປະທັບນັ່ງເທິງທີ່ລາດໃບໄມ້ໃນສີສະປາວັນ ໃກ້ທາງທຽວຂອງງົວ ຈຶ່ງເຂົ້າໄປເຝົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຜູ້ຈະເລີນ ພຣະອົງຊົງຢູ່ສຸກສະບາຍດີບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ແນວນັ້ນ ກຸມານ ເຮົາຢູ່ເປັນສຸກດີ ແລະເຮົາເປັນໜຶ່ງໃນບັນດາຄົນທີ່ຢູ່ເປັນສຸກທີ່ສຸດໃນໂລກ"

ຫັດຖະກະກຸມານຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຣາຕີໃນລະດູໜາວຕັ້ງຢູ່ໃນລະຫວ່າງ[๑] ເປັນສະໄໝທີ່ຫິມະຕົກພື້ນດິນແຂງ ແຕກຣະແຫງ ທີ່ລາດໃບໄມ້ບາງ ໃບໄມ້ທັງຫຼາຍຢູ່ຫ່າງກັນ ຜ້າກາສາຍະ (ຜ້າຍ້ອມນ້ຳຝາດ) ເຢັນ ແລະລົມເວຣຳພະ ທີ່ເຢືອກເຢັນກໍກຳລັງພັດ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຕັດແນວນີ້ວ່າ "ແນວນັ້ນ ກຸມານ ເຮົາຢູ່ສຸກສະບາຍດີ ເຮົາເປັນໜຶ່ງໃນບັນດາຄົນທີ່ຢູ່ເປັນສຸກທີ່ສຸດໃນໂລກ"

ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປອີກວ່າ "ຖ້າເປັນແນວນັ້ນ ໃນເລື້ອງນີ້ເຮົາຈັກຍ້ອນຖາມທ່ານ ທ່ານເພິ່ງຕອບບັນຫານັ້ນຕາມທີ່ທ່ານພໍໃຈ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ເຮືອນຍອດ[๒] ຂອງຄະຫະບໍດີ ຫຼື ບຸດຄະຫະບໍດີໃນໂລກນີ້ທີ່ເຂົາໂບກທັງພາຍໃນແລະພາຍນອກ ລົມພັດເຂົ້າບໍ່ໄດ້ ມີບານປະຕູອັດແຈບດີ ປ່ອງຢ້ຽມອັດແຈບສະນິດ ໃນເຮືອນຍອດນັ້ນ ເພິ່ງມີບັນລັງປູລາດດ້ວຍຜ້າໂກເຊົາ ປູລາດດ້ວຍເຄື່ອງປູລາດເຮັດດ້ວຍຂົນແກະສີຂາວ ລາດດ້ວຍເຄື່ອງປູລາດເຮັດດ້ວຍຂົນແກະລາຍດອກໄມ້ ລາດດ້ວຍເຄື່ອງປູລາດຢ່າງດີເຮັດດ້ວຍໜັງຊະມົດ ຂ້າງເທິງມີເພດານ ມີໝອນສີແດງວາງໄວ້ທັງ ໔ ຂ້າງ ແລະປະທີບນ້ຳມັນສ່ອງສະຫວ່າງຢູ່ໃນເຮືອນນີ້ປະຊາບໍດີ ໔ ນາງເພິ່ງບຳລຸງດ້ວຍວິທີທີ່ໜ້າປະທັບໃຈ ໜ້າພໍໃຈ ທ່ານເຂົ້າໃຈເລື້ອງນັ້ນແນວໃດ? ຄະຫະບໍດີ ຫຼື ບຸດຄະຫະບໍດີນັ້ນ ເພິ່ງຢູ່ເປັນສຸກບໍ ຫຼື ທ່ານເຂົ້າໃຈໃນເລື້ອງນີ້ແນວໃດ?"

"ຄະຫະບໍດີ ຫຼື ບຸດຄະຫະບໍດີນັ້ນເພິ່ງຢູ່ເປັນສຸກ ແລະເຂົາເປັນຄົນໜຶ່ງໃນບັນດາຄົນທີ່ຢູ່ເປັນສຸກໃນໂລກ ຂ້ານ້ອຍ"

"ກຸມານ ທ່ານເຂົ້າໃຈເລື້ອງນີ້ແນວໃດ ຄວາມຮ້ອນຮົນທາງກາຍ ຫຼື ທາງໃຈທີ່ເກີດຍ້ອນຣາຄະ ເຊິ່ງເປັນເຫດໃຫ້ຜູ້ທີ່ຖືກແຜດເຜົາຢູ່ເປັນທຸກ ເພິ່ງເກີດຂຶ້ນແກ່ຄະຫະບໍດີ ຫຼື ບຸດຄະຫະບໍດີນັ້ນແດ່ບໍ?"

"ເກີດຂຶ້ນໄດ້ ຂ້ານ້ອຍ"

"ກຸມານ ຄະຫະບໍດີ ຫຼື ບຸດຄະຫະບໍດີນັ້ນ ຖືກຄວາມຮ້ອນຮົນທີ່ເກີດຍ້ອນຣາຄະໃດແຜດເຜົາ ຢູ່ເພິ່ງຢູ່ເປັນທຸກ ຣາຄະນັ້ນ ຕະຖາຄົດລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າໄດ້ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນແນວນັ້ນ ເຮົາຈຶ່ງຢູ່ເປັນສຸກ ກຸມານ ທ່ານເຂົ້າໃຈເລື້ອງນີ້ແນວໃດ? ຄວາມຮ້ອນຮົນທາງກາຍ ຫຼື ທາງ

ໃຈທີ່ເກີດຍ້ອນໂທສະ ຯລຯ ຄວາມຮ້ອນຮົນທາງກາຍ ຫຼື ທາງໃຈ ທີ່ເກີດຍ້ອນໂມຫະ ເຊິ່ງເປັນເຫດໃຫ້ຜູ້ທີ່ຖືກແຜດເຜົາຢູ່ເປັນທຸກ ເພິ່ງເກີດຂຶ້ນແກ່ຄະຫະບໍດີ ຫຼື ບຸດຄະຫະບໍດີນັ້ນແດ່ບໍ?"

"ເກີດຂຶ້ນ ຂ້ານ້ອຍ"

"ກຸມານ ຄະຫະບໍດີ ຫຼື ບຸດຄະຫະບໍດີນັ້ນ ຖືກຄວາມຮ້ອນຮົນທີ່ເກີດຈາກໂມຫະໃດແຜດເຜົາຢູ່ ໂມຫະນັ້ນ ຕະຖາຄົດລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າໄດ້ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນແນວນັ້ນ ເຮົາຈຶ່ງຢູ່ເປັນສຸກ"

ພາມຜູ້ດັບກິເລດແລ້ວຍ່ອມຢູ່ເປັນສຸກທຸກເມື່ອ
ຜູ້ບໍ່ຕິດຢູ່ໃນກາມ ເປັນຄົນເຢືອກເຢັນ
ບໍ່ມີອຸປະທິກິເລດ ຕັດກິເລດເຄື່ອງຂ້ອງທຸກຢ່າງແລ້ວ
ເພິ່ງກຳຈັດຄວາມກະວົນກະວາຍໃນໃຈ
ເຂົ້າເຖິງຄວາມສະງົບຍ່ອມຢູ່ເປັນສຸກ

**ຫັດຖະກະສູດ ທີ ໕ ຈົບ**

## ๖. ເທວະທູຕະສູດ

## ວ່າດ້ວຍເທວະທູດ

[໓๖] ພິກຂຸທັງຫຼາຍ ເທວະທູດ[໔] ໓ ຈຳພວກນີ້

ເທວະທູດ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ ປະພຶດກາຍທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍກາຍ) ວະຈີທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍວາຈາ) ແລະມະໂນທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍໃຈ) ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ນາຍນິຣະຍະບານຈັບແຂນເຂົາໄປສະແດງຕໍ່ພະຍາຍົມ ວ່າ "ຂໍເດຊະ ຄົນຜູ້ນີ້ບໍ່ເກື້ອກູນມານດາ ບໍ່ເກື້ອກູນບິດາ ບໍ່ເກື້ອກູນສະມະນະ ບໍ່ເກື້ອກູນ ພາມ ແລະບໍ່ອ່ອນນ້ອມຕໍ່ຜູ້ໃຫຍ່ໃນສະກຸນ ຂໍພຣະອົງ ຈົ່ງລົງໂທດແກ່ຄົນຜູ້ນີ້ເທີ້ນ"

ພິກຂຸທັງຫຼາຍ ພະຍາຍົມສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ ໑ ວ່າ "ເຈົ້າບໍ່ເຄີຍເຫັນເທວະທູດທີ່ ໑ ຜາກົດໃນໝູ່ມະນຸດແດ່ບໍ?"

ເຂົາຕອບວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ໃນໝູ່ມະນຸດ ສະຕີຫຼືບຸຣຸດມີອາຍຸ ໗໐ ປີ ໘໐ ປີ ຫຼື ໑໐໐ ປີ ເປັນຄົນຊະຣາ ມີກະດູກຂ້າງຄົດ ຫຼັງໂກ່ງ ຫຼັງກ່ອມ ຖືໄມ້ການເທົ້າ ຍ່າງງົກ ໆ ເງິ່ນ ໆ ເກ້ ໆ ກັງ ໆ ໝົດຄວາມເປັນໜຸ່ມສາວ ແຂ້ວຫັກ ຜົມຫງອກ ຫົວລ້ານ ໜັງຫ່ຽວ ໂຕຕົກກະ ເຈົ້າບໍ່ເຄີຍເຫັນແດ່ບໍ?"

ເຂົາຕອບວ່າ "ເຄີຍເຫັນ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ເຈົ້ານັ້ນ ເປັນຜູ້ຮູ້ດຽງສາ ເປັນຜູ້ໃຫຍ່ ບໍ່ໄດ້ຄິດແນວນີ້ເລີຍບໍວ່າ "ເຖິງໂຕເຮົາກໍມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້ ດັ່ງນັ້ນແລ້ວ ເຮົາຈະທຳຄວາມດີທາງກາຍ ວາຈາ ແລະໃຈ"

ເຂົາຕອບວ່າ "ບໍ່ເຄີຍຄິດ ຍ້ອນມົວຜະໝາດຢູ່ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ເຈົ້າບໍ່ໄດ້ທຳຄວາມດີທາງກາຍ ວາຈາ ແລະໃຈ ຍ້ອນມົວຜະໝາດຢູ່ ດັ່ງນັ້ນແລ້ວ ເຂົາຈະລົງໂທດເຈົ້າຕາມຖານະທີ່ຜະໝາດ ກໍບາບກຳນີ້ນັ້ນ ບິດາມານດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ມິດອຳມາດ ຍາດສາໂລຫິດ ເທວະດາ ສະມະນະພາມບໍ່ໄດ້ເຮັດໃຫ້ເລີຍ ເຈົ້າເຮັດເອງແທ້ ໆ ເຈົ້ານັ້ນເອງຕ້ອງຮັບຜົນຂອງບາບກຳນັ້ນຜູ້ດຽວ"

໔. ພະຍາຍົມ ເມື່ອສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ ໑ ແລ້ວ ຈຶ່ງສອບສວນຊັກໄຊ້ໄລ່ລຽງເຖິງເທວະທູດທີ ໔ ວ່າ "ເຈົ້າບໍ່ເຄີຍເຫັນເທວະທູດທີ່ ໔ ຜາກົດ ໃນໝູ່ມະນຸດແດ່ບໍ?"

ເຂົາຕອບວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ໃນໝູ່ມະນຸດ ມີສະຕີຫຼືບຸຣຸດ ຜູ້ປ່ວຍ ຜູ້ປະສົບທຸກ ເປັນໄຂ້ໜັກນອນຈົມຢູ່ໃນມູດ ແລະຄູດຂອງຕົນ ຜູ້ອື່ນຕ້ອງຊ່ອຍໂຈມໃຫ້ລຸກຂຶ້ນ ຊ່ອຍປ້ອນອາຫານ ເຈົ້າບໍ່ເຄີຍເຫັນແດ່ບໍ?"

ເຂົາຕອບວ່າ "ເຄີຍເຫັນ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ເຈົ້ານັ້ນ ເປັນຜູ້ຮູ້ດຽງສາ ເປັນຜູ້ໃຫຍ່ ບໍ່ເຄີຍຄິດແດ່ບໍວ່າ "ເຖິງໂຕເຮົາກໍຕ້ອງປ່ວຍໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມປ່ວຍໄຂ້ໄປໄດ້ ດັ່ງນັ້ນແລ້ວ ເຮົາຈະທຳຄວາມດີທາງກາຍ ວາຈາ ແລະໃຈ"

ເຂົາຕອບວ່າ "ບໍ່ເຄີຍຄິດ ຍ້ອນມົວຜະໝາດຢູ່ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ເຈົ້າບໍ່ໄດ້ທຳຄວາມດີທາງກາຍ ວາຈາ ແລະໃຈ ຍ້ອນມົວຜະໝາດຢູ່ ຖ້າຈັ່ງຊັ້ນແລ້ວ ເຂົາຈະລົງໂທດເຈົ້າຕາມຖານະທີ່ຜະໝາດ ກໍບາບກຳນັ້ນ ບິດາມານດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ມິດອຳມາດ ຍາດສາໂລຫິດ ເທວະດາ ສະມະນະພາມບໍ່ໄດ້ເຮັດໃຫ້ເລີຍ ເຈົ້າເຮັດເອງແທ້ ໆ ເຈົ້ານັ້ນເອງ ຕ້ອງຮັບຜົນຂອງບາບກຳນັ້ນຜູ້ດຽວ"

໓. ພະຍາຍົມ ເມື່ອສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ ໒ ແລ້ວຈຶ່ງສອບສວນຊັກໄຊ້ໄລ່ລຽງເຖິງເທວະທູດທີ ໓ ວ່າ "ເຈົ້າບໍ່ເຄີຍເຫັນເທວະທູດທີ ໓ ທີ່ຜາກົດໃນໝູ່ມະນຸດແດ່ບໍ?"

ເຂົາຕອບວ່າ "ບໍ່ເຄີຍເຫັນ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ໃນໝູ່ມະນຸດ ມີສະຕີຫຼືບຸຣຸດທີ່ຕາຍໄດ້ ໑ ມື້ ໒ ມື້ ຫຼື ໓ ມື້ ພອງຂຶ້ນ ເປັນສີຂຽວ ມີນ້ຳເຫຼືອງແຕກຊ່ານ ເຈົ້າບໍ່ເຄີຍເຫັນແດ່ບໍ?"

ເຂົາຕອບວ່າ "ເຄີຍເຫັນ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ເຈົ້າເປັນຜູ້ຮູ້ດຽງສາ ເປັນຜູ້ໃຫຍ່ ບໍ່ເຄີຍຄິດແດ່ບໍວ່າ ເຖິງໂຕເຮົາກໍມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ດັ່ງນັ້ນແລ້ວ ເຮົາຈະທຳຄວາມດີທາງກາຍ ວາຈາ ແລະໃຈ"

ເຂົາຕອບວ່າ "ບໍ່ເຄີຍຄິດ ຍ້ອນມົວຜະໝາດຢູ່ ຂ້ານ້ອຍ"

ພະຍາຍົມຖາມເຂົາວ່າ "ເຈົ້າບໍ່ໄດ້ທຳຄວາມດີທາງກາຍ ວາຈາ ແລະໃຈ ຍ້ອນມົວຜະໝາດຢູ່ ດັ່ງນັ້ນແລ້ວ ເຂົາຈະລົງໂທດເຈົ້າຕາມຖານະທີ່ຜະໝາດ ກໍບາບກຳນັ້ນ ບິດາມານດ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ມິດອຳມາດ ຍາດສາໂລຫິດ ເທວະດາ ສະມະນະພາມບໍ່ໄດ້ເຮັດໃຫ້ເລີຍ ເຈົ້າເຮັດເອງແທ້ ໆ ເຈົ້ານັ້ນເອງ ຕ້ອງຮັບຜົນຂອງບາບກຳນັ້ນຜູ້ດຽວ"

ພະຍາຍົມເມື່ອສອບສວນຊັກໄຊ້ໄລ່ລຽງເຂົາເຖິງເທວະທູດທີ ໓ ນັ້ນແລ້ວກໍມິດຢູ່

ນາຍນິຣະຍະບານ ຈຶ່ງເຮັດເຄື່ອງຈອງຈຳ ຊື່ເຄື່ອງພັນທະນາການ ໕ ຢ່າງ ຄື ຕອກຕະປູເຫຼັກແດງ ທີ່ມື ໒ ຂ້າງ ທີ່ຕີນ ໒ ຂ້າງ ແລະທີ່ກາງເອິກ ເຂົາສະເຫວີຍທຸກຂະເວທະນາກ້າຢ່າງໜັກ ເຜັດຮ້ອນຢູ່ບ່ອນນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳຍັງບໍ່ໝົດໄປ

ນາຍນິຣະຍະບານລາກເຂົາໄປ ເອົາຂວານຖາກ ເຂົາສະເຫວີຍທຸກຂະເວທະນາກ້າຢ່າງໜັກ ເຜັດຮ້ອນຢູ່ບ່ອນນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳຍັງບໍ່ໝົດໄປ

ນາຍນິຣະຍະບານຈັບເຂົາ ເອົາຕີນຂຶ້ນ ເອົາຫົວລົງ ເອົາມີດປາດ ຯລຯ ຈັບເຂົາທຽມລົດ ແລ່ນກັບໄປກັບມາເທິງພື້ນອັນຮ້ອນລຸກເປັນແປວສະຫວ່າງສະໄຫວ ຯລຯ ບັງຄັບເຂົາຂຶ້ນລົງພູຖ່ານໄຟ ໜ່ວຍໃຫຍ່ ທີ່ໄຟລຸກເປັນແປວ ຯລຯ ຈັບເຂົາເອົາຕີນຂຶ້ນ ເອົາຫົວລົງ ຖິ້ມລົງໃນໂລຫະກຸມພີ ອັນຮ້ອນແດງລຸກເປັນແປວໄຟ ເຂົາຖືກຕົ້ມເດືອດຈົນໂຕພອງໃນໂລຫະກຸມພີນັ້ນ ລາງເທື່ອລອຍຂຶ້ນ ລາງເທື່ອຈົມລົງ ລາງເທື່ອລອຍຂວາງ ເຂົາສະເຫວີຍທຸກຂະເວທະນາກ້າຢ່າງໜັກເຜັດຮ້ອນຢູ່ໃນໂລຫະກຸມພີອັນຮ້ອນແດງນັ້ນ ແຕ່ຍັງບໍ່ຕາຍຕາບທໍ່ທີ່ບາບກຳຍັງບໍ່ໝົດໄປ ນາຍນິຣະຍະບານຈຶ່ງຖິ້ມເຂົາລົງໃນມະຫານະຣົກ

ກໍມະຫານະຣົກນັ້ນ

ມີ ໔ ແຈ ໔ ປະຕູ ແບ່ງອອກເປັນສ່ວນ
ມີກຳແພງເຫຼັກອ້ອມຮອບ ຄອບດ້ວຍຝາເຫຼັກ
ມີພື້ນເປັນເຫຼັກລຸກເປັນແປວສະຫວ່າງສະໄຫວ
ແຜ່ໄປໄກດ້ານລະ ໑໐໐ ໂຍດຕັ້ງຢູ່ທຸກເມື່ອ

**ເທວະທູຕະສູດທີ ໖ ຈົບ**

## ໗. ຍະມະຣາຊະສູດ

## ວ່າດ້ວຍພະຍາຍົມ

[໖໗] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ພະຍາຍົມໄດ້ມີຄວາມຄິດດັ່ງນີ້ວ່າ “ຊົນເຫຼົ່າໃດເຮັດບາບກຳໄວ້ໃນໂລກ ຊົນເຫຼົ່ານັ້ນ ຖືກນາຍນິຣະຍະບານທໍລະມານດ້ວຍວິທີການຕ່າງ ໆ ແບບນີ້ ໂອນໍ ເຮົາເພິ່ງໄດ້ຄວາມເປັນມະນຸດ ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າເພິ່ງສະເດັດອຸບັດໃນໂລກ ເຮົາເພິ່ງເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເພິ່ງສະແດງທຳແກ່ເຮົາ ແລະເຮົາເພິ່ງຮູ້ທົ່ວເຖິງທຳຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ”

ພິກຂຸທັງຫຼາຍ ເຮົາໄດ້ຟັງຂໍ້ຄວາມນັ້ນ ຕໍ່ຈາກສະມະນະຫຼືພາມອື່ນແລ້ວ ຈຶ່ງກ່າວແບບນີ້ກໍບໍ່ມີ ແຕ່ເຮົາກ່າວສິ່ງທີ່ເຮົາຮູ້ເອງ ເຫັນເອງ ເຂົ້າໃຈເອງທໍ່ນັ້ນ

ມານົບເຫຼົ່າໃດອັນເທວະທູດຕັກເຕືອນແລ້ວ ຍັງຜະໝາດຢູ່
ມານົບເຫຼົ່ານັ້ນເຂົ້າເຖິງໝູ່ທີ່ຊົ່ວ
ຍ່ອມເສົ້າໂສກຕະຫຼອດການລະນານ

ສ່ວນສັດຕະບຸຣຸດເຫຼົ່າໃດເປັນຜູ້ສະງົບໃນໂລກນີ້
ອັນເທວະທູດຕັກເຕືອນແລ້ວ ບໍ່ຜະໝາດໃນອະຣິຍະທຳໃນເວລາໃດ ໆ
ເຫັນໄພໃນຄວາມຍຶດໝັ້ນຖືໝັ້ນ
ທີ່ເປັນບໍ່ເກີດແຫ່ງການເກີດແລະການຕາຍ
ຍ່ອມລຸດພົ້ນໃນທຳເປັນບ່ອນສິ້ນສຸດການເກີດແລະການຕາຍ
ຍ້ອນບໍ່ຍຶດໝັ້ນຖືໝັ້ນ
ສັດຕະບຸຣຸດເຫຼົ່ານັ້ນຈຶ່ງເຖິງຄວາມກະເສມ
ມີຄວາມສຸກ ດັບເຢັນໃນປັດຈຸບັນ
ລ່ວງພົ້ນເວນແລະໄພທຸກຢ່າງ ຂ້າມພົ້ນທຸກທັງໝົດ

**ຍະມະຣາຊະສູດ ທີ ໆ ຈົບ**

## ໗. ຈະຕຸມະຫາຣາຊະສູດ

## ວ່າດ້ວຍທ້າວມະຫາຣາດທັງ ໔

[໓໗] ພິກຂຸທັງຫຼາຍ ໃນມື້ ໗ ຄ່ຳແຫ່ງປັກ ເທວະດາຜູ້ເປັນບໍລິວານ ຜູ້ຊ່ວຍເຫຼືອຂອງທ້າວມະຫາຣາດທັງ ໔ ທ່ຽວກວດເບິ່ງໂລກນີ້ວ່າ ໃນໝູ່ມະນຸດ ມະນຸດທີ່ເກື້ອກູນມານດາ ເກື້ອກູນບິດາ ເກື້ອກູນສະມະນະ ເກື້ອກູນພາມ ອ່ອນນ້ອມຕໍ່ຜູ້ໃຫຍ່ໃນສະກຸນ ຢູ່ຈຳອຸໂປສົດ ຢູ່ຈຳປະຕິຊາຄະຣະອຸໂປສົດ ທຳບຸນກັນຢູ່ ມີຫຼາຍຢູ່ບໍນໍ?

ໃນມື້ ໑໔ ຄ່ຳແຫ່ງປັກ ບຸດຂອງທ້າວມະຫາຣາດທັງ ໔ ທ່ຽວກວດເບິ່ງໂລກນີ້ວ່າ ໃນໝູ່ມະນຸດ ມະນຸດທີ່ເກື້ອກູນມານດາ ເກື້ອກູນບິດາ ເກື້ອກູນສະມະນະ ເກື້ອກູນພາມ ອ່ອນນ້ອມຕໍ່ຜູ້ໃຫຍ່ໃນສະກຸນ ຢູ່ຈຳອຸໂປສົດ ຢູ່ຈຳປະຕິຊາຄະຣະອຸໂປສົດ ທຳບຸນກັນຢູ່ ມີຫຼາຍຢູ່ບໍນໍ?

ໃນມື້ອຸໂປສົດ ໑໕ ຄ່ຳນັ້ນ ທ້າວມະຫາຣາດທັງ ໔ ທ່ຽວກວດເບິ່ງໂລກນີ້ດ້ວຍໂຕເອງວ່າ ໃນໝູ່ມະນຸດ ມະນຸດທີ່ເກື້ອກູນມານດາ ເກື້ອກູນບິດາ ເກື້ອກູນສະມະນະ ເກື້ອກູນພາມ ອ່ອນນ້ອມຕໍ່ຜູ້ໃຫຍ່ໃນສະກຸນ ຢູ່ຈຳອຸໂປສົດ ຢູ່ຈຳປະຕິຊາຄະຣະອຸໂປສົດ ທຳບຸນກັນຢູ່ ມີຫຼາຍຢູ່ບໍນໍ?

ຖ້າໃນໝູ່ມະນຸດ ມະນຸດທີ່ເກື້ອກູນມານດາ ເກື້ອກູນບິດາ ເກື້ອກູນສະມະນະ ເກື້ອກູນພາມ ອ່ອນນ້ອມຕໍ່ຜູ້ໃຫຍ່ໃນສະກຸນ ຢູ່ຈຳອຸໂປສົດ ຢູ່ຈຳປະຕິຊາຄະຣະອຸໂປສົດ ທຳບຸນກັນຢູ່ ມີຢູ່ໜ້ອຍ

ທ້າວມະຫາຣາດທັງ ໔ ຍ່ອມຣາຍງານເຫດນັ້ນ ແກ່ພວກເທວະດາຊັ້ນຕາວະຕິງສາບ່ອນນັ່ງປະຊຸມ ຮ່ວມກັນໃນສະພາຊື່ສຸທຳມາວ່າ ໃນໝູ່ມະນຸດ ມະນຸດຜູ້ເກື້ອກູນມານດາ ເກື້ອກູນບິດາ ເກື້ອກູນສະມະນະ ເກື້ອກູນພາມ ອ່ອນນ້ອມຕໍ່ຜູ້ໃຫຍ່ໃນສະກຸນ ຢູ່ຈຳອຸໂປສົດ ຢູ່ຈຳ ປະຕິຊາຄະຣະອຸໂປສົດ ທຳບຸນກັນຢູ່ ມີຈຳນວນໜ້ອຍ

ຍ້ອນເຫດນັ້ນ ພວກເທວະດາຊັ້ນ ຕາວະຕິງສາ ຈຶ່ງພາກັນເສຍໃຈວ່າ "ໝູ່ເທບຈັກເສື່ອມ ໝູ່ອະສູນຈັກບໍລິບູນ"

ກໍຖ້າໃນໝູ່ມະນຸດ ມະນຸດຜູ້ເກື້ອກູນມານດາ ເກື້ອກູນບິດາ ເກື້ອກູນສະມະນະ ເກື້ອກູນພາມ ອ່ອນນ້ອມຕໍ່ຜູ້ໃຫຍ່ໃນສະກຸນ ຢູ່ຈຳອຸໂປສົດ ຢູ່ຈຳປະຕິຊາຄະຣະອຸໂປສົດ ທຳບຸນກັນຢູ່ ມີຈຳນວນຫຼາຍ

ທ້າວມະຫາຣາດທັງ ໔ ຍ່ອມຣາຍງານເຫດນັ້ນ ແກ່ພວກເທວະດາຊັ້ນຕາວະຕິງສາບ່ອນນັ່ງປະຊຸມ ຮ່ວມກັນໃນສະພາຊື່ສຸທຳມາວ່າ ໃນໝູ່ມະນຸດ ມະນຸດຜູ້ເກື້ອກູນມານດາ ເກື້ອກູນບິດາ ເກື້ອກູນສະມະນະ ເກື້ອກູນພາມ ອ່ອນນ້ອມຕໍ່ຜູ້ໃຫຍ່ໃນສະກຸນ ຢູ່ຈຳອຸໂປສົດ ຢູ່ຈຳ ປະຕິຊາຄະຣະອຸໂປສົດ ທຳບຸນກັນຢູ່ ມີຈຳນວນຫຼາຍ

ຍ້ອນເຫດນັ້ນ ພວກເທວະດາຊັ້ນຕາວະຕິງສາຈຶ່ງພາກັນດີໃຈວ່າ "ໝູ່ເທບຈັກບໍລິບູນ ໝູ່ອະສູນຈັກເສື່ອມ"

ເລື້ອງເຄີຍມີມາແລ້ວ ທ້າວສັກກະຈອມເທບ ເມື່ອແນະນຳພວກເທວະດາຊັ້ນຕາວະຕິງສາ ໄດ້ຕັດຄາຖານີ້ໃນເວລານັ້ນ ວ່າ

ນໍຣະຊົນແມ່ນໃດຜູ້ເຊັ່ນກັບເຮົາເພິ່ງຢູ່ຈຳອຸໂປສົດ
ປະກອບດ້ວຍອົງ ໘ ຕະຫຼອດມື້ ໑໔ ຄ່ຳ ໑໕ ຄ່ຳ
ແລະ ໘ ຄ່ຳແຫ່ງປັກ ແລະຕະຫຼອດປາຕິຫາຣິຍະປັກ

ຄາຖານີ້ທ້າວສັກກະຈອມເທບຂັບຜິດ ຂັບບໍ່ດີ ກ່າວຜິດ ກ່າວບໍ່ດີ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທ້າວສັກກະຈອມເທບ ຍັງບໍ່ປາສະຈາກຣາຄະ ບໍ່ປາສະຈາກໂທສະ ບໍ່ປາສະຈາກໂມຫະ

ສ່ວນພິກຂຸໃດ ເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນ໌ໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນ ຄວນກ່າວຄຳ ວ່າ

ນໍຣະຊົນແມ່ນໃດຜູ້ເຊັ່ນກັບເຮົາເພິ່ງຢູ່ຈຳອຸໂປສົດ

ປະກອບດ້ວຍອົງ ໗ ຕະຫຼອດມື້ ໑໔ ຄ່ຳ ໑໕ ຄ່ຳ
ແລະ ໗ ຄ່ຳແຫ່ງປັກ ແລະຕະຫຼອດປາຕິຫາຣິຍະປັກ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພິກຂຸນັ້ນ ປາສະຈາກຣາຄະ ປາສະຈາກໂທສະ ປາສະຈາກໂມຫະ

**ຈະຕຸມະຫາຣາຊະສູດທີ ໗ ຈົບ**

## ໘. ທຸຕິຍະຈະຕຸມະຫາຣາຊະສູດ

## ວ່າດ້ວຍທ້າວມະຫາຣາດທັງ ໔ ສູດ ທີ ໘

[໓໘] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ທ້າວສັກກະຈອມເທບ ເມື່ອແນະນຳພວກເທວະດາຊັ້ນຕາວະຕິງສາໄດ້ຕັດຄາຖານີ້ໃນເວລານັ້ນ ວ່າ

ນໍຣະຊົນແມ່ນໃດຜູ້ເຊັ່ນກັບເຮົາ ເພິ່ງຢູ່ຈຳອຸໂປສົດ
ປະກອບດ້ວຍອົງ ໗ ຕະຫຼອດມື້ ໑໔ ຄ່ຳ ໑໕ ຄ່ຳ
ແລະ ໗ ຄ່ຳແຫ່ງປັກ ແລະຕະຫຼອດປາຕິຫາຣິຍະປັກ

ຄາຖານີ້ທ້າວສັກກະຈອມເທບຂັບຜິດ ຂັບບໍ່ດີ ກ່າວຜິດ ກ່າວບໍ່ດີ ຂໍ້ນັ້ນຍ້ອນ ເຫດໃດ ຍ້ອນທ້າວສັກກະຈອມເທບຍັງບໍ່ພົ້ນຈາກຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເຮົາກ່າວວ່າ ຍັງບໍ່ພົ້ນຈາກທຸກ

ສ່ວນພິກຂຸໃດ ເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນຄວນກ່າວຄຳ ວ່າ

ນໍຣະຊົນແມ່ນໃດຜູ້ເຊັ່ນກັບເຮົາ ເພິ່ງຢູ່ຈຳອຸໂປສົດ
ປະກອບດ້ວຍອົງ ໗ ຕະຫຼອດມື້ ໑໔ ຄ່ຳ ໑໕ ຄ່ຳ
ແລະ ໗ ຄ່ຳແຫ່ງປັກ ແລະຕະຫຼອດປາຕິຫາຣິຍະປັກ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພິກຂຸນັ້ນພົ້ນແລ້ວຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເຮົາກ່າວວ່າ ພົ້ນຈາກທຸກ

**ທຸຕິຍະຈະຕຸມະຫາຣາຊະສູດທີ ໘ ຈົບ**

## ໙. ສຸຂຸມາລະສູດ

## ວ່າດ້ວຍສຸຂຸມານຊາດ

[໓໙] ພິກຂຸທັງຫຼາຍ ເຮົາເປັນຜູ້ສຸຂຸມານຊາດ ເປັນຜູ້ສຸຂຸມານຊາດຢ່າງຍິ່ງ ເປັນຜູ້ສຸຂຸມານຊາດຢ່າງຍິ່ງຍອດ ໄດ້ຮູ້ວ່າ ພຣະຣາດຊະບິດາຮັບສັ່ງໃຫ້ຂຸດສະໂບກຂະຣະນີ (ສະບົວ) ໄວ້ເພື່ອເຮົາພາຍໃນບ່ອນຢູ່ ໄດ້ຮູ້ວ່າ ພຣະຣາດຊະບິດານັ້ນຮັບສັ່ງໃຫ້ປູກອຸບົນໄວ້ໃນສະໜຶ່ງ ປູກປະທຸມໄວ້ໃນສະໜຶ່ງ ປູກປຸນທະຣິກ (ບົວຂາວ) ໄວ້ໃນສະໜຶ່ງເພື່ອປະໂຫຍດແກ່ເຮົາ ເຮົາບໍ່ໄດ້ໃຊ້ສະເພາະໄມ້ຈັນແຄວ້ນກາສີ (ພາຣານະສີ) ທີ່ນັ້ນ ຜ້າໂພກຂອງເຮົາກໍເຮັດໃນແຄວ້ນກາສີ ເສື້ອກໍເຮັດໃນແຄວ້ນກາສີ ຜ້ານຸ່ງກໍເຮັດໃນແຄວ້ນກາສີ ຜ້າຫົ່ມກໍເຮັດໃນແຄວ້ນກາສີ ທັງຄົນຮັບໃຊ້ ຖ້າກັ້ງສະເຫວດຕະສັດໃຫ້ເຮົາເມີດມື້ ແລະຄືນດ້ວຍຫວັງວ່າ ໜາວ ຮ້ອນ ຝຸ່ນ ຫຍ້າ ຫຼື ນ້ຳໝອກຢ່າໄດ້ກະທົບພຣະອົງທ່ານ

ເຮົານັ້ນມີຜາສາດຢູ່ ໓ ຫຼັງ ຄື ຜາສາດຫຼັງໜຶ່ງເປັນບ່ອນຢູ່ໃນລະດູໜາວ ຫຼັງໜຶ່ງເປັນບ່ອນຢູ່ໃນລະດູຮ້ອນ ຫຼັງໜຶ່ງເປັນບ່ອນຢູ່ໃນລະດູຝົນ ເຮົານັ້ນໄດ້ຮັບການບົນເປີດ້ວຍ ດົນຕີທີ່ບໍ່ແມ່ນບຸຣຸດບັນເລງ ຕະຫຼອດ ໔ ເດືອນລະດູຝົນ ໃນຜາສາດລະດູຝົນ ບໍ່ໄດ້ລົງຂ້າງລຸ່ມຜາສາດເລີຍ ກໍແລ ໃນບ່ອນຢູ່ຂອງຄົນເຫຼົ່າອື່ນ ເຂົາໃຫ້ເຂົ້າປົ່ນ (ເຂົ້າທັກ) ມີນ້ຳສົ້ມຜັກເປັນກັບ ແກ່ຂ້າທາດ ຄົນງານ ແລະຄົນຮັບໃຊ້ ສັນໃດ ໃນນິເວດຂອງພຣະຣາດຊະບິດາຂອງເຮົາກໍຄືກັນສັນນັ້ນເຂົາໃຫ້ເຂົ້າສາລີສຸກປະສົມຊີ້ນແກ່ຂ້າທາດ ຄົນງານ ແລະຄົນຮັບໃຊ້

ເຮົານັ້ນພຽບພ້ອມດ້ວຍຄວາມສຳເລັດແນວນີ້ ແລະເປັນຜູ້ສຸຂຸມານຊາດຢ່າງຍິ່ງ ໄດ້ມີຄວາມຄິດວ່າ ປຸຖຸຊົນຜູ້ຍັງບໍ່ໄດ້ສະດັບ ຕົນເອງເປັນຜູ້ມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້ ເຫັນບຸກຄົນອື່ນແກ່ ກໍອຶດອັດ ຣະອາ ລັງກຽດ ລືມໂຕ ບໍ່ຄິດວ່າ ແມ່ນເຮົາເອງກໍມີຄວາມແກ່ເປັນທຳມະດາ ບໍ່ລ່ວງພົ້ນຄວາມແກ່ໄປໄດ້ ການທີ່ເຮົາຜູ້ມີຄວາມແກ່ເປັນທຳມະດາບໍ່ລ່ວງພົ້ນຄວາມແກ່ໄປໄດ້ ເຫັນບຸກຄົນອື່ນແກ່ ກໍອຶດອັດ ຣະອາ ລັງກຽດນັ້ນ ບໍ່ສົມຄວນແກ່ເຮົາເລີຍ ເຮົານັ້ນ ເມື່ອພິຈາລະນາເຫັນແນວນີ້ ຈຶ່ງລະຄວາມມົວເມົາໃນຄວາມເປັນໜຸ່ມສາວໄດ້ໂດຍປະການທັງປວງ

ປຸຖຸຊົນຜູ້ບໍ່ໄດ້ສະດັບ ຕົນເອງເປັນຜູ້ມີຄວາມເຈັບໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້ ເຫັນບຸກຄົນອື່ນເຈັບໄຂ້ ກໍອຶດອັດ ຣະອາ ລັງກຽດ ລືມໂຕ ບໍ່ຄິດວ່າ ແມ່ນເຮົາເອງກໍມີຄວາມເຈັບໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້ ການທີ່ເຮົາຜູ້ມີຄວາມເຈັບໄຂ້ເປັນທຳມະດາ ບໍ່ລ່ວງພົ້ນຄວາມເຈັບໄຂ້ໄປໄດ້ເຫັນບຸກຄົນອື່ນເຈັບໄຂ້ ກໍອຶດອັດ ຣະອາ ລັງກຽດນັ້ນ

ບໍ່ສົມຄວນແກ່ເຮົາເລີຍ ເຮົານັ້ນ ເມື່ອພິຈາລະນາເຫັນແບບນີ້ ຈຶ່ງລະຄວາມມົວເມົາໃນຄວາມບໍ່ມີພະຍາດໄດ້ໂດຍປະການທັງປວງ

ປຸຖຸຊົນຜູ້ບໍ່ໄດ້ສະດັບ ຕົນເອງເປັນຜູ້ມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ເຫັນບຸກຄົນອື່ນຕາຍ ກໍອຶດອັດ ຣະອາ ລັງກຽດ ລືມໂຕ ບໍ່ຄິດວ່າ ແມ່ນເຮົາເອງກໍມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ການທີ່ເຮົາຜູ້ມີຄວາມຕາຍເປັນທຳມະດາ ບໍ່ລ່ວງພົ້ນຄວາມຕາຍໄປໄດ້ ເຫັນບຸກຄົນອື່ນຕາຍ ກໍອຶດອັດ ຣະອາ ລັງກຽດນັ້ນ ບໍ່ສົມຄວນແກ່ເຮົາເລີຍ ເຮົານັ້ນ ເມື່ອພິຈາລະນາເຫັນແບບນີ້ ຈຶ່ງລະຄວາມມົວເມົາໃນຊີວິດໄດ້ໂດຍປະການທັງປວງ

ຄວາມມົວເມົາ ໓ ປະການນີ້

ຄວາມມົວເມົາ ໓ ປະການ ອັນໃດແດ່ ຄື

໑. ຄວາມມົວເມົາໃນຄວາມເປັນໜຸ່ມສາວ
໒. ຄວາມມົວເມົາໃນຄວາມບໍ່ມີພະຍາດ
໓. ຄວາມມົວເມົາໃນຊີວິດ

ປຸຖຸຊົນຜູ້ບໍ່ໄດ້ສະດັບ ມົວເມົາໃນຄວາມເປັນໜຸ່ມສາວ ປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ປຸຖຸຊົນຜູ້ບໍ່ໄດ້ສະດັບ ມົວເມົາໃນຄວາມບໍ່ມີພະຍາດ ຯລຯ ຫຼື ປຸຖຸຊົນຜູ້ບໍ່ໄດ້ສະດັບ ມົວເມົາໃນຊີວິດ ປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະໄປເກີດ ໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸຜູ້ມົວເມົາໃນຄວາມເປັນໜຸ່ມສາວ ຍ່ອມບອກຄືນສິກຂາ ກັບມາເປັນຄະລຶຫັດ ພິກຂຸຜູ້ມົວເມົາໃນຄວາມບໍ່ມີພະຍາດຍ່ອມບອກຄືນສິກຂາ ກັບມາເປັນຄະລຶຫັດ ຫຼືພິກຂຸຜູ້ມົວເມົາໃນຊີວິດຍ່ອມບອກຄືນສິກຂາ ກັບມາເປັນຄະລຶຫັດ

ປຸຖຸຊົນທັງຫຼາຍມີຄວາມເຈັບໄຂ້ເປັນທຳມະດາ
ມີຄວາມແກ່ເປັນທຳມະດາແລະມີຄວາມຕາຍເປັນທຳມະດາ
ເປັນຢູ່ຕາມສະພາວະ ຍ່ອມພາກັນລັງກຽດ (ບຸກຄົນອື່ນ)
ກໍການທີ່ເຮົາລັງກຽດຄວາມປ່ວຍໄຂ້ເປັນຕົ້ນນີ້
ໃນໝູ່ສັດຜູ້ມີສະພາວະແບບນີ້ນັ້ນ
ບໍ່ສົມຄວນແກ່ເຮົາຜູ້ມີປົກກະຕິຢູ່ແບບນີ້
ເຮົານັ້ນ ຢູ່ແບບນີ້ຮູ້ທຳທີ່ໝົດສິ້ນອຸປະທິ

ເຫັນຄວາມສຸກສະບາຍໃນເນກຂຳມະ
ຍ່ອມຄອບງຳຄວາມມົວເມົາທຸກຢ່າງ
　　ຄື ຄວາມມົວເມົາໃນຄວາມບໍ່ມີພະຍາດ
ຄວາມມົວເມົາໃນຄວາມເປັນໜຸ່ມສາວ
ແລະຄວາມມົວເມົາໃນຊີວິດ
ຄວາມພະຍາຍາມໄດ້ມີແກ່ເຮົານັ້ນຜູ້ເຫັນນິບພານ
　　ບັດນີ້ເຮົາ ບໍ່ຄວນກັບໄປເສບກາມ
ເຮົາຈັກບໍ່ວຽນກັບ ຈັກມີພົມມະຈັນເປັນຈຸດມຸ້ງໝາຍ

**ສຸຂຸມາລະສູດ ທີ ໙ ຈົບ**

## ໑໐. ອາທິປະເຕີຍຍະສູດ

## ວ່າດ້ວຍອາທິປະໄຕ

[໔໐] ພິກຂຸທັງຫຼາຍ ອາທິປະໄຕ (ຄວາມເປັນໃຫຍ່) ໓ ປະການນີ້

ອາທິປະໄຕ ໓ ປະການ ອັນໃດແດ່ ຄື

໑. ອັດຕາທິປະໄຕ (ຄວາມມີຕົນເປັນໃຫຍ່)
໒. ໂລກາທິປະໄຕ (ຄວາມມີໂລກເປັນໃຫຍ່)
໓. ທຳມາທິປະໄຕ (ຄວາມມີທຳເປັນໃຫຍ່)

ອັດຕາທິປະໄຕ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຢູ່ໃນປ່າແດ່ ຢູ່ຕາມເຫງົ້າໄມ້ແດ່ ຢູ່ໃນເຮືອນວ່າງແດ່ ຍ່ອມເຫັນປະຈັກວ່າ "ເຮົາອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຍ້ອນເຫດແຫ່ງຈີວອນ ບິນທະບາດ ເສນາສະນະ ເຮົາອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຍ້ອນເຫດແຫ່ງຄວາມມີຫຼືຄວາມບໍ່ມີເຊັ່ນນັ້ນ ອັນໜຶ່ງ ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຄອບງຳຊື່ວ່າ ຖືກທຸກຄອບງຳ ມີທຸກຢູ່ຕໍ່ໜ້າ ເຮັດແນວໃດ ການເຮັດບ່ອນສຸດກອງທຸກທັງໝົດນີ້ ຈະເພິ່ງຜາກົດ ການທີ່ເຮົາລະການເຊັ່ນໃດແລ້ວ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ເຮົາເພິ່ງສະແຫວງຫາການເຊັ່ນນັ້ນ ຫຼື ການທີ່ຊົ່ວກວ່ານັ້ນ ນັ້ນບໍ່ສົມຄວນແກ່ ເຮົາເລີຍ"

ພິກຂຸນັ້ນ ເຫັນປະຈັກວ່າ "ຄວາມພຽນທີ່ເຮົາເລີ່ມໄວ້ແລ້ວ ຈັກບໍ່ຫຍ່ອນຍານ ສະຕິທີ່ຕັ້ງໝັ້ນແລ້ວ ຈັກບໍ່ເລີເລືອນ ກາຍທີ່ສະງົບແລ້ວ ຈັກບໍ່ກະສັບກະສ່າຍ ຈິດທີ່ຕັ້ງໝັ້ນແລ້ວຈັກມີ

ອາລົມແນ່ວແນ່” ທ່ານເຮັດຕົນທີ່ນັ້ນໃຫ້ເປັນໃຫຍ່ ລະອະກຸສົນ ພໍາເພັງກຸສົນ ລະກໍາທີ່ມີໂທດ ພໍາເພັງກໍາທີ່ບໍ່ມີໂທດ ຖືຮັກສາຕົນໃຫ້ບໍລິສຸດ ພິກຂຸທັງຫຼາຍ ນີ້ຮຽກວ່າ ອັດຕາທິປະໄຕ

ໂລກາທິປະໄຕ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ ຢູ່ໃນປ່າແດ່ ຢູ່ຕາມເຫງົ້າໄມ້ແດ່ ຢູ່ໃນເຮືອນວ່າງແດ່ ຍ່ອມເຫັນປະຈັກວ່າ “ເຮົາອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຍ້ອນເຫດແຫ່ງຈີວອນ ບິນທະບາດ ເສນາສະນະ ເຮົາອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຍ້ອນເຫດແຫ່ງຄວາມມີ ຫຼືຄວາມບໍ່ມີເຊັ່ນນັ້ນ ອັນໜຶ່ງ ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຄອບງໍາ ຊື່ວ່າຖືກທຸກຄອບງໍາ ມີທຸກຢູ່ຕໍ່ໜ້າ ເຮັດແນວໃດ ການເຮັດບ່ອນສຸດກອງທຸກທັງໝົດນີ້ຈະເພິ່ງຜາກົດ ກໍເຮົາບວດແລ້ວແນວນີ້ເພິ່ງຄິດເລື້ອງກາມ ເລື້ອງປອງຮ້າຍ ເລື້ອງບຽດບຽນ ໂລກສັນນິວາດ (ການຢູ່ຮ່ວມກັນຂອງສັດໂລກ) ນີ້ໃຫຍ່ ກໍໃນໂລກ

ສັນນິວາດໃຫຍ່ມີສະມະນະພາມຜູ້ມີລິດ ມີຕາທິບ ຮູ້ຈິດຂອງບຸກຄົນອື່ນ ສະມະນະພາມເຫຼົ່ານັ້ນ ແນມເຫັນໄດ້ແມ່ນຈາກບ່ອນໄກ ແມ່ນຢູ່ໃກ້ກໍບໍ່ຜາກົດ ຮູ້ຈິດ (ຂອງບຸກຄົນອື່ນ) ແມ່ນດ້ວຍຈິດ (ຂອງຕົນ) ສະມະນະພາມແມ່ນເຫຼົ່ານັ້ນເພິ່ງຮູ້ຈັກເຮົາແນວນີ້ວ່າ “ທ່ານຜູ້ຈະເລີນທັງຫຼາຍ ຂໍໃຫ້ເບິ່ງກຸນລະບຸດນີ້ ຍ້ອນມີສັດທາ ເຂົາຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ເຕັມໄປດ້ວຍບາບອະກຸສົນທໍາຢູ່ ແມ່ນເທວະດາຜູ້ມີລິດ ມີຕາທິບ ຮູ້ຈິດຂອງບຸກຄົນອື່ນກໍມີຢູ່ ເທວະດາເຫຼົ່ານັ້ນ ຍ່ອມຜາກົດຈາກບ່ອນໄກແດ່ ເຂົ້າມາໃກ້ແລ້ວກັບແນມບໍ່ເຫັນແດ່ ຍ່ອມຮູ້ຈິດດ້ວຍຈິດແດ່” ເທວະດາແມ່ນເຫຼົ່ານັ້ນ ເພິ່ງຮູ້ຈັກເຮົາແນວນີ້ວ່າ “ທ່ານຜູ້ຈະເລີນທັງຫຼາຍຂໍໃຫ້ເບິ່ງກຸນລະບຸດນີ້ ຍ້ອນມີສັດທາເຂົາຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ເຕັມໄປດ້ວຍ ບາບອະກຸສົນທໍາຢູ່”

ພິກຂຸນັ້ນ ເຫັນປະຈັກວ່າ “ຄວາມພຽນທີ່ເຮົາເລີ່ມໄວ້ແລ້ວຈັກບໍ່ຫຍ່ອນຍານ ສະຕິທີ່ຕັ້ງໝັ້ນແລ້ວຈັກບໍ່ເລີເລືອນ ກາຍທີ່ສະງົບແລ້ວຈັກບໍ່ກະສັບກະສ່າຍ ຈິດທີ່ຕັ້ງໝັ້ນແລ້ວຈັກມີອາລົມແນ່ວແນ່” ທ່ານເຮັດໂລກທີ່ນັ້ນໃຫ້ເປັນໃຫຍ່ ລະອະກຸສົນ ພໍາເພັງກຸສົນ ລະກໍາທີ່ມີໂທດ ພໍາເພັງກໍາທີ່ບໍ່ມີໂທດ ຖືຮັກສາຕົນໃຫ້ບໍລິສຸດ ພິກຂຸທັງຫຼາຍ ນີ້ຮຽກວ່າ ໂລກາທິປະໄຕ

ທໍາມາທິປະໄຕ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ ຢູ່ໃນປ່າແດ່ ຢູ່ຕາມເຫງົ້າໄມ້ແດ່ ຢູ່ໃນເຮືອນວ່າງແດ່ ຍ່ອມເຫັນປະຈັກວ່າ “ເຮົາອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຍ້ອນເຫດແຫ່ງຈີວອນ ບິນທະບາດ ເສນາສະນະ ເຮົາອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຍ້ອນເຫດແຫ່ງຄວາມມີ ຫຼື ຄວາມບໍ່ມີເຊັ່ນນັ້ນ ອັນໜຶ່ງ ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸ

ປາຍາດຄອບງຳ ຊື່ວ່າຖືກທຸກຄອບງຳ ມີທຸກຢູ່ຕໍ່ໜ້າ ເຮັດແນວໃດ ການເຮັດບ່ອນສຸດກອງທຸກທັງໝົດນີ້ຈະເພິ່ງຜາກົດ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ກໍເພື່ອນພົມມະຈາຣີຜູ້ຮູ້ເຫັນມີຢູ່ ການທີ່ເຮົາບວດໃນທຳວິໄນທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ແນວນີ້ເພິ່ງຂີ້ຄ້ານຜະໝາດຢູ່ນັ້ນ ບໍ່ສົມຄວນແກ່ເຮົາເລີຍ"

ພິກຂຸນັ້ນ ຍ່ອມເຫັນປະຈັກວ່າ "ຄວາມພຽນທີ່ເຮົາເລີ່ມໄວ້ແລ້ວຈັກບໍ່ຫຍ່ອນຍານ ສະຕິທີ່ຕັ້ງໝັ້ນແລ້ວຈັກບໍ່ເລີເລືອນ ກາຍທີ່ສະງົບແລ້ວຈັກບໍ່ກະສັບກະສ່າຍ ຈິດທີ່ຕັ້ງໝັ້ນແລ້ວຈັກມີອາລົມແນ່ວແນ່" ທ່ານຍົກທຳທໍ່ນັ້ນໃຫ້ເປັນໃຫຍ່ ລະອະກຸສົນ ພໍ່າເພັງກຸສົນ ລະກຳທີ່ມີໂທດ ພໍ່າເພັງກຳທີ່ບໍ່ມີໂທດ ຖືຮັກສາຕົນໃຫ້ບໍລິສຸດ ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳມາທິປະໄຕ

ພິກຂຸທັງຫຼາຍ ອາທິປະໄຕ ໓ ປະການເປັນຢ່າງນີ້ແລ

ຊື່ວ່າຄວາມລັບຂອງຜູ້ເຮັດບາບຍ່ອມບໍ່ມີໃນໂລກ
ນີ້ບຸຣຸດ ໂຕທ່ານເອງຍ່ອມຮູ້ວ່າແມ່ນຫຼືບໍ່ແມ່ນ
ທ່ານຜູ້ຈະເລີນ ທ່ານສາມາດທຳຄວາມດີໄດ້
ແຕ່ກັບດູໝິ່ນໂຕເອງ
ແລະຍັງປົກປິດຄວາມຊົ່ວເຊິ່ງມີຢູ່ໃນຕົນ
ທວຍເທບແລະຕະຖາຄົດຍ່ອມແນມເຫັນທ່ານ
ຜູ້ເປັນຄົນພານ ປະພຶດບໍ່ສະໝໍ່າສະເໝີໃນໂລກ
ຍ້ອນເຫດນັ້ນແລ ຄົນທີ່ມີຕົນເປັນໃຫຍ່ຄວນມີສະຕິທ່ຽວໄປ
ຄົນທີ່ມີໂລກເປັນໃຫຍ່ຄວນມີປັນຍາແລະເພ່ງພິນິດ
ສ່ວນຄົນມີທຳເປັນໃຫຍ່ຄວນປະພຶດຕາມທຳ
ມຸນີຜູ້ມີຄວາມບາກບັ່ນຢ່າງຈິງຈັງຍ່ອມບໍ່ເສື່ອມ
ບຸກຄົນໃດມີຄວາມພຽນ ຂົ່ມມານ
ຄອບງຳມັດຈຸຣາດຜູ້ກຳນົດຊະຕາກຳໄດ້
ສຳຜັດທຳເປັນທີ່ສິ້ນສຸດຄວາມເກີດ
ບຸກຄົນເຊັ່ນນັ້ນຍ່ອມເປັນຜູ້ຮູ້ແຈ້ງໂລກ ມີປັນຍາດີ
ເປັນມຸນີໝົດຄວາມທະຍານຢາກໃນທຳທັງປວງ

**ອາທິປະເຕີຍຍະສູດ ທີ ໑໐ ຈົບ**

**ເທວະທູຕະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື



# ໕. ຈູລະວັກ

## ໝວດວ່າດ້ວຍເລື້ອງເລັກໜ້ອຍ

## ໑. ສຳມຸຂີພາວະສູດ

### ວ່າດ້ວຍຄວາມພ້ອມແຫ່ງທຳ

[໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຍ້ອນຄວາມພ້ອມແຫ່ງທຳ ໓ ປະການກຸນລະບຸດຜູ້ມີສັດທາ ຈຶ່ງປະສົບບຸນຫຼາຍ

ຄວາມພ້ອມແຫ່ງທຳ ໓ ປະການ ອັນໃດແດ່ ຄື

໑. ຍ້ອນຄວາມພ້ອມແຫ່ງສັດທາ ກຸນລະບຸດຜູ້ມີສັດທາຈຶ່ງປະສົບບຸນຫຼາຍ
໒. ຍ້ອນຄວາມພ້ອມແຫ່ງວັດຖຸທານ ກຸນລະບຸດຜູ້ມີສັດທາຈຶ່ງປະສົບບຸນຫຼາຍ
໓. ຍ້ອນຄວາມພ້ອມແຫ່ງທັກຂີໄນຍະບຸກຄົນ (ບຸກຄົນຜູ້ຄວນຮັບທັກຂິນາ) ກຸນລະບຸດ ຜູ້ມີສັດທາຈຶ່ງປະສົບບຸນຫຼາຍ

ພິກຂຸທັງຫຼາຍ ຍ້ອນຄວາມພ້ອມແຫ່ງທຳ ໓ ປະການນີ້ແລ ກຸນລະບຸດຜູ້ມີສັດທາຈຶ່ງປະສົບບຸນຫຼາຍ

**ສຳມຸຂີພາວະສູດ ທີ ໑ ຈົບ**

# ໔. ຕິຖານະສູດ

## ວ່າດ້ວຍຖານະທີ່ເປັນເຫດໃຫ້ຮູ້ຜູ້ມີສັດທາ

[໔໘] ພິກຂຸທັງຫຼາຍ ບຸກຄົນຜູ້ມີສັດທາເຫຼື້ອມໃສເພິ່ງຮູ້ໄດ້ໂດຍຖານະ ໓ ປະການ

ຖານະ ໓ ປະການ ອັນໃດແດ່ ຄື

໑. ເປັນຜູ້ປາຖະໜາທີ່ຈະເຫັນທ່ານຜູ້ມີສີນ
໒. ເປັນຜູ້ປາຖະໜາທີ່ຈະຟັງສັດທຳ
໓. ເປັນຜູ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານຢູ່ຄອງເຮືອນ

ພິກຂຸທັງຫຼາຍ ບຸກຄົນຜູ້ມີສັດທາເຫຼື້ອມໃສ ເພິ່ງຮູ້ໄດ້ໂດຍຖານະ ໓ ປະການນີ້ແລ

ບຸກຄົນຜູ້ປາຖະໜາຈະເຫັນທ່ານຜູ້ມີສີນ
ປາຖະໜາຈະຟັງສັດທຳ
ກຳຈັດຄວາມຂີ້ຖີ່ອັນເປັນມົນທິນ
ບຸກຄົນນັ້ນຮຽກວ່າ ຜູ້ມີສັດທາ

**ຕິຖານະສູດ ທີ ໔ ຈົບ**

# ໕. ອັດຖະວະສະສູດ

## ວ່າດ້ວຍອຳນາດປະໂຫຍດ

[໔໙] ພິກຂຸທັງຫຼາຍ ບຸກຄົນຜູ້ພິຈາລະນາເຫັນອຳນາດປະໂຫຍດ ໓ ປະການ ຈຶ່ງຄວນສະແດງທຳແກ່ຄົນເຫຼົ່າອື່ນ

ອຳນາດປະໂຫຍດ ໓ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ສະແດງທຳ ຮູ້ແຈ້ງອັດຖະ ແລະຮູ້ແຈ້ງທຳ
໒. ບຸກຄົນຜູ້ຟັງທຳຮູ້ແຈ້ງອັດຖະ ແລະຮູ້ແຈ້ງທຳ
໓. ບຸກຄົນຜູ້ສະແດງທຳແລະຜູ້ຟັງທຳທັງ ໒ ຝ່າຍ ຮູ້ແຈ້ງອັດຖະແລະຮູ້ແຈ້ງທຳ

ພິກຂຸທັງຫຼາຍ ບຸກຄົນຜູ້ພິຈາລະນາເຫັນອຳນາດປະໂຫຍດ ໓ ປະການນີ້ແລຈຶ່ງຄວນສະແດງທຳແກ່ຄົນເຫຼົ່າອື່ນ

**ອັດຖະວະສະສູດ ທີ ໓ ຈົບ**

## ໔. ກະຖາປະວັດຕິສູດ

## ວ່າດ້ວຍເຫດໃຫ້ການສົນທະນາດຳເນີນໄປໄດ້

[໔໔] ພິກຂຸທັງຫຼາຍ ການສົນທະນາດຳເນີນໄປໄດ້ດ້ວຍຖານະ[໑] ໓ ປະການ

ຖານະ ໓ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ສະແດງທຳຮູ້ແຈ້ງອັດຖະ ແລະຮູ້ແຈ້ງທຳ
໒. ບຸກຄົນຜູ້ຟັງທຳຮູ້ແຈ້ງອັດຖະແລະຮູ້ແຈ້ງທຳ
໓. ບຸກຄົນຜູ້ສະແດງທຳແລະຜູ້ຟັງທຳທັງ ໒ ຝ່າຍຮູ້ແຈ້ງອັດຖະແລະຮູ້ແຈ້ງທຳ

ພິກຂຸທັງຫຼາຍ ການສົນທະນາດຳເນີນໄປໄດ້ດ້ວຍຖານະ ໓ ປະການນີ້ແລ

**ກະຖາປະວັດຕິສູດ ທີ ໔ ຈົບ**

## ໕. ປັນທິຕະສູດ

## ວ່າດ້ວຍກຳທີ່ບັນດິດບັນຍັດໄວ້

[໔໕] ພິກຂຸທັງຫຼາຍ ກຳ ໓ ປະການນີ້ບັນດິດບັນຍັດໄວ້ ສັດຕະບຸຣຸດບັນຍັດໄວ້

ກຳ ໓ ປະການ ອັນໃດແດ່ ຄື

໑. ທານ (ການໃຫ້)
໒. ປັບພັດຊາ (ການຖືບວດ)
໓. ມາຕາປິຕຸອຸປັດຖານ (ການບຳລຸງມານດາບິດາ)

ກຳ ໓ ປະການນີ້ແລບັນດິດບັນຍັດໄວ້ ສັດຕະບຸຣຸດບັນຍັດໄວ້

ທານ ອະຫິງສາ (ຄວາມບໍ່ບຽດບຽນ)

ສັນຍະມະ (ຄວາມສັງລວມ) ທະມະ (ການເຝິກຝົນ)
ມາຕາປິຕຸອຸປັດຖານ (ການບຳລຸງມານດາບິດາ)
ເປັນສິ່ງທີ່ສັດຕະບຸຣຸດບັນຍັດໄວ້
ຄຸນນະທຳເຫຼົ່ານີ້ ເປັນຖານະຂອງສັດຕະບຸຣຸດທັງຫຼາຍຜູ້ສະງົບ
ເປັນພົມມະຈາຣີບຸກຄົນ ເຊິ່ງບັນດິດຄວນປະພຶດ
ບັນດິດນັ້ນ ເປັນອະຣິຍະບຸກຄົນຜູ້ມີທັດສະນະສົມບູນ
ເຂົ້າເຖິງໂລກອັນກະເສມໄດ້

**ປັນທິຕະສູດ ທີ ໔ ຈົບ**

## ໕. ສີລະວັນຕະສູດ

## ວ່າດ້ວຍບັນພະຊິດຜູ້ມີສີນ

[໔໕] ພິກຂຸທັງຫຼາຍ ບັນພະຊິດຜູ້ມີສີນ ເຂົ້າໄປອາໄສໝູ່ບ້ານຫຼືເຂດໃດຢູ່ ມະນຸດທັງຫຼາຍໃນໝູ່ບ້ານຫຼືເຂດນັ້ນ ຍ່ອມປະສົບບຸນຫຼາຍດ້ວຍຖານະ ໓ ປະການ

ຖານະ ໓ ປະການ ອັນໃດແດ່ ຄື

໑. ກາຍ
໒. ວາຈາ
໓. ໃຈ

ພິກຂຸທັງຫຼາຍ ບັນພະຊິດຜູ້ມີສີນເຂົ້າໄປອາໄສໝູ່ບ້ານ ຫຼື ເຂດໃດຢູ່ ມະນຸດທັງຫຼາຍໃນໝູ່ບ້ານຫຼືເຂດນັ້ນ ຍ່ອມປະສົບບຸນຫຼາຍດ້ວຍຖານະ ໓ ປະການນີ້ແລ

**ສີລະວັນຕະສູດ ທີ ໕ ຈົບ**

## ໖. ສັງຂະຕະລັກຂະນະສູດ

## ວ່າດ້ວຍລັກສະນະທີ່ຖືກປັດໄຈປຸງແຕ່ງ

[໔໖] ພິກຂຸທັງຫຼາຍ ສັງຂະຕະລັກສະນະແຫ່ງສັງຂະຕະທຳ (ລັກສະນະທີ່ຖືກປັດໄຈປຸງແຕ່ງແຫ່ງທຳທີ່ຖືກປັດໄຈປຸງແຕ່ງ) ໓ ປະການນີ້

ສັງຂະຕະລັກສະນະແຫ່ງສັງຂະຕະທຳ ໓ ປະການ ອັນໃດແດ່ ຄື

໑. ຄວາມເກີດຂຶ້ນຜາກົດ
໒. ຄວາມດັບສະຫຼາຍຜາກົດ
໓. ເມື່ອຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ພິກຂຸທັງຫຼາຍ ສັງຂະຕະລັກສະນະແຫ່ງສັງຂະຕະທຳ ໓ ປະການນີ້ແລ

**ສັງຂະຕະລັກຂະນະສູດ ທີ ໗ ຈົບ**

## ໗. ອະສັງຂະຕະລັກຂະນະສູດ

## ວ່າດ້ວຍລັກສະນະທີ່ບໍ່ຖືກປັດໄຈປຸງແຕ່ງ

[໔໗] ພິກຂຸທັງຫຼາຍ ອະສັງຂະຕະລັກສະນະແຫ່ງອະສັງຂະຕະທຳ (ລັກສະນະທີ່ບໍ່ຖືກປັດໄຈປຸງແຕ່ງແຫ່ງທຳທີ່ບໍ່ຖືກປັດໄຈປຸງແຕ່ງ) ໓ ປະການນີ້

ອະສັງຂະຕະລັກສະນະແຫ່ງອະສັງຂະຕະທຳ ໓ ປະການ ອັນໃດແດ່ ຄື

໑. ຄວາມເກີດຂຶ້ນບໍ່ຜາກົດ
໒. ຄວາມດັບສະຫຼາຍບໍ່ຜາກົດ
໓. ເມື່ອຕັ້ງຢູ່ ຄວາມຜັນປ່ຽນບໍ່ຜາກົດ

ພິກຂຸທັງຫຼາຍ ອະສັງຂະຕະລັກສະນະແຫ່ງອະສັງຂະຕະທຳ ໓ ປະການນີ້ແລ

**ອະສັງຂະຕະລັກຂະນະສູດ ທີ ໗ ຈົບ**

## ໙. ປັບພະຕະຣາຊະສູດ

## ວ່າດ້ວຍພູຫຼວງຫິມະພານ

[໔໙] ພິກຂຸທັງຫຼາຍ ໄມ້ສາລະໃຫຍ່ອາໄສພູຫຼວງຫິມະພານຍ່ອມງອກງາມ ດ້ວຍຄວາມຈະເລີນ ໓ ປະການ

ຄວາມຈະເລີນ ໓ ປະການ ອັນໃດແດ່ ຄື

໑. ງ່າ ໃບແກ່ ແລະໃບອ່ອນ

໒. ເປືອກແລະເກັດ

໓. ມອກແລະແກ່ນ

ໄມ້ສາລະໃຫຍ່ອາໄສພູຫຼວງຫິມະພານ ຍ່ອມງອກງາມດ້ວຍຄວາມຈະເລີນ ໓ ປະການນີ້ ສັນໃດ ຊົນພາຍໃນອາໄສພໍ່ເຮືອນຜູ້ມີສັດທາຍ່ອມງອກງາມດ້ວຍຄວາມຈະເລີນ ໓ ປະການ ຄື ກັນສັນນັ້ນ

ຄວາມຈະເລີນ ໓ ປະການ ອັນໃດແດ່ ຄື

໑. ສັດທາ

໒. ສີນ

໓. ປັນຍາ

ພິກຂຸທັງຫຼາຍ ຊົນພາຍໃນອາໄສພໍ່ເຮືອນຜູ້ມີສັດທາຍ່ອມງອກງາມດ້ວຍຄວາມຈະເລີນ ໓ ປະການນີ້

ພູຫີນມີຢູ່ໃນປ່າໃຫຍ່
ໝູ່ໄມ້ເຫຼົ່ານັ້ນອາໄສພູນັ້ນ
ຈະເລີນງອກງາມເຕີບໃຫຍ່ໃນປ່າ ແມ່ນສັນໃດ
ບຸດ ພັນລະຍາ ພວກພ້ອງ ອຳມາດ ໝູ່ຍາດ
ແລະຊົນຜູ້ອາໄສເຂົາລ້ຽງຊີບ ກໍຄືກັນສັນນັ້ນ
ອາໄສພໍ່ເຮືອນຜູ້ມີສັດທາ ສົມບູນດ້ວຍສີນ
ຍ່ອມງອກງາມໃນໂລກນີ້
ຊົນຜູ້ມີປັນຍາເຫັນແຈ້ງ ເຫັນສີນ
ຈາຄະ (ຄວາມເສຍສະລະ) ແລະສຸດຈະຣິດ (ຄວາມປະພຶດດີ)
ຂອງພໍ່ເຮືອນຜູ້ມີສີນນັ້ນແລ້ວຍ່ອມເຮັດຕາມ
ບຸກຄົນປະພຶດທຳເຊິ່ງເປັນທາງນຳສັດໄປສູ່ສຸກຄະຕິ
ຍ່ອມເພີດເພີນໃນໂລກນີ້ສົມປາຖະໜາ
ຍ່ອມບັນເທີງໃນເທວະໂລກ

**ປັບພະຕະຣາຊະສູດ ທີ ໗ ຈົບ**

# ໑໐. ອາຕັບປະກະຣະນີຍະສູດ

## ວ່າດ້ວຍເຫດໃຫ້ເຮັດຄວາມພຽນ

[໕໐] ພິກຂຸທັງຫຼາຍ ບຸກຄົນຄວນເຮັດຄວາມພຽນດ້ວຍຖານະ ໓ ປະການ

ຖານະ ໓ ປະການ ອັນໃດແດ່ ຄື

໑. ເພື່ອຄວາມບໍ່ເກີດຂຶ້ນແຫ່ງບາບອະກຸສົນທຳທີ່ຍັງບໍ່ເກີດຂຶ້ນ
໒. ເພື່ອຄວາມເກີດຂຶ້ນແຫ່ງກຸສົນທຳທີ່ຍັງບໍ່ເກີດຂຶ້ນ
໓. ເພື່ອຄວາມອົດກັ້ນເວທະນາທັງຫຼາຍ ອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວ ເປັນທຸກ ກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ

ບຸກຄົນຄວນເຮັດຄວາມພຽນດ້ວຍຖານະ ໓ ປະການນີ້

ພິກຂຸທັງຫຼາຍ ໃນການໃດ ພິກຂຸເຮັດຄວາມພຽນເພື່ອຄວາມບໍ່ເກີດຂຶ້ນແຫ່ງບາບອະກຸສົນທຳທີ່ຍັງບໍ່ເກີດຂຶ້ນ ເພື່ອຄວາມເກີດຂຶ້ນແຫ່ງກຸສົນທຳທີ່ຍັງບໍ່ເກີດຂຶ້ນ ເພື່ອຄວາມອົດກັ້ນເວທະນາທັງຫຼາຍ ອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວ ເປັນທຸກ ກ້າແຂງ ເຈັບປວດ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກຊີວິດ ໃນການນັ້ນ ພິກຂຸນີ້ເຮົາຮຽກວ່າ ມີຄວາມພຽນ ມີປັນຍາຖືຮັກສາຕົນ ມີສະຕິເພື່ອເຮັດບ່ອນສຸດທຸກໂດຍຖືກຕ້ອງ

**ອາຕັບປະກະຣະນີຍະສູດ ທີ ໑໐ ຈົບ**

# ໑໑. ມະຫາໂຈຣະສູດ

## ວ່າດ້ວຍອົງປະກອບຂອງມະຫາໂຈນ

[໕໑] ພິກຂຸທັງຫຼາຍ ມະຫາໂຈນປະກອບດ້ວຍອົງ ໓ ປະການ ຍ່ອມງັດແງະແດ່ ທຳການປຸ້ນແດ່ ລ້ອມປຸ້ນເຮືອນຫຼັງດຽວແດ່ ດັກປຸ້ນໃນທາງປ່ຽວແດ່

ອົງ ໓ ປະການ ອັນໃດແດ່ ຄື

ມະຫາໂຈນໃນໂລກນີ້

໑. ອາໄສບ່ອນຂຸຂະ

໔. ອາໄສປ່າຣົກ
໕. ອາໄສຜູ້ມີອິດທິພົນ

ມະຫາໂຈນອາໄສບ່ອນຊຸຂະ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ອາໄສເກາະແກ່ງແຫ່ງແມ່ນ້ຳ ຫຼື ບ່ອນຊຸຂະແຫ່ງພູ ມະຫາໂຈນອາໄສບ່ອນຊຸຂະ ເປັນແນວນີ້ແລ

ມະຫາໂຈນອາໄສປ່າຣົກ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ ອາໄສປ່າຣົກດ້ວຍຫຍ້າແດ່ ປ່າຣົກດ້ວຍຕົ້ນໄມ້ແດ່ ປ່າທີ່ມີແນວປ້ອງກັນແດ່ ເປັນປ່າໃຫຍ່ແດ່ ມະຫາໂຈນອາໄສປ່າຣົກ ເປັນແນວນີ້ແລ

ມະຫາໂຈນ ອາໄສຜູ້ມີອິດທິພົນ ເປັນແນວໃດ?

ຄື ມະຫາໂຈນໃນໂລກນີ້ ອາໄສພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ເຂົາຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາເຫຼົ່ານີ້ກໍຈັກວ່າຄະດີຄວາມຊ່ອຍປົກປ້ອງເຮົາ" ຖ້າໃຜກ່າວຫາອັນໃດມະຫາໂຈນນັ້ນ ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊານັ້ນ ຕ່າງກໍວ່າຄະດີຄວາມຊ່ອຍປົກປ້ອງເຂົາ ມະຫາໂຈນອາໄສຜູ້ມີອິດທິພົນ ເປັນແນວນີ້ແລ

ມະຫາໂຈນປະກອບດ້ວຍອົງ ໕ ເປັນປະການນີ້ແລ ຍ່ອມງັດແງະແດ່ ທຳການປຸ້ນແດ່ ລ້ອມປຸ້ນເຮືອນຫຼັງດຽວແດ່ ດັກປຸ້ນໃນທາງປ່ຽວແດ່ ສັນໃດ

ພິກຂຸຊົ່ວປະກອບດ້ວຍທຳ ໕ ປະການ ກໍຄືກັນສັນນັ້ນ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸຊົ່ວໃນທຳວິໄນນີ້

໑. ອາໄສກຳທີ່ບໍ່ກົງໄປກົງມາ
໔. ອາໄສກຳບ່ອນລີ້ລັບ
໕. ອາໄສຜູ້ມີອິດທິພົນ

ພິກຂຸຊົ່ວອາໄສກຳທີ່ບໍ່ກົງໄປກົງມາ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ ປະກອບດ້ວຍກາຍຍະກຳ ວະຈີກຳ ມະໂນກຳທີ່ບໍ່ກົງໄປກົງມາ ພິກຂຸຊົ່ວອາໄສກຳທີ່ບໍ່ກົງໄປກົງມາ ເປັນແນວນີ້ແລ

ພິກຂຸຊົ່ວອາໄສກຳບ່ອນລີ້ລັບ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ເປັນມິດສາທິດຖິ ປະກອບດ້ວຍອັນຕະຄາຫິກະທິດຖິ[១] ພິກຂຸຊົ່ວອາໄສກຳບ່ອນລີ້ລັບ ເປັນແນວນີ້ແລ

ພິກຂຸຊົ່ວອາໄສຜູ້ມີອິດທິພົນ ເປັນແນວໃດ?

ຄື ພິກຂຸຊົ່ວໃນທຳວິໄນນີ້ອາໄສພຣະຣາຊາ ຫຼື ມະຫາອຳມາດຂອງພຣະຣາຊາ ພິກຂຸນັ້ນຄິດແນວນີ້ວ່າ "ຖ້າໃຜຈັກກ່າວຫາອັນໃດເຮົາ ພຣະຣາຊາ ຫຼື ມະຫາອຳມາດຂອງພຣະຣາຊາເຫຼົ່ານີ້ກໍຈັກວ່າຄະດີຄວາມຊ່ອຍປົກປ້ອງເຮົາ" ຖ້າໃຜວ່າກ່າວອັນໃດພິກຂຸນັ້ນ ພຣະຣາຊາ ຫຼື ມະຫາອຳມາດຂອງພຣະຣາຊານັ້ນ ຕ່າງກໍວ່າຄະດີຄວາມຊ່ອຍປົກປ້ອງທ່ານ ພິກຂຸຊົ່ວອາໄສຜູ້ມີອິດທິພົນເປັນແນວນີ້ແລ

ພິກຂຸຊົ່ວປະກອບດ້ວຍທຳ ໓ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

**ມະຫາໂຈຣະສູດ ທີ ໑໑ ຈົບ**

**ຈູລະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

໑. ສຳມຸຂີພາວະສູດ
໒. ອັດຖະວະສະສູດ
໓. ປັນທິຕະສູດ
໔. ສັງຂະຕະລັກຂະນະສູດ
໕. ປັບພະຕະຣາຊະສູດ
໖. ຕິຖານະສູດ
໗. ກະຖາປະວັດຕິສູດ
໘. ສີລະວັນຕະສູດ
໙. ອະສັງຂະຕະລັກຂະນະສູດ
໑໐. ອາຕັບປະກະຣະນີຍະສູດ
໑໑. ມະຫາໂຈຣະສູດ

**ປະຖົມປັນນາດ ຈົບບໍລິບູນ**

# ໘. ທຸຕິຍະປັນນາດ

## ໑. ພາມມະນະວັກ

### ໝວດວ່າດ້ວຍພາມ

## ໑. ປະຖົມທະເວພາມມະນະສູດ

### ວ່າດ້ວຍພາມແກ່ ໘ ຄົນສູດທີ ໑

[໕໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພາມ ໘ ຄົນ ເປັນຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ນັບແຕ່ເກີດມາມີອາຍຸ ໑໒໐ ປີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ທ່ານພຣະໂຄດົມ ຂ້າພະເຈົ້າທັງຫຼາຍເປັນພາມແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ນັບແຕ່ເກີດມາມີອາຍຸ ໑໒໐ ປີ ພວກຂ້າພະເຈົ້ານັ້ນບໍ່ໄດ້ທຳຄວາມດີໄວ້ ບໍ່ໄດ້ທຳກຸສົນໄວ້ ບໍ່ໄດ້ສ້າງເຄື່ອງຕ້ານທານໄພໄວ້ ຂໍທ່ານພຣະໂຄດົມຊົງວ່າກ່າວພວກຂ້າພະເຈົ້າ ຂໍທ່ານພຣະໂຄດົມຊົງສັ່ງສອນພວກຂ້າພະເຈົ້າເພື່ອເກື້ອກູນ ເພື່ອຄວາມສຸກແກ່ພວກຂ້າພະເຈົ້າຕະຫຼອດການລະນານເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາມທັງຫຼາຍ ແທ້ທີ່ຈິງພວກທ່ານເປັນຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ນັບແຕ່ເກີດມາມີອາຍຸ ໑໒໐ ປີ ພວກທ່ານນັ້ນບໍ່ໄດ້ທຳຄວາມດີໄວ້ ບໍ່ໄດ້ທຳກຸສົນໄວ້ ບໍ່ໄດ້ສ້າງເຄື່ອງຕ້ານທານໄພໄວ້ ໂລກນີ້ຖືກຊະຣາ (ຄວາມແກ່) ພະຍາທິ (ຄວາມເຈັບ) ແລະມໍລະນະ (ຄວາມຕາຍ) ຮ້ອຍຮັດໄວ້ ເມື່ອໂລກຖືກຊະຣາ ພະຍາທິ ແລະມໍລະນະຮ້ອຍຮັດໄວ້ແນວນີ້ຄວາມສັງລວມທາງກາຍ ວາຈາ ແລະໃຈໃນໂລກນີ້ ຈະເປັນເຄື່ອງຕ້ານທານ ເປັນບ່ອນຫຼົບຫຼີກ ເປັນບ່ອນເພິ່ງ ເປັນບ່ອນຣະນຶກ ແລະເປັນບ່ອນຍຶດໜ່ຽວຂອງຜູ້ຕາຍໄປແລ້ວ

ຊີວິດຖືກຊະຣານຳເຂົ້າໄປສູ່ຄວາມມີອາຍຸສັ້ນ
ຜູ້ທີ່ຖືກຊະຣານຳເຂົ້າໄປແລ້ວຍ່ອມບໍ່ມີເຄື່ອງຕ້ານທານ
ບຸກຄົນເມື່ອພິຈາລະນາເຫັນໄພນີ້ໃນຄວາມຕາຍ

ຄວນທຳບຸນທີ່ນຳສຸກມາໃຫ້
ຄວາມສັງລວມທາງກາຍ ວາຈາແລະໃຈໃນໂລກນີ້
ຍ່ອມມີເພື່ອຄວາມສຸກແກ່ບຸກຄົນຜູ້ຕາຍໄປແລ້ວ
ເຊິ່ງໄດ້ທຳບຸນໄວ້ຂະນະເມື່ອມີຊີວິດຢູ່

**ປະຖົມທະເວພາມມະນະສູດ ທີ ໑ ຈົບ**

## ໘. ທຸຕິຍະທະເວພາມມະນະສູດ

## ວ່າດ້ວຍພາມແກ່ ໘ ຄົນ ສູດ ທີ ໘

[໕໘] ຄັ້ງນັ້ນພາມ ໘ ຄົນ ເປັນຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ນັບແຕ່ເກີດມາມີອາຍຸ ໑໒໐ ປີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ທ່ານພຣະໂຄດົມ ພວກຂ້າພະເຈົ້າເປັນພາມແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ນັບແຕ່ເກີດມາມີອາຍຸ ໑໒໐ ປີ ພວກຂ້າພະເຈົ້ານັ້ນ ບໍ່ໄດ້ທຳຄວາມດີໄວ້ ບໍ່ໄດ້ທຳກຸສົນໄວ້ ບໍ່ໄດ້ສ້າງເຄື່ອງຕ້ານທານໄພໄວ້ ຂໍທ່ານພຣະໂຄດົມຊົງວ່າ ກ່າວພວກຂ້າພະເຈົ້າ ຂໍທ່ານພຣະໂຄດົມຊົງສັ່ງສອນພວກຂ້າພະເຈົ້າເພື່ອເກື້ອກູນ ເພື່ອຄວາມສຸກແກ່ພວກຂ້າພະເຈົ້າຕະຫຼອດການລະນານ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາມທັງຫຼາຍ ພວກທ່ານເປັນຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວ ນັບແຕ່ເກີດມາມີອາຍຸ ໑໒໐ ປີ ພວກທ່ານນັ້ນ ບໍ່ໄດ້ທຳຄວາມດີໄວ້ ບໍ່ໄດ້ທຳກຸສົນໄວ້ ບໍ່ໄດ້ສ້າງເຄື່ອງຕ້ານທານໄພໄວ້ ໂລກນີ້ຖືກຊະຣາ ພະຍາທິ ແລະມໍລະນະ ແຜດເຜົາແລ້ວ ເມື່ອໂລກຖືກຊະຣາ ພະຍາທິ ແລະມໍລະນະແຜດເຜົາແລ້ວແນວນີ້ຄວາມສັງລວມ ທາງກາຍ ວາຈາ ແລະໃຈໃນໂລກນີ້ຈະເປັນເຄື່ອງຕ້ານທານ ເປັນບ່ອນຫຼົບຫຼີກ ເປັນບ່ອນເພິ່ງ ເປັນບ່ອນຣະນຶກ ແລະເປັນບ່ອນຍຶດໜ່ຽວຂອງຜູ້ຕາຍໄປແລ້ວ

ເມື່ອເຮືອນຖືກໄຟໄໝ້
ສິ່ງຂອງທີ່ນຳອອກໄປໄດ້ຍ່ອມເປັນປະໂຫຍດແກ່ເຂົາ
ສິ່ງຂອງທີ່ຖືກໄຟໄໝ້ໃນເຮືອນນັ້ນ
ຍ່ອມບໍ່ເປັນປະໂຫຍດແກ່ເຂົາ ສັນໃດ
ເມື່ອໂລກຖືກຊະຣາແລະມໍລະນະແຜດເຜົາແລ້ວກໍຄືກັນສັນນັ້ນ

ບຸກຄົນຄວນນຳອອກມາດ້ວຍການໃຫ້
ສິ່ງທີ່ໃຫ້ແລ້ວຊື່ວ່ານຳອອກໄປດີແລ້ວ
ຄວາມສັງລວມທາງກາຍ ວາຈາ ແລະໃຈໃນໂລກນີ້
ຍ່ອມມີເພື່ອຄວາມສຸກແກ່ບຸກຄົນຜູ້ຕາຍໄປແລ້ວ
ເຊິ່ງໄດ້ທຳບຸນໄວ້ຂະນະເມື່ອມີຊີວິດຢູ່

**ທຸຕິຍະທະເວພາມມະນະສູດ ທີ ໘ ຈົບ**

## ໙. ອັນຍະຕະຣະພາມມະນະສູດ

## ວ່າດ້ວຍພາມຜູ້ທູນຖາມທຳມະຄຸນ

[໕໘] ຄັ້ງນັ້ນ ພາມຄົນໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ຯລຯ ພາມນັ້ນເຊິ່ງນັ່ງຢູ່ບ່ອນ ທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີ ພຣະພາກດັ່ງນີ້ ວ່າ

ຂ້າແດ່ ທ່ານພຣະໂຄດົມ ພຣະອົງຕັດວ່າ "ພຣະທຳເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ພຣະທຳເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ" ຂ້າແດ່ ທ່ານພຣະໂຄດົມ ດ້ວຍເຫດພຽງທໍ່ໃດນໍ ພຣະທຳຈຶ່ງຊື່ວ່າເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ສະເຫວີຍທຸກຂະໂທມະນັດທາງໃຈແດ່ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນທັງ ໒ ຝ່າຍ ບໍ່ສະເຫວີຍທຸກຂະໂທມະນັດທາງໃຈ ພຣະທຳຊື່ວ່າ ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ເປັນແນວນີ້

ບຸກຄົນຜູ້ມີໂທສະ ຖືກໂທສະຄອບງຳ ມີຈິດຖືກໂທສະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ສະເຫວີຍທຸກຂະໂທມະນັດທາງໃຈແດ່ ເມື່ອລະໂທສະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນທັງ ໒ ຝ່າຍ ບໍ່ສະເຫວີຍທຸກຂະໂທມະນັດທາງໃຈ ພຣະທຳຊື່ວ່າເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ຯລຯ ເປັນແນວນີ້

ບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ສະເຫວີຍທຸກຂະໂທມະນັດທາງໃຈແດ່ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນທັງ ໒ ຝ່າຍ ບໍ່ສະເຫວີຍທຸກຂະໂທມະນັດທາງໃຈ ພຣະທຳຊື່ວ່າເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເປັນແນວນີ້

ພາມນັ້ນຂາບທູນວ່າ “ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມ ຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກ ຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

**ອັນຍະຕະຣະພາມມະນະສູດທີ ໓ ຈົບ**

## ໔. ປະຣິບພາຊະກະສູດ

## ວ່າດ້ວຍປະຣິພາຊົກຜູ້ທູນຖາມທຳມະຄຸນ

[໕໕] ຄັ້ງນັ້ນ ພາມປະຣິພາຊົກຄົນໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ພາມປະຣິພາຊົກນັ້ນເຊິ່ງນັ່ງຢູ່ບ່ອນ ທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ທ່ານພຣະໂຄດົມ ພຣະອົງຕັດວ່າ “ພຣະທຳເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ພຣະທຳເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ” ຂ້າແດ່ທ່ານພຣະໂຄດົມ ດ້ວຍເຫດພຽງທໍ່ໃດນໍ ພຣະທຳຊື່ວ່າເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ສະເຫວີຍທຸກຂະໂທມະນັດທາງໃຈແດ່ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນ ທັງ ໒ ຝ່າຍ ບໍ່ສະເຫວີຍທຸກຂະໂທມະນັດທາງໃຈ

ບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມບໍ່ປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ

ບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມບໍ່ຮູ້ແຈ້ງຕາມ ຄວາມເປັນຈິງເຖິງປະໂຫຍດຕົນແດ່ ປະໂຫຍດຜູ້ອື່ນແດ່ ປະໂຫຍດທັງ ໒ ຝ່າຍແດ່ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມຮູ້ແຈ້ງຕາມຄວາມເປັນຈິງເຖິງປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງ ໒ ຝ່າຍ ພຣະທຳຊື່ວ່າເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ຯລຯ ເປັນແນວນີ້ແລ

ບຸກຄົນຜູ້ມີໂທສະ ຯລຯ ບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ສະເຫວີຍທຸກຂະໂທມະນັດທາງໃຈແດ່ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນທັງ ໒ ຝ່າຍ ບໍ່ສະເຫວີຍທຸກຂະໂທມະນັດທາງໃຈ

ບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມບໍ່ປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ

ບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມບໍ່ຮູ້ແຈ້ງຕາມຄວາມເປັນຈິງເຖິງປະໂຫຍດຕົນແດ່ ປະໂຫຍດຜູ້ອື່ນແດ່ ປະໂຫຍດທັງ ໒ ຝ່າຍແດ່ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມຮູ້ແຈ້ງຕາມຄວາມເປັນຈິງເຖິງປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງ ໒ ຝ່າຍ ພຣະທຳຊື່ວ່າເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ເປັນແນວນີ້

ພາມປະຣິພາຊົກນັ້ນຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານ ພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນ ອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ປະຣິບພາຊະກະສູດ ທີ ໘ ຈົບ**

# ໕. ນິບພຸຕະສູດ
## ວ່າດ້ວຍພຣະນິບພານ

[໕໙] ຄັ້ງນັ້ນ ຊານຸດໂສນິພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ຊານຸດໂສນິພາມ ເຊິ່ງນັ່ງຢູ່ບ່ອນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ທ່ານພຣະໂຄດົມ ພຣະອົງຕັດວ່າ "ພຣະນິບພານເປັນສະພາວະທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ພຣະນິບພານເປັນສະພາວະທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ" ຂ້າແດ່ ທ່ານພຣະໂຄດົມ ດ້ວຍເຫດພຽງໃດນໍ ພຣະນິບພານຈຶ່ງຊື່ວ່າເປັນສະພາວະທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ສະເຫວີຍທຸກຂະໂທມະນັດທາງໃຈແດ່ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນທັງ ໒ ຝ່າຍ ບໍ່ສະເຫວີຍທຸກຂະໂທມະນັດທາງໃຈ ພຣະນິບພານຊື່ວ່າ ເປັນສະພາວະທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ຯລຯ ເປັນແນວນີ້ແລ

ບຸກຄົນຜູ້ມີໂທສະ ຯລຯ ບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ສະເຫວີຍທຸກຂະໂທມະນັດທາງໃຈແດ່ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນທັງ ໒ ຝ່າຍ ບໍ່ສະເຫວີຍທຸກຂະໂທມະນັດທາງໃຈ ພຣະນິບພານຊື່ວ່າເປັນສະພາວະທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ເປັນແນວນີ້

ໃນການໃດ ບຸກຄົນນີ້ສະເຫວີຍທຳເປັນທີ່ສິ້ນສຸດຣາຄະອັນບໍ່ມີສ່ວນເຫຼືອ ສະເຫວີຍທຳເປັນທີ່ສິ້ນສຸດໂທສະອັນບໍ່ມີສ່ວນເຫຼືອ ສະເຫວີຍທຳເປັນທີ່ສິ້ນສຸດໂມຫະອັນບໍ່ມີສ່ວນເຫຼືອ ໃນການນັ້ນ ພຣະນິບພານຊື່ວ່າ ເປັນສະພາວະທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະ ກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ຊານຸດໂສນິພາມນັ້ນຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ນິບພຸຕະສູດ ທີ ໕ ຈົບ**

# ໖. ປະໂລກະສູດ

## ວ່າດ້ວຍເຫດເຮັດໃຫ້ຈຳນວນມະນຸດມີໜ້ອຍລົງ

[໕໗] ຄັ້ງນັ້ນ ພາມມະຫາສານຄົນໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຯລຯ ພາມມະຫາສານນັ້ນ ນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ຟັງມາແຕ່ພາມຜູ້ເປັນບັນພະບຸຣຸດ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ເປັນອາຈານ ແລະຜູ້ເປັນອາຈານຂອງອາຈານເຊິ່ງກ່າວຢູ່ວ່າ ຮູ້ມາວ່າ ໃນການກ່ອນ ໂລກນີ້ໜາແໜ້ນໄປດ້ວຍມະນຸດຄືອະເວຈີມະຫານະຮົກ ໝູ່ບ້ານ ເຂດ ຊົນນະບົດແລະເມືອງຫຼວງ ມີທຸກໄລຍະໄກ່ບິນຕົກ ຂ້າແດ່ທ່ານພຣະໂຄດົມ ອັນໃດນໍເປັນເຫດເປັນປັດໄຈໃຫ້ມະນຸດທຸກມື້ນີ້ໝົດໄປ ເຫຼືອຢູ່ໜ້ອຍ ແມ່ນໝູ່ບ້ານກໍບໍ່ເປັນໝູ່ບ້ານ ແມ່ນເຂດກໍບໍ່ເປັນເຂດ ແມ່ນເມືອງກໍບໍ່ເປັນເມືອງ ແມ່ນຊົນນະບົດກໍບໍ່ເປັນຊົນນະບົດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ມະນຸດທຸກມື້ນີ້ຍິນດີດ້ວຍຄວາມຍິນດີ ທີ່ບໍ່ຖືກຕ້ອງຕາມທຳ ຖືກຄວາມໂລບທີ່ບໍ່ສະໝ່ຳສະເໝີ ຄອບງຳ ປະກອບດ້ວຍທຳຜິດມະນຸດເຫຼົ່ານັ້ນຍິນດີດ້ວຍຄວາມຍິນດີທີ່ບໍ່ຖືກຕ້ອງຕາມທຳ ຖືກຄວາມໂລບທີ່ບໍ່ສະໝ່ຳສະເໝີຄອບງຳ ປະກອບດ້ວຍທຳຜິດ ຕ່າງຈັບສວຍສັດຕາວຸດອັນຄົມເຂັ່ນຂ້າກັນແລະກັນ ຍ້ອນເຫດນັ້ນ ມະນຸດຈຶ່ງລົ້ມຕາຍເປັນຈຳນວນຫຼາຍ ນີ້ແລ ເປັນເຫດ ເປັນປັດໄຈໃຫ້ມະນຸດທຸກມື້ນີ້ໝົດໄປ ເຫຼືອຢູ່ໜ້ອຍ ແມ່ນໝູ່ບ້ານກໍບໍ່ເປັນໝູ່ບ້ານ ແມ່ນເຂດກໍບໍ່ເປັນເຂດ ແມ່ນເມືອງກໍບໍ່ເປັນເມືອງ ແມ່ນຊົນນະບົດກໍບໍ່ເປັນຊົນນະບົດ

ມະນຸດທຸກມື້ນີ້ ຍິນດີດ້ວຍຄວາມຍິນດີທີ່ບໍ່ຖືກຕ້ອງຕາມທຳ ຖືກຄວາມໂລບທີ່ບໍ່ສະໝ່ຳສະເໝີ ຄອບງຳ ປະກອບດ້ວຍທຳຜິດ ເມື່ອມະນຸດເຫຼົ່ານັ້ນຍິນດີດ້ວຍຄວາມຍິນດີທີ່ບໍ່ຖືກຕ້ອງຕາມທຳ ຖືກຄວາມໂລບທີ່ບໍ່ສະໝ່ຳສະເໝີຄອບງຳ ປະກອບດ້ວຍທຳຜິດ ຝົນຍ່ອມບໍ່ຕົກຕາມລະດູ ຍ້ອນເຫດນັ້ນຈຶ່ງມີພິກສາຫາໄດ້ຍາກ ເຂົ້າກ້າເສຍຫາຍເປັນເພ້ຍໜອນ ເຫຼືອແຕ່ກ້ານ ຍ້ອນເຫດນັ້ນ ມະນຸດຈຶ່ງລົ້ມຕາຍເປັນຈຳນວນຫຼາຍ ແມ່ນນີ້ ເປັນເຫດເປັນປັດໄຈໃຫ້ມະນຸດທຸກມື້ນີ້ໝົດໄປ ເຫຼືອຢູ່ໜ້ອຍ ແມ່ນໝູ່ບ້ານກໍບໍ່ເປັນໝູ່ບ້ານ ແມ່ນເຂດກໍບໍ່ເປັນເຂດ ແມ່ນເມືອງກໍບໍ່ເປັນເມືອງ ແມ່ນຊົນນະບົດກໍບໍ່ເປັນຊົນນະບົດ

ອີກປະການໜຶ່ງ ມະນຸດທຸກມື້ນີ້ຍິນດີດ້ວຍຄວາມຍິນດີທີ່ບໍ່ຖືກຕ້ອງຕາມທຳ ຖືກຄວາມໂລບທີ່ບໍ່ສະໝ່ຳສະເໝີຄອບງຳ ປະກອບດ້ວຍທຳຜິດ ເມື່ອມະນຸດເຫຼົ່ານັ້ນຍິນດີດ້ວຍຄວາມຍິນດີທີ່ບໍ່ຖືກຕ້ອງຕາມທຳ ຖືກຄວາມໂລບທີ່ບໍ່ສະໝ່ຳສະເໝີຄອບງຳ ປະກອບດ້ວຍທຳຜິດ ພວກຍັກ

ຈຶ່ງປ່ອຍອະມະນຸດທີ່ດຸຮ້າຍໄວ້ (ເທິງພື້ນໂລກ) ຍ້ອນເຫດນັ້ນ ມະນຸດຈຶ່ງລົ້ມຕາຍເປັນຈຳນວນຫຼາຍ ແມ່ນນີ້ແລເປັນເຫດເປັນປັດໄຈໃຫ້ມະນຸດທຸກມື້ນີ້ໝົດໄປ ເຫຼືອຢູ່ໜ້ອຍ ແມ່ນໝູ່ບ້ານກໍບໍ່ເປັນໝູ່ບ້ານ ແມ່ນເຂດກໍບໍ່ເປັນເຂດ ແມ່ນເມືອງກໍບໍ່ເປັນເມືອງ ແມ່ນຊົນນະບົດກໍບໍ່ເປັນຊົນນະບົດ

ພາມມະຫາສານນັ້ນ ຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກ ຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ປະໂລກະສູດທີ ໖ ຈົບ**

## ໗. ວັດສະໂຄດຕະສູດ

## ວ່າດ້ວຍປະຣິພາຊົກຊື່ວ່າວັດສະໂຄດ

[໕໗] ຄັ້ງນັ້ນ ວັດສະໂຄດປະຣິພາຊົກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ຟັງມາແລ້ວ ພຣະສະມະນະໂຄດົມຕັດແນວນີ້ວ່າ "ເພິ່ງໃຫ້ທານແກ່ເຮົາທໍ່ນັ້ນ ບໍ່ເພິ່ງໃຫ້ທານແກ່ຊົນເຫຼົ່າອື່ນ ເພິ່ງໃຫ້ທານແກ່ສາວົກຂອງເຮົາ ທໍ່ນັ້ນ ບໍ່ເພິ່ງໃຫ້ທານແກ່ສາວົກຂອງຊົນເຫຼົ່າອື່ນ ທານທີ່ໃຫ້ແກ່ເຮົາທໍ່ນັ້ນ ຈຶ່ງມີຜົນຫຼາຍ ທານທີ່ໃຫ້ແກ່ຊົນເຫຼົ່າອື່ນບໍ່ມີຜົນຫຼາຍ ທານທີ່ໃຫ້ແກ່ສາວົກຂອງເຮົາທໍ່ນັ້ນຈຶ່ງມີຜົນຫຼາຍ ທານທີ່ໃຫ້ແກ່ສາວົກຂອງຊົນເຫຼົ່າອື່ນບໍ່ມີຜົນຫຼາຍ" ຂ້າແດ່ທ່ານພຣະໂຄດົມ ຊົນເຫຼົ່າໃດກ່າວແນວນີ້ວ່າ ພຣະສະມະນະໂຄດົມຕັດແນວນີ້ວ່າ "ເພິ່ງໃຫ້ທານແກ່ເຮົາທໍ່ນັ້ນ ບໍ່ເພິ່ງໃຫ້ທານແກ່ຊົນເຫຼົ່າອື່ນ ເພິ່ງໃຫ້ທານແກ່ສາວົກຂອງເຮົາທໍ່ນັ້ນ ບໍ່ເພິ່ງໃຫ້ທານແກ່ສາວົກຂອງຊົນເຫຼົ່າອື່ນ ທານທີ່ໃຫ້ແກ່ເຮົາທໍ່ນັ້ນຈຶ່ງມີຜົນຫຼາຍ ທານທີ່ໃຫ້ແກ່ຊົນເຫຼົ່າອື່ນບໍ່ມີຜົນຫຼາຍ ທານທີ່ໃຫ້ແກ່ສາວົກຂອງເຮົາທໍ່ນັ້ນ ຈຶ່ງມີຜົນຫຼາຍ ທານທີ່ໃຫ້ແກ່ສາວົກຂອງຊົນເຫຼົ່າອື່ນບໍ່ມີຜົນຫຼາຍ" ຊົນເຫຼົ່ານັ້ນຊື່ວ່າ ເວົ້າຕາມທີ່ທ່ານພຣະໂຄດົມຕັດ ບໍ່ກ່າວຕູ່ທ່ານພຣະໂຄດົມດ້ວຍຄຳທີ່ບໍ່ຈິງ ແລະຊື່ວ່າກ່າວທຳຕາມສົມຄວນແກ່ທຳ ກໍການຄ້ອຍນຳຄຳເວົ້າທີ່ຖືກຕ້ອງຕາມທຳບາງຢ່າງ ຍ່ອມບໍ່ເຖິງຖານະທີ່ໜ້າຕິຕຽນແດ່ບໍ ຍ້ອນຂ້າພະເຈົ້າທັງຫຼາຍບໍ່ປະສົງຈະກ່າວຕູ່ທ່ານພຣະໂຄດົມ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຊົນເຫຼົ່າໃດກ່າວແນວນີ້ວ່າ ພຣະສະມະນະໂຄດົມຕັດແນວນີ້ວ່າ ເພິ່ງໃຫ້ທານແກ່ເຮົາທໍ່ນັ້ນ ຯລຯ ທານທີ່ໃຫ້ແກ່ສາວົກຂອງຊົນເຫຼົ່າອື່ນບໍ່ມີຜົນຫຼາຍ ຊົນເຫຼົ່ານັ້ນຊື່ວ່າ ບໍ່ເວົ້າຕາມທີ່ເຮົາເວົ້າ ແລະຊົນເຫຼົ່ານັ້ນຊື່ວ່າ ກ່າວຕູ່ເຮົານຳ ຄຳທີ່ບໍ່ດີ

ບໍ່ເປັນຈິງ ວັດສະ ຜູ້ໃດຫ້າມບຸກຄົນອື່ນທີ່ໃຫ້ທານຢູ່ ຜູ້ນັ້ນຊື່ວ່າ ເຮັດອັນຕະລາຍ ແກ່ວັດຖຸ ໓ ຢ່າງເປັນໂຈນດັກປຸ້ນວັດຖຸ ໓ ຢ່າງ

ວັດຖຸ ໓ ຢ່າງ ອັນໃດແດ່ ຄື

໑. ເຮັດອັນຕະລາຍແກ່ບຸນຂອງທາຍົກ (ຜູ້ໃຫ້)
໒. ເຮັດອັນຕະລາຍແກ່ລາບຂອງປະຕິຄາຫົກ (ຜູ້ຮັບ)
໓. ໃນເບື້ອງຕົ້ນ ໂຕເຂົາເອງຍ່ອມຖືກກຳຈັດແລະຖືກທຳລາຍ

ວັດສະ ຜູ້ໃດຫ້າມບຸກຄົນອື່ນທີ່ໃຫ້ທານຢູ່ ຜູ້ນັ້ນຊື່ວ່າເຮັດອັນຕະລາຍແກ່ວັດຖຸ ໓ ຢ່າງ ເປັນໂຈນດັກປຸ້ນວັດຖຸ ໓ ຢ່າງ

ແຕ່ເຮົາເອງກ່າວແນວນີ້ວ່າ ຜູ້ໃດຖອກນ້ຳລ້າງພາຊະນະ ຫຼື ນ້ຳລ້າງຂັນລົງທີ່ໝູ່ສັດເຊິ່ງອາໄສຢູ່ບວກນ້ຳໂສໂຄກ ຫຼື ບວກນ້ຳສົກກະປົກ ດ້ວຍຕັ້ງໃຈວ່າ ໝູ່ສັດທີ່ອາໄສຢູ່ໃນບ່ອນນັ້ນຈົ່ງລ້ຽງຊີບດ້ວຍນ້ຳລ້າງພາຊະນະເປັນຕົ້ນນັ້ນ ເຮົາກ່າວກຳທີ່ມີການຖອກນ້ຳລ້າງພາຊະນະເປັນຕົ້ນເຫດວ່າ ເປັນທີ່ມາແຫ່ງບຸນ ບໍ່ຈຳເປັນຕ້ອງເວົ້າເຖິງໃນໝູ່ມະນຸດ

ອີກປະການໜຶ່ງ ເຮົາກ່າວເຖິງທານທີ່ໃຫ້ແກ່ຜູ້ມີສີນວ່າ ມີຜົນຫຼາຍ ທານທີ່ໃຫ້ແກ່ຜູ້ ທຸສີນຍ່ອມບໍ່ເປັນແນວນັ້ນ ຍ້ອນທ່ານຜູ້ມີສີນນັ້ນເປັນຜູ້ລະອົງ ໕ ປະກອບດ້ວຍອົງ ໕

ທ່ານຜູ້ມີສີນນັ້ນ ລະອົງ ໕ ອັນໃດແດ່ ຄື

| | |
|---|---|
| ໑. ກາມສັນທະ | (ຄວາມພໍໃຈໃນກາມ) |
| ໒. ພະຍາບາດ | (ຄວາມຄິດຮ້າຍ) |
| ໓. ຖີນະມິດທະ | (ຄວາມຫົດຫູ່ແລະງ່ວມເຫງົາ) |
| ໔. ອຸດທັດຈະກຸກກຸດຈະ | (ຄວາມຟຸ້ງຊ່ານແລະຮ້ອນໃຈ) |
| ໕. ວິຈິກິດສາ | (ຄວາມລັງເລສົງໄສ) |

ທ່ານຜູ້ມີສີນລະອົງ ໕ ນີ້
ທ່ານຜູ້ມີສີນປະກອບດ້ວຍອົງ ໕ ອັນໃດແດ່ ຄື

໑. ສີນຂັນ (ກອງສີນ) ທີ່ເປັນອະເສຂະ
໒. ສະມາທິຂັນ (ກອງສະມາທິ) ທີ່ເປັນອະເສຂະ
໓. ປັນຍາຂັນ (ກອງປັນຍາ) ທີ່ເປັນອະເສຂະ
໔. ວິມຸດຕິຂັນ (ກອງວິມຸດຕິ) ທີ່ເປັນອະເສຂະ
໕. ວິມຸດຕິຍານທັດສະນະຂັນ (ກອງວິມຸດຕິຍານທັດສະນະ) ທີ່ເປັນອະເສຂະ

ທ່ານຜູ້ມີສີນປະກອບດ້ວຍອົງ ໕ ເປັນແນວນີ້

ເຮົາກ່າວວ່າ ທານທີ່ໃຫ້ໃນທ່ານຜູ້ມີສີນທີ່ລະອົງ ໕ ປະກອບດ້ວຍອົງ ໕ ຍ່ອມມີຜົນຫຼາຍ ດ້ວຍປະການດັ່ງນີ້

ງົວຜູ້ທີ່ເຝິກແລ້ວເປັນງົວໃຊ້ງານທີ່ສົມບູນດ້ວຍກຳລັງ
ມີເຊົາດີ ແລະເປັນສັດທີ່ຊື່ກົງ
ຈະເກີດໃນສີໃດ ໆ ຄື ສີດຳ ສີຂາວ ສີແດງ
ສີຂຽວ ສີດ່າງ ສີຕາມທຳມະຊາດຂອງຕົນ
ສີຄືງົວທຳມະດາ ຫຼືສີຄືນົກກາງແກກໍຕາມ
ຊົນທັງຫຼາຍທຽມມັນເຂົ້າໃນແອກ
ບໍ່ຄຳນຶງເຖິງສີຂອງມັນ ສັນໃດ
ຜູ້ທີ່ເຝິກຕົນດີແລ້ວ ມີຄວາມປະພຶດດີງາມ
ຕັ້ງຢູ່ໃນທຳ ສົມບູນດ້ວຍສີນ ເວົ້າແຕ່ຄຳສັດ
ມີໃຈປະກອບດ້ວຍຫິຣິ ກໍຄືກັນສັນນັ້ນ
ຈະເກີດໃນໝູ່ມະນຸດຊາດໃດ ໆ ຄື ກະສັດ
ພາມ ແພດ ສູດ ຄົນຈັນທານ ແລະຄົນຖອກຂີ້ເຫຍື່ອກໍຕາມ
ກໍລະຄວາມເກີດແລະຄວາມຕາຍໄດ້
ມີພົມມະຈັນບໍລິບູນ ປົງພາຣະໄດ້ແລ້ວ
ບໍ່ປະກອບດ້ວຍກິເລດ ເຮັດກິດທີ່ຄວນເຮັດສຳເລັດແລ້ວ
ບໍ່ມີອາສະວະ ຮູ້ຈົບທຳທຸກຢ່າງ໌
ດັບເຢັນຍ້ອນບໍ່ຖືໝັ້ນ
ໃນເຂດທີ່ປາສະຈາກທຸລີເຊັ່ນນັ້ນແລ ທັກຂີນາຍ່ອມມີຜົນຫຼາຍ
ຄົນພານບໍ່ຮູ້ແຈ້ງ ບໍ່ມີປັນຍາ ບໍ່ໄດ້ສະດັບຮັບຟັງ
ຍ່ອມໃຫ້ທານພາຍນອກ ບໍ່ເຂົ້າໄປຫາສັດຕະບຸຣຸດ
ສ່ວນເຫຼົ່າຊົນຜູ້ມີສັດທາຢັ່ງລົງຕັ້ງໝັ້ນໃນພຣະສຸຄົດເຈົ້າ
ຍ່ອມເຂົ້າໄປຫາສັດຕະບຸຣຸດຜູ້ມີປັນຍາ
ທີ່ເຂົາຍ້ອງຍໍກັນວ່າເປັນນັກປາດ
ທ່ານເຫຼົ່ານັ້ນຜູ້ເປັນບັນດິດ ຍ່ອມໄປສູ່ເທວະໂລກ
ບໍ່ກໍເກີດໃນຕະກູນດີໃນໂລກນີ້
ແລະບັນລຸນິບພານໄດ້ໂດຍລຳດັບ

**ວັດສະໂຄດຕະສູດ ທີ ໗ ຈົບ**

# ๓. ຕິກັນນະສູດ

## ວ່າດ້ວຍພາມຊື່ຕິກັນນະ

[໕໙] ຄັ້ງນັ້ນ ຕິກັນນະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວສັນເສີນຄຸນຂອງພາມຜູ້ໄດ້ວິດຊາ ๓ ຕໍ່ພຣະພັກຂອງພຣະຜູ້ມີພຣະພາກເຈົ້າວ່າ "ພາມຜູ້ໄດ້ວິດຊາ ๓ ເປັນແນວນີ້ພາມຜູ້ໄດ້ວິດຊາ ๓ ເປັນແນວນີ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມ ພາມທັງຫຼາຍ ບັນຍັດພາມວ່າ ເປັນຜູ້ໄດ້ວິດຊາ ๓ ເປັນແນວໃດ?"

ຕິກັນນະພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາມໃນໂລກນີ້ເປັນຜູ້ມີຊາດກຳເນີດດີທັງຝ່າຍບິດາ ແລະຝ່າຍມານດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ເປັນຜູ້ຄົງແກ່ຮຽນ ຊົງຈຳມົນ ຮູ້ຈົບໄຕຣເພດ[໑] ພ້ອມທັງນິກຄັນທຸສາ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ເຂົ້າໃຈໂຕບົດ ແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດ ແລະລັກສະນະມະຫາບຸຣຸດ ຂ້າແດ່ ທ່ານພຣະໂຄດົມ ພາມທັງຫຼາຍບັນຍັດພາມວ່າ ເປັນຜູ້ໄດ້ ວິດຊາ ๓ ເປັນແນວນີ້ແລ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມທັງຫຼາຍບັນຍັດພາມວ່າເປັນຜູ້ໄດ້ ວິດຊາ ๓ ເປັນແນວໜຶ່ງ ສ່ວນຜູ້ໄດ້ວິດຊາ ๓ ໃນອະຣິຍະວິໄນເປັນອີກແນວໜຶ່ງ"

ຕິກັນນະພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ຜູ້ໄດ້ວິດຊາ ๓ ໃນອະຣິຍະວິໄນເປັນແນວໃດ? ຂໍປະທານວະໂຣກາດ ຂໍທ່ານພຣະໂຄດົມສະແດງທຳແກ່ຂ້າພະເຈົ້າແນວທີ່ຜູ້ໄດ້ວິດຊາ ๓ ມີໃນອະຣິຍະວິໄນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອຕິກັນນະພາມທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸໃນທຳວິໄນນີ້ ສະຫງັດຈາກການແລະອະກຸສົນທຳແລ້ວ ບັນລຸປະຖົມຊານທີ່ມີວິຕົກວິຈານ ປີຕິ ແລະສຸກເກີດແຕ່ວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກເກີດແຕ່ສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິ ມີສຳປະຊັນຍະ ສະເຫວີຍ

ສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

ເມື່ອຈິດເປັນສະມາທິບໍລິສຸດຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ພິກຂຸນັ້ນນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາຕິ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບຫຼວງຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບ[៤] ຫຼວງຫຼາຍແດ່ວ່າ ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້

ພິກຂຸນັ້ນ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້ທ່ານໄດ້ບັນລຸວິດຊາທີ ໑ ນີ້ຄວາມມືດມິດ ຄື ອະວິດຊາ ທ່ານກຳຈັດໄດ້ແລ້ວ ແສງສະຫວ່າງຄື ວິດຊາ ໄດ້ເກີດຂຶ້ນແກ່ທ່ານ ປຽບຄື ແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະໝາດມີຄວາມພຽນ ອຸທິດກາຍແລະໃຈ

ເມື່ອຈິດເປັນສະມາທິບໍລິສຸດຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ພິກຂຸນັ້ນນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດທີ່ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຜິດ ພວກເຂົາ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ ທ່ານໄດ້ບັນລຸວິດຊາທີ ໒ ນີ້ຄວາມມືດມິດຄືອະວິດຊາ ທ່ານກຳຈັດໄດ້ແລ້ວ ແສງສະຫວ່າງຄືວິດຊາໄດ້ເກີດຂຶ້ນແກ່ທ່ານ ປຽບຄື ແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ເມື່ອຈິດເປັນສະມາທິບໍລິສຸດຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ພິກຂຸນັ້ນນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)" "ນີ້ອາສະວະ ນີ້ອາສະວະສະມຸໄທ (ເຫດເກີດອາສະຫວະ) ນີ້ອາສະວະນິໂຣດ (ຄວາມດັບອາສະວະ) ນີ້ອາສະວະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບອາສະວະ)" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ໄດ້ບັນລຸວິດຊາທີ ໓ ນີ້ ຄວາມມືດມິດຄືອະວິດຊາ ທ່ານກໍາຈັດໄດ້ແລ້ວ ແສງສະຫວ່າງຄືວິດຊາ ໄດ້ເກີດຂຶ້ນແກ່ທ່ານ ປຽບຄືແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ຈິດຂອງພຣະໂຄດົມພຣະອົງໃດ
ຜູ້ມີສິນບໍ່ຫຼຸບ ໆ ໂນນ ໆ
ມີປັນຍາແລະມີຄວາມເພ່ງພິນິດ
ເປັນຈິດມີຄວາມຄ່ອງແຄ້ວແນ່ວແນ່ ເປັນສະມາທິດີ
ພຣະໂຄດົມພຣະອົງນັ້ນ
ບັນດິດກ່າວວ່າບັນເທົາຄວາມມືດໄດ້
ເປັນນັກປາດ ໄດ້ວິດຊາ ໓ ລະມັດຈຸຣາດ
ເກື້ອກູນແກ່ເທວະດາແລະມະນຸດ ລະບາບທໍາໄດ້ທຸກຢ່າງ
ສາວົກທັງຫຼາຍຍ່ອມນະມັດສະການພຣະໂຄດົມພຣະອົງນັ້ນ
ຜູ້ສົມບູນດ້ວຍວິດຊາ ໓ ບໍ່ລຸ້ມຫຼົງ
ເປັນພຣະພຸດທະເຈົ້າມີກາຍເປັນຊາດສຸດທ້າຍ
ບຸກຄົນໃດ ຮູ້ແຈ້ງປຸບເພນິວາສະຍານ ເຫັນທັງສະຫວັນ
ແລະອະບາຍ ບັນລຸທໍາເປັນທີ່ສິ້ນສຸດຄວາມເກີດ ເປັນມຸນີ
ຢູ່ຈົບພົມມະຈັນຍ້ອນຮູ້ຍິ່ງ ເປັນພາມຜູ້ໄດ້ວິດຊາ ໓
ໂດຍວິດຊາ ໓ ນີ້ເຮົາຮຽກບຸກຄົນນັ້ນວ່າໄດ້ວິດຊາ ໓
ບໍ່ຮຽກບຸກຄົນອື່ນວ່າໄດ້ວິດຊາ ໓ ຕາມທີ່ຜູ້ອື່ນຮຽກກັນ
ພາມ ຜູ້ໄດ້ວິດຊາ ໓ ໃນອະຣິຍະວິໄນເປັນແນວນີ້ແລ

ຕິກັນນະພາມຂາບທູນວ່າ ຂ້າແດ່ ທ່ານພຣະໂຄດົມ ຜູ້ໄດ້ວິດຊາ ໓ ຂອງພວກພາມເປັນແນວໜຶ່ງ ສ່ວນຜູ້ໄດ້ວິດຊາ ໓ ໃນອະຣິຍະວິໄນເປັນອີກແນວໜຶ່ງ ຂ້າແດ່ ທ່ານພຣະໂຄດົມ ກໍຜູ້ໄດ້ວິດຊາ ໓ ຂອງພວກພາມມີຄ່າບໍ່ເຖິງສ່ວນທີ່ ໑໖ ຂອງຜູ້ໄດ້ວິດຊາ ໓ ໃນອະຣິຍະວິໄນນີ້

ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນນ່ອນຫຼາຍ ຯລຯ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພະເຈົ້າວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ຕິກັນນະສູດທີ ໙ ຈົບ**

## ໑໐. ຊານຸດໂສນິສູດ

## ວ່າດ້ວຍພາມຊື່ວ່າຊານຸດໂສນິ

[໖໐] ຄັ້ງນັ້ນ ຊານຸດໂສນິພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ຊານຸດໂສນິພາມນັ່ງຢູ່ບ່ອນ ທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ຜູ້ໃດມີຍັນ[໑] ມີສິ່ງທີ່ເພິ່ງໃຫ້ດ້ວຍສັດທາ ມີອາຫານທີ່ເພິ່ງໃຫ້ແກ່ບຸກຄົນອື່ນ ຫຼື ມີວັດຖຸທານ ຜູ້ນັ້ນ ຄວນໃຫ້ທານໃນພາມຜູ້ໄດ້ວິດຊາ ໓"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມ ພາມທັງຫຼາຍ ບັນຍັດພາມວ່າເປັນຜູ້ໄດ້ວິດຊາ ໓ ເປັນແນວໃດ?"

ຊານຸດໂສນິພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາມໃນໂລກນີ້ເປັນຜູ້ມີຊາດກຳເນີດດີທັງຝ່າຍບິດາ ແລະຝ່າຍມານດາ ຖືປະຕິສົນທິບໍລິສຸດດີຕະຫຼອດເຈັດຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໂດຍການອ້າງເຖິງຊາດຕະກູນໄດ້ ເປັນຜູ້ຄົງແກ່ຮຽນ ຊົງຈຳມົນ ຮູ້ຈົບໄຕຣເພດ ພ້ອມທັງນິກັນທຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດ ແລະລັກສະນະມະຫາບຸຣຸດ ຂ້າແດ່ ທ່ານພຣະໂຄດົມ ພາມທັງຫຼາຍບັນຍັດພາມວ່າເປັນຜູ້ໄດ້ວິດຊາ ໓ ເປັນແນວນີ້ແລ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມທັງຫຼາຍ ບັນຍັດພາມວ່າເປັນຜູ້ໄດ້ ວິດຊາ ໓ ເປັນແນວໜຶ່ງ ສ່ວນຜູ້ໄດ້ວິດຊາ ໓ ໃນອະຣິຍະວິໄນເປັນອີກແນວໜຶ່ງ"

ຊານຸດໂສນີພາມທູນຖາມວ່າ "ຂ້າແດ່ ທ່ານພຣະໂຄດົມ ຜູ້ໄດ້ວິດຊາ ໓ ໃນ ອະຣິຍະວິໄນເປັນແນວໃດ? ຂໍປະທານອະໂຣກາດ ຂໍທ່ານພຣະໂຄດົມສະແດງທຳແກ່ຂ້າພະເຈົ້າ ແນວທີ່ຜູ້ໄດ້ວິດຊາ ໓ ມີໃນອະຣິຍະວິໄນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອຊານຸດໂສນີພາມ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ຯລຯ ບັນລຸຈະຕຸດຖະຊານທີ່ໆລໆຢູ່ເມື່ອຈິດເປັນສະມາທິບໍລິສຸດຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ໌ ປາສະຈາກຄວາມ ເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ພິກຂຸນັ້ນນ້ອມ ຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຯລຯ ທ່ານໄດ້ບັນລຸວິດຊາ ທີ ໑ ນີ້ຄວາມມືດມິດຄືອະວິດຊາ ທ່ານກຳຈັດໄດ້ແລ້ວ ແສງສະຫວ່າງຄື ວິດຊາໄດ້ເກີດຂຶ້ນແກ່ທ່ານ ປຽບຄື ແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ເມື່ອຈິດເປັນສະມາທິບໍລິສຸດຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ພິກຂຸນັ້ນ ນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ທ່ານໄດ້ບັນລຸວິດຊາທີ ໒ ນີ້ຄວາມມືດມິດຄື ອະວິດຊາ ທ່ານກຳຈັດໄດ້ແລ້ວ ແສງສະຫວ່າງຄື ວິດຊາໄດ້ເກີດຂຶ້ນແກ່ທ່ານປຽບຄື ແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ເມື່ອຈິດເປັນສະມາທິບໍລິສຸດຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ພິກຂຸນັ້ນນ້ອມຈິດໄປ ເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" "ນີ້ອາສະວະ ຯລຯ ນີ້ອາສະວະນິໂຣທະຄາມີນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າລຸດພົ້ນແລ້ວ ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ທ່ານໄດ້ບັນລຸວິດຊາທີ ໓ ນີ້ຄວາມມືດມິດຄືອະວິດຊາ ທ່ານກຳຈັດໄດ້ແລ້ວ ແສງສະຫວ່າງຄືວິດຊາໄດ້ເກີດຂຶ້ນແກ່ທ່ານ ປຽບຄື ແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ບຸກຄົນໃດ ສົມບູນດ້ວຍສີນແລະຂໍ້ວັດປະຕິບັດ
ອຸທິດກາຍແລະໃຈ ມີຈິດຕັ້ງໝັ້ນ
ບຸກຄົນໃດມີຈິດທີ່ຊ່ຽວຊານ ແນ່ວແນ່ ຕັ້ງໝັ້ນດີ

บุກຄົນໃດ ຮູ້ແຈ້ງປຸບເພນິວາສະຍານ ເຫັນທັງສະຫວັນ
ແລະອະບາຍ ບັນລຸທຳເປັນບ່ອນສິ້ນສຸດຄວາມເກີດ ເປັນມຸນີ
ຢູ່ຈົບພົມມະຈັນຍ້ອນຮູ້ຍິ່ງ ເປັນພາມຜູ້ໄດ້ວິດຊາ ໓
ໂດຍວິດຊາ ໓ ນີ້ເຮົາຮຽກບຸກຄົນນັ້ນວ່າໄດ້ວິດຊາ ໓
ບໍ່ຮຽກບຸກຄົນອື່ນວ່າໄດ້ວິດຊາ ໓ ຕາມທີ່ຜູ້ອື່ນຮຽກກັນ
ພາມຜູ້ໄດ້ວິດຊາ ໓ ໃນອະຣິຍະວິໄນ ເປັນແນວນີ້ແລ

ຊານຸດໂສນີພາມຂາບທູນວ່າ ຂ້າແດ່ ທ່ານພຣະໂຄດົມ ຜູ້ໄດ້ວິດຊາ ໓ ຂອງພວກພາມ ເປັນແນວໜຶ່ງ ສ່ວນຜູ້ໄດ້ວິດຊາ ໓ ໃນອະຣິຍະວິໄນເປັນອີກແນວໜຶ່ງ ຂ້າແດ່ ທ່ານພຣະໂຄດົມ ກໍຜູ້ໄດ້ວິດຊາ ໓ ຂອງພວກພາມມີຄ່າບໍ່ເຖິງສ່ວນທີ ໑໖ ຂອງຜູ້ໄດ້ວິດຊາ ໓ ໃນອະຣິຍະວິໄນນີ້

ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ໗ລ໗ ຂໍທ່ານ ພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນ ຕະຫຼອດຊີວິດ

**ຊານຸດໂສນີສູດທີ ໙ ຈົບ**

## ໑໐. ສັງຄາຣະວະສູດ

### ວ່າດ້ວຍສັງຄາຣະວະພາມ

[໖໑] ຄັ້ງນັ້ນ ສັງຄາຣະວະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ ວ່າ

“ຂ້າແດ່ ທ່ານພຣະໂຄດົມ ຂ້າພະເຈົ້າທັງຫຼາຍຊື່ວ່າເປັນພາມ ບູຊາຍັນເອງແດ່ ໃຫ້ຜູ້ອື່ນ ບູຊາແດ່ ໃນໝູ່ພາມນັ້ນ ຜູ້ໃດບູຊາຍັນເອງ ແລະຜູ້ໃດໃຫ້ຜູ້ອື່ນບູຊາຍັນ ຄົນເຫຼົ່ານັ້ນທັງໝົດຊື່ວ່າ ປະຕິບັດປຸນຍະປະຕິປະທາທີ່ເກີດແກ່ຫຼາຍສະຣີຣະຄືຍັນຍາທິກອນ (ມີຍັນເປັນເຫດ) ສ່ວນບຸກຄົນໃດອອກຈາກເຮືອນແຫ່ງຕະກູນໃດກໍຕາມ ບວດເປັນບັນພະຊິດ ເຝິກຕົນເອງ ເຮັດຕົນເອງໃຫ້ສະງົບ ເຮັດຕົນເອງໃຫ້ດັບເຢັນສະນິດ ເມື່ອເປັນແນວນີ້ບຸກຄົນນັ້ນຊື່ວ່າ ປະຕິບັດປຸນຍະປະຕິປະທາທີ່ເກີດແກ່ສະຣີຣະດຽວຄືບັບ ພັດຊາທິກອນ (ມີບັນພະຊາເປັນເຫດ)”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພາມ ຖ້າເປັນແນວນັ້ນ ເຮົາຈັກຍ້ອນຖາມທ່ານໃນຂໍ້ນີ້ ທ່ານເພິ່ງສະເຫຼີຍບັນຫານີ້ຕາມທີ່ທ່ານເຫັນສົມຄວນ ທ່ານເຂົ້າໃຈເລື້ອງນັ້ນແນວໃດ? ຕະຖາຄົດ

ສະເດັດ ອຸບັດໃນໂລກນີ້ຊື່ວ່າ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຕະຖາຄົດພຣະອົງນັ້ນຕັດໄວ້ແນວນີ້ວ່າ "ໃນຂໍ້ນີ້ ເຮົາປະຕິບັດຕາມມັກນີ້ ປະຕິປະທານີ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດອັນປະເສີດ ເຊິ່ງເປັນບ່ອນສຸດແຫ່ງພົມມະຈັນດ້ວຍປັນຍາອັນຍິ່ງເອງແລ້ວ ປະກາດໃຫ້ຜູ້ອື່ນຮູ້ຕາມ ມາເທີ້ນ ແມ່ນທ່ານທັງຫຼາຍ ກໍຈົ່ງປະຕິບັດຕາມທີ່ທ່ານທັງຫຼາຍ ປະຕິບັດແລ້ວ ຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດອັນປະເສີດ ເຊິ່ງເປັນບ່ອນສຸດແຫ່ງພົມມະຈັນດ້ວຍປັນຍາ ອັນຍິ່ງເອງເຂົ້າເຖິງຢູ່" ພຣະສາດສະດາພຣະອົງນີ້ຊົງສະແດງທຳໄວ້ ແລະຄົນເຫຼົ່າອື່ນຕ່າງໆກໍປະຕິບັດເພື່ອຄວາມເປັນແນວນັ້ນ ກໍຜູ້ສະແດງ ແລະຜູ້ປະຕິບັດນັ້ນມີຫຼາຍກວ່າຮ້ອຍ ມີຫຼາຍກວ່າພັນ ມີຫຼາຍກວ່າແສນ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ເມື່ອເປັນແນວນີ້ປຸນຍະປະຕິປະທາຄືປັບພັດຊາທີກອນຍ່ອມເກີດແກ່ສະຣີຣະດຽວ ຫຼື ເກີດແກ່ຫຼາຍສະຣີຣະ"

ເມື່ອສັງຄາຣະວະພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ເມື່ອເປັນແນວນີ້ປຸນຍະປະຕິປະທາ ຄື ປັບພັດຊາທີກອນນີ້ຍ່ອມເກີດແກ່ຫຼາຍສະຣີຣະ"

ເມື່ອສັງຄາຣະວະພາມຂາບທູນແນວນີ້ແລ້ວ ທ່ານພຣະອານົນໄດ້ຖາມສັງຄາຣະວະພາມວ່າ "ບັນດາປະຕິປະທາ ໒ ຢ່າງນີ້ ທ່ານຖືກໃຈປະຕິປະທາອັນໃດ ເຊິ່ງຕ້ອງໃຊ້ອຸປະກອນໜ້ອຍກວ່າ ມີຄວາມວຸ່ນວາຍໜ້ອຍກວ່າ ແຕ່ມີຜົນຫຼາຍກວ່າ ແລະມີອານິສົງຫຼາຍກວ່າ"

ເມື່ອທ່ານພຣະອານົນຖາມແນວນີ້ ສັງຄາຣະວະພາມໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານພຣະໂຄດົມເປັນສັນໃດ ທ່ານພຣະອານົນກໍເປັນສັນນັ້ນ ທ່ານທັງ ໒ ນີ້ເຮົາບູຊາແລ້ວ ທ່ານທັງ ໒ ນີ້ເຮົາສັນເສີນແລ້ວ"

ແມ່ນເທື່ອທີ ໒ ໗ລ໗

ແມ່ນເທື່ອທີ ໓ ທ່ານພຣະອານົນໄດ້ກ່າວກັບສັງຄາຣະວະພາມວ່າ "ພາມ ເຮົາບໍ່ໄດ້ຖາມທ່ານແນວນີ້ວ່າ ທ່ານບູຊາໃຜ ຫຼື ວ່າທ່ານສັນເສີນໃຜ ແຕ່ເຮົາຖາມທ່ານ ແນວນີ້ວ່າ ບັນດາປະຕິປະທາ ໒ ຢ່າງນີ້ ທ່ານມັກປະຕິປະທາອັນໃດ ເຊິ່ງຕ້ອງໃຊ້ອຸປະກອນໜ້ອຍກວ່າ ມີຄວາມວຸ່ນວາຍໜ້ອຍກວ່າ ແຕ່ມີຜົນຫຼາຍກວ່າແລະມີອານິສົງຫຼາຍກວ່າ"

ແມ່ນເທື່ອທີ ໓ ສັງຄາຣະວະພາມກໍໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານພຣະໂຄດົມເປັນສັນໃດ ທ່ານພຣະອານົນກໍເປັນສັນນັ້ນ ທ່ານທັງ ໒ ນີ້ເຮົາບູຊາແລ້ວ ທ່ານທັງ ໒ ນີ້ເຮົາສັນເສີນແລ້ວ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງດຳຣິວ່າ "ສັງຄາຣະວະພາມຖືກອານີນຖາມບັນຫາ ທີ່ຖືກຕ້ອງຕາມທຳ ກໍມີດຢູ່ ບໍ່ຕອບເຖິງ ໓ ຄັ້ງ ທາງທີ່ດີ ເຮົາຄວນຊ່ວຍເຫຼືອ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບສັງຄາຣະວະພາມດັ່ງນີ້ວ່າ "ພາມ ມື້ນີ້ພວກ ຣາດຊະບຸຣຸດນັ່ງປະຊຸມກັນໃນຣາດຊະສຳນັກ ສົນທະນາກັນໃນລະຫວ່າງການປະຊຸມວ່າແນວໃດ"

ສັງຄາຣະວະພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ມື້ນີ້ພວກຣາດຊະບຸຣຸດນັ່ງ ປະຊຸມກັນໃນຣາດຊະສຳນັກ ສົນທະນາກັນໃນລະຫວ່າງການປະຊຸມວ່າ "ຮູ້ມາວ່າ ໃນການກ່ອນ ພິກຂຸທຳມະດາມີຈຳນວນໜ້ອຍ ສ່ວນພິກຂຸທີ່ໄດ້ອຸດຕະຣິມະນຸດສະທຳ ສະແດງອິດທິປາຕິຫານ[១] ໄດ້ ມີຈຳນວນຫຼາຍກວ່າ ທຸກມື້ນີ້ພິກຂຸທຳມະດາມີຈຳນວນຫຼາຍກວ່າ ສ່ວນພິກຂຸທີ່ໄດ້ອຸດຕະຣິມະ ນຸດສະທຳ ສະແດງອິດທິປາຕິຫານໄດ້ມີຈຳນວນໜ້ອຍກວ່າ" ຂ້າແດ່ ທ່ານພຣະໂຄດົມ ມື້ນີ້ພວກ ຣາດຊະບຸຣຸດນັ່ງປະຊຸມກັນໃນຣາດຊະສຳນັກ ສົນທະນາກັນໃນລະຫວ່າງການປະຊຸມດັ່ງນີ້ແລ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາມ ປາຕິຫານ (ການເຮັດໃຫ້ປໍລະປັກຍອມໄດ້) ໓ ຢ່າງ ນີ້ ປາຕິຫານ ໓ ຢ່າງ ອັນໃດແດ່ ຄື

໑. ອິດທິປາຕິຫານ (ປາຕິຫານຄືລິດ)
໒. ອາເທສະນາປາຕິຫານ (ປາຕິຫານຄືການທາຍໃຈ)
໓. ອະນຸສາສະນີປາຕິຫານ (ປາຕິຫານຄືອະນຸສາສະນີ)

ອິດທິປາຕິຫານ ເປັນແນວໃດ?

ຄື ພິກຂຸລາງອົງໃນທຳວິໄນນີ້ສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງ ເປັນຫຼາຍ ຄົນກໍໄດ້ ຫຼາຍຄນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ ພູ ໄປໄດ້ບໍ່ຕິດຂັດຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນແລະມຸດລົງ ໃນແຜ່ນດິນຄືໄປໃນ ນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນ ອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດເຊິ່ງມີລິດຫຼາຍ ມີອານຸພາບຫຼາຍກໍ ໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ນີ້ຮຽກວ່າ ອິດທິປາຕິຫານ

ອາເທສະນາປາຕິຫານ ເປັນແນວໃດ?

ຄື ພິກຂຸລາງອົງໃນທຳວິໄນນີ້ກ່າວດັກໃຈໄດ້ໂດຍເຄື່ອງໝາຍວ່າ "ໃຈຂອງທ່ານເປັນແນວ ນີ້ກໍມີ ໃຈຂອງທ່ານເປັນແນວນີ້ກໍມີ ຈິດຂອງທ່ານກຳລັງຄິດແນວນີ້ ໆ" ແມ່ນຫາກທ່ານຈະກ່າວ ດັກໃຈຫຼາຍເລື້ອງ ຄຳທີ່ທ່ານກ່າວນັ້ນ ກໍເປັນແນວນັ້ນ ບໍ່ເປັນແນວອື່ນ

ພິກຂຸລາງອົງໃນທຳວິໄນນີ້ກ່າວດັກໃຈໂດຍອາໄສເຄື່ອງໝາຍບໍ່ໄດ້ເລີຍ ແຕ່ພໍໄດ້ຟັງ ມະນຸດ ອະມະນຸດ ຫຼື ເທວະດາ ຍ່ອມກ່າວດັກໃຈໄດ້ວ່າ "ໃຈຂອງທ່ານເປັນແນວນີ້ກໍມີ ໃຈຂອງທ່ານເປັນແນວນີ້ກໍມີ ຈິດຂອງທ່ານກຳລັງຄິດແນວນີ້ ໆ" ແມ່ນຫາກທ່ານຈະກ່າວດັກໃຈຫຼາຍເລື້ອງ ຄຳທີ່ທ່ານກ່າວນັ້ນກໍເປັນແນວນັ້ນ ບໍ່ເປັນແນວອື່ນ

ພິກຂຸລາງອົງໃນທຳວິໄນນີ້ກ່າວດັກໃຈໂດຍອາໄສເຄື່ອງໝາຍບໍ່ໄດ້ເລີຍ ເຖິງໄດ້ຟັງສຽງມະນຸດ ອະມະນຸດ ຫຼືເທວະດາ ກໍກ່າວດັກໃຈບໍ່ໄດ້ ແຕ່ພໍໄດ້ຟັງສຽງຈົ່ມເພີ້ຂອງບຸກຄົນຜູ້ຮິ່ນຕອງແລ້ວ ຍ່ອມກ່າວດັກໃຈໄດ້ວ່າ "ໃຈຂອງທ່ານເປັນແນວນີ້ກໍມີ ໃຈຂອງທ່ານເປັນແນວນີ້ກໍມີ ຈິດຂອງທ່ານກຳລັງຄິດແນວນີ້ ໆ" ແມ່ນຫາກທ່ານຈະກ່າວດັກໃຈຫຼາຍເລື້ອງ ຄຳທີ່ທ່ານກ່າວນັ້ນກໍເປັນແນວນັ້ນ ບໍ່ເປັນແນວອື່ນ

ພິກຂຸລາງອົງໃນທຳວິໄນນີ້ກ່າວດັກໃຈໂດຍອາໄສເຄື່ອງໝາຍບໍ່ໄດ້ເລີຍ ເຖິງໄດ້ຟັງສຽງມະນຸດ ອະມະນຸດ ຫຼືເທວະດາ ກໍກ່າວດັກໃຈບໍ່ໄດ້ ເຖິງໄດ້ຟັງສຽງຈົ່ມເພີ້ຂອງບຸກຄົນ ຜູ້ຮິ່ນຕອງກໍກ່າວດັກໃຈບໍ່ໄດ້ ແຕ່ກຳນົດຮູ້ໃຈຂອງບຸກຄົນຜູ້ເຂົ້າສະມາທິ ບໍ່ມີວິຕົກ ບໍ່ມີວິຈານດ້ວຍໃຈຂອງຕົນວ່າ "ທ່ານຜູ້ຈະເລີນນີ້ຈັກນຶກເລື້ອງຊື່ນັ້ນໃນລຳດັບຈິດນີ້ໂດຍວິທີທີ່ໄດ້ຕັ້ງມະໂນສັງຂານ" ແມ່ນຫາກທ່ານຈະກ່າວດັກໃຈຫຼາຍເລື້ອງ ຄຳທີ່ທ່ານກ່າວນັ້ນກໍເປັນແນວນັ້ນ ບໍ່ເປັນແນວອື່ນ ນີ້ຮຽກວ່າ ອາເທສະນາປາຕິຫານ

ອະນຸສາສະນີປາຕິຫານ ເປັນແນວໃດ?

ຄື ພິກຂຸລາງອົງໃນທຳວິໄນນີ້ພ່ຳສອນຢູ່ແນວນີ້ວ່າ "ຈົ່ງນຶກແນວນີ້ຢ່າໄດ້ນຶກແນວນີ້ ຈົ່ງມະນະສິການແນວນີ້ຢ່າໄດ້ມະນະສິການແນວນີ້ ຈົ່ງລະທຳນີ້ຈົ່ງບັນລຸທຳນີ້ຢູ່" ນີ້ຮຽກວ່າ ອະນຸສາສະນີປາຕິຫານ

ພາມ ປາຕິຫານ ໓ ຢ່າງນີ້ ບັນດາປາຕິຫານ ໓ ຢ່າງນີ້ ທ່ານຖືກໃຈປາຕິຫານໃດ ເຊິ່ງງົດງາມກວ່າ ແລະປະນີດກວ່າ

ສັງຄາຣະວະພາມຂາບທູນວ່າ ຂ້າແດ່ ທ່ານພຣະໂຄດົມ ບັນດາປາຕິຫານ ໓ ຢ່າງນັ້ນ ປາຕິຫານທີ່ພິກຂຸລາງອົງໃນທຳວິໄນນີ້ ສະແດງລິດໄດ້ຫຼາຍແນວ ໆລໆ ແຜ່ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ນີ້ຄືປາຕິຫານ ຜູ້ໃດສະແດງອິດທິປາຕິຫານນັ້ນ ຜູ້ນັ້ນ ຍ່ອມພໍໃຈປາຕິຫານນັ້ນ ແລະຜູ້ໃດສະແດງອິດທິປາຕິຫານນັ້ນ ປາຕິຫານນັ້ນເປັນຂອງຜູ້ນັ້ນ ຂ້າແດ່ ທ່ານພຣະໂຄດົມ ປາຕິຫານນີ້ຜາກົດແກ່ຂ້າພະເຈົ້າຄືກັບ ພາບມາຍາ

ຂ້າແດ່ ທ່ານພຣະໂຄດົມ ປາຕິຫານທີ່ພິກຂຸລາງອົງໃນທຳວິໄນນີ້ກ່າວດັກໃຈໄດ້ໂດຍອາໄສເຄື່ອງໝາຍວ່າ "ໃຈຂອງທ່ານເປັນແນວນີ້ກໍມີ ໃຈຂອງທ່ານເປັນແນວນີ້ກໍມີ ຈິດຂອງທ່ານກຳລັງຄິດແນວນີ້ໆ" ແມ່ນຫາກເຂົາຈະກ່າວດັກໃຈຫຼາຍເລື້ອງ ຄຳທີ່ເຂົາກ່າວນັ້ນກໍ ເປັນແນວນັ້ນບໍ່ເປັນແນວອື່ນ ຂ້າແດ່ ທ່ານພຣະໂຄດົມ ພິກຂຸລາງອົງໃນທຳວິໄນນີ້ກ່າວດັກໃຈໂດຍອາໄສເຄື່ອງໝາຍບໍ່ໄດ້ ແຕ່ພໍໄດ້ຟັງສຽງມະນຸດ ອະມະນຸດ ຫຼື ເທວະດາແລ້ວກໍກ່າວດັກໃຈໄດ້ວ່າ ຯລຯ ໄດ້ຟັງສຽງມະນຸດ ອະມະນຸດ ຫຼື ເທວະດາແລ້ວ ກໍຍັງກ່າວດັກໃຈບໍ່ໄດ້ ແຕ່ພໍໄດ້ຟັງສຽງຈົ່ມເພີ້ຂອງບຸກຄົນຜູ້ຮົ່ນຕອງ ກໍກ່າວດັກໃຈໄດ້ວ່າ ຯລຯ ແມ່ນໄດ້ຟັງສຽງຈົ່ມເພີ້ຂອງບຸກຄົນຜູ້ຮົ່ນຕອງ ກໍຍັງກ່າວດັກໃຈບໍ່ໄດ້ ແຕ່ກຳນົດຮູ້ໃຈຂອງບຸກຄົນຜູ້ເຂົ້າສະມາທິທີ່ບໍ່ມີວິຕົກ ບໍ່ມີວິຈານດ້ວຍໃຈຂອງຕົນວ່າ "ທ່ານຜູ້ຈະເລີນນີ້ ຈັກນຶກເລື້ອງນັ້ນໃນລຳດັບຈິດນີ້ໂດຍວິທີທີ່ໄດ້ຕັ້ງມະໂນສັງຂານໄວ້" ແມ່ນຫາກທ່ານຈະກ່າວດັກໃຈຫຼາຍເລື້ອງ ຄຳທີ່ທ່ານກ່າວນັ້ນກໍເປັນແນວນັ້ນ ບໍ່ໄດ້ເປັນແນວອື່ນ ຂ້າແດ່ ທ່ານພຣະໂຄດົມນີ້ຄື ປາຕິຫານ ຜູ້ໃດສະແດງອາເທສະນາປາຕິຫານນັ້ນຜູ້ນັ້ນຍ່ອມພໍໃຈປາຕິຫານນັ້ນ ແລະ ຜູ້ໃດສະແດງອາເທສະນາປາຕິຫານນັ້ນ ປາຕິຫານນັ້ນເປັນຂອງຜູ້ນັ້ນ ຂ້າແດ່ ທ່ານພຣະໂຄດົມ ປາຕິຫານແມ່ນນີ້ຜາກົດແກ່ຂ້າພະເຈົ້າຄືພາບມາຍາ

ຂ້າແດ່ ທ່ານພຣະໂຄດົມ ບັນດາປາຕິຫານ ໓ ຢ່າງນີ້ ຂ້າພຣະອົງພໍໃຈປາຕິຫານ ນີ້ເຊິ່ງງົດງາມກວ່າ ແລະປະນີດກວ່າ ຄື ພິກຂຸລາງອົງໃນທຳວິໄນນີ້ພ່ຳສອນແນວນີ້ວ່າ "ຈົ່ງນຶກແນວນີ້ຢ່າໄດ້ນຶກແນວນີ້ ຈົ່ງມະນະສິການແນວນີ້ ຢ່າໄດ້ມະນະສິການແນວນີ້ ຈົ່ງລະທຳນີ້ ຈົ່ງບັນລຸທຳນີ້ຢູ່"

ຂ້າແດ່ ທ່ານພຣະໂຄດົມ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທ່ານພຣະໂຄດົມຕັດເລື້ອງນີ້ໄວ້ດີ ແລະຂ້າພະເຈົ້າທັງຫຼາຍຂໍຊົງຈຳໄວ້ວ່າ ທ່ານພຣະໂຄດົມປະກອບດ້ວຍປາຕິຫານ ໓ ຢ່າງນີ້ຍ້ອນທ່ານພຣະໂຄດົມ ຊົງສະແດງລິດໄດ້ຫຼາຍຢ່າງ ຯລຯ ຊົງໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກໄດ້ຍ້ອນ ທ່ານພຣະໂຄດົມ ຊົງກຳນົດຮູ້ໃຈຂອງບຸກຄົນຜູ້ເຂົ້າສະມາທິທີ່ບໍ່ມີວິຕົກ ບໍ່ມີວິຈານ ດ້ວຍໃຈຂອງພຣະອົງວ່າ "ທ່ານຜູ້ຈະເລີນນີ້ ຈັກນຶກເລື້ອງນັ້ນ ໃນລຳດັບຈິດນີ້ໂດຍວິທີທີ່ໄດ້ຕັ້ງມະໂນສັງຂານໄວ້" ຍ້ອນທ່ານ ພຣະໂຄດົມຊົງພ່ຳສອນແນວນີ້ວ່າ "ຈົ່ງນຶກແນວນີ້ຢ່າໄດ້ນຶກແນວນີ້ ຈົ່ງມະນະສິການແນວນີ້ ຢ່າໄດ້ມະນະສິການແນວນີ້ຈົ່ ງລະທຳນີ້ ຈົ່ງບັນລຸທຳນີ້ຢູ່"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທ່ານກ່າວວາຈາທີ່ກ່ຽວຂ້ອງກັບຄຸນຂອງເຮົາໂດຍແທ້ເຮົາຈັກຕອບຄຳຖາມຂອງທ່ານ ຍ້ອນເຮົາສະແດງລິດໄດ້ຫຼາຍຢ່າງ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກໄດ້ ຍ້ອນເຮົາກຳນົດຮູ້ໃຈຂອງບຸກຄົນຜູ້ເຂົ້າສະມາທິທີ່ບໍ່ມີວິຕົກ ບໍ່ມີວິຈານດ້ວຍໃຈຂອງຕົນວ່າ "ທ່ານຜູ້ຈະເລີນນີ້ ຈັກນຶກເລື້ອງນັ້ນໃນລຳດັບຈິດນີ້ດ້ວຍວິທີທີ່ໄດ້ຕັ້ງມະໂນສັງຂານໄວ້" ຍ້ອນວ່າເຮົາພ່ຳສອນຢູ່ແນວນີ້ວ່າ "ຈົ່ງນຶກແນວນີ້ ຢ່າໄດ້ນຶກແນວນີ້ ຈົ່ງມະນະສິການແນວນີ້ ຢ່າໄດ້ມະນະສິການແນວນີ້ ຈົ່ງລະທຳນີ້ຈົ່ງບັນລຸທຳນີ້ຢູ່"

ສັງຄາຣະວະພາມທູນຖາມວ່າ "ຂ້າແດ່ ທ່ານພຣະໂຄດົມ ນອກຈາກທ່ານພຣະໂຄດົມ ພິກຂຸອື່ນແມ່ນອົງດຽວຜູ້ພຽບພ້ອມດ້ວຍປາຕິຫານ ໓ ຢ່າງນີ້ມີຢູ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ບໍ່ແມ່ນພຽງໜຶ່ງຮ້ອຍ ບໍ່ແມ່ນສອງຮ້ອຍ ບໍ່ແມ່ນສາມຮ້ອຍ ບໍ່ແມ່ນສີ່ຮ້ອຍ ບໍ່ແມ່ນຫ້າຮ້ອຍ ແທ້ທີ່ຈິງ ພິກຂຸຜູ້ປະກອບດ້ວຍປາຕິຫານ ໓ ຢ່າງນີ້ມີຢູ່ຈຳນວນຫຼາຍ"

ສັງຄາຣະວະພາມທູນຖາມວ່າ "ຂ້າແດ່ ທ່ານພຣະໂຄດົມ ກໍບັດນີ້ພິກຂຸເຫຼົ່ານັ້ນ ຢູ່ໃສ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ທ່ານເຫຼົ່ານັ້ນ ຢູ່ໃນໝູ່ພິກຂຸນີ້ເອງ"

ສັງຄາຣະວະພາມຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸບາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ສັງຄາຣະວະສູດທີ ໑໐ ຈົບ**

**ພາມມະນະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

# ໔. ມະຫາວັກ

## ໝວດວ່າດ້ວຍເລື້ອງໃຫຍ່

## ໑. ຕິດຖາຍະຕະນະສູດ

### ວ່າດ້ວຍບ່ອນເກີດແຫ່ງທິດຖິເປັນຄືທ່າ

[໖໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບ່ອນເກີດແຫ່ງທິດຖິເປັນຄືທ່າ ໓ ປະການ ເຊິ່ງເມື່ອຖືກບັນດິດໄຕ່ຖາມຊັກໄຊ້ໄລ່ລຽງເຂົ້າ ກໍອ້າງການຖືສືບ ໆ ກັນມາ ຢືນຢັນຢູ່ໃນຫຼັກອະກິຣິຍະວາທະ

ບ່ອນເກີດແຫ່ງທິດຖິເປັນຄືທ່າ ໓ ປະການ ອັນໃດແດ່ ຄື

໑. ສະມະນະພາມພວກໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນ ແຕ່ມີກຳທີ່ເຮັດໄວ້ໃນປາງກ່ອນເປັນເຫດ"

໒. ສະມະນະພາມພວກໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນແຕ່ມີການເນຣະມິດຂອງພຣະເປັນເຈົ້າຜູ້ຍິ່ງໃຫຍ່ເປັນເຫດ"

໓. ສະມະນະພາມພວກໜຶ່ງ ມີວາທະແນວ ນີ້ມີທິດຖິແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກ ທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນແຕ່ບໍ່ມີເຫດບໍ່ມີປັດໄຈ"

ບັນດາສະມະນະພາມທັງ ໓ ຈຳພວກນັ້ນ ສະມະນະພາມພວກໃດມີວາທະແນວນີ້ມີທິດຖິແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນມີກຳທີ່ເຮັດໄວ້ໃນປາງກ່ອນເປັນເຫດ" ເຮົາເຂົ້າໄປຫາສະມະນະພາມພວກນັ້ນ ກ່າວແນວນີ້ວ່າ "ຮູ້ມາວ່າ ແມ່ນບໍ? ທີ່ທ່ານທັງຫຼາຍມີວາທະແນວນີ້ມີທິດຖິແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນແຕ່ມີກຳທີ່ເຮັດໄວ້ໃນປາງກ່ອນເປັນເຫດ" ຖ້າສະມະນະພາມເຫຼົ່ານັ້ນ ຖືກເຮົາຖາມແນວນີ້ຍອມຮັບວ່າ "ຈິງ" ເຮົາຈະກ່າວກັບທ່ານເຫຼົ່ານັ້ນດັ່ງນີ້ວ່າ "ຖ້າເປັນແນວນັ້ນ ຍ້ອນກຳທີ່ເຮັດໄວ້ໃນປາງກ່ອນເປັນເຫດ ທ່ານທັງຫຼາຍ ກໍຈັກເປັນຄົນຂ້າສັດ ລັກຊັບ ປະພຶດຜິດພົມມະຈັນ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ຫຼາຍດ້ວຍອະພິດຊາ (ເພ່ງເລັງຢາກໄດ້ຂອງເຂົາ) ມີຈິດພະຍາບາດ ແລະເປັນມິດສາທິດຖິ"

ອັນໜຶ່ງ ເມື່ອບຸກຄົນຍຶດຖືກຳທີ່ເຮັດໄວ້ໃນປາງກ່ອນໂດຍຄວາມເປັນແກ່ນສານຍ່ອມບໍ່ມີຄວາມພໍໃຈ ຫຼື ຄວາມພະຍາຍາມວ່າ "ສິ່ງນີ້ຄວນເຮັດ ຫຼື ສິ່ງນີ້ບໍ່ຄວນເຮັດ" ກໍເມື່ອບໍ່ໄດ້ກະທຳກິດ ແລະອະກະຣະນີຍະກິດໂດຍຈິງຈັງໝັ້ນຄົງ ດັ່ງກ່າວມານີ້ສະມະນະວາທະທີ່ເປັນທຳ ເປັນຂອງສະເພາະໂຕ ຍ່ອມບໍ່ມີແກ່ບຸກຄົນຜູ້ມີສະຕິຟັ່ນເຟືອນ ບໍ່ມີເຄື່ອງປ້ອງກັນ ນີ້ແລເປັນ ວາທະທີ ໑ ສຳລັບຂົ່ມໂດຍຖືກຕ້ອງຕາມທຳຂອງເຮົາຕໍ່ສະມະນະພາມເຫຼົ່ານັ້ນ ຜູ້ມີວາທະແນວນັ້ນ ມີທິດຖິແນວນັ້ນ (໑)

ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມພວກໃດມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນແຕ່ມີການເນຣະມິດຂອງພຣະຜູ້ເປັນເຈົ້າຜູ້ຍິ່ງໃຫຍ່ເປັນເຫດ" ເຮົາເຂົ້າໄປຫາສະມະນະພາມພວກນັ້ນ ກ່າວແນວນີ້ວ່າ "ຮູ້ມາວ່າແມ່ນບໍ? ທີ່ທ່ານທັງຫຼາຍມີວາທະແນວນີ້ມີທິດຖິ ແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນແຕ່ມີການເນຣະມິດຂອງພຣະຜູ້ເປັນເຈົ້າຜູ້ຍິ່ງໃຫຍ່ເປັນເຫດ" ຖ້າສະມະນະພາມເຫຼົ່ານັ້ນ ຖືກເຮົາຖາມແນວນີ້ຍອມຮັບວ່າ "ຈິງ" ເຮົາກໍຈະກ່າວກັບທ່ານເຫຼົ່ານັ້ນແນວນີ້ວ່າ "ຖ້າເປັນແນວນັ້ນ ຍ້ອນການເນຣະມິດຂອງພຣະຜູ້ເປັນເຈົ້າຜູ້ຍິ່ງໃຫຍ່ເປັນເຫດ ທ່ານທັງຫຼາຍກໍຈັກເປັນຄົນຂ້າສັດ ໗ລ໗ ແລະເປັນມິດສາທິດຖິ"

ອັນໜຶ່ງ ເມື່ອບຸກຄົນຍຶດຖືການເນຣະມິດຂອງພຣະຜູ້ເປັນເຈົ້າຜູ້ຍິ່ງໃຫຍ່ໂດຍຄວາມເປັນແກ່ນສານຍ່ອມບໍ່ມີຄວາມພໍໃຈ ຫຼື ຄວາມພະຍາຍາມວ່າ "ສິ່ງນີ້ຄວນເຮັດ ຫຼືສິ່ງນີ້ບໍ່ຄວນເຮັດ" ກໍເມື່ອບໍ່ໄດ້ກະທຳກິດ ແລະອະກະຣະນີຍະກິດໂດຍຈິງຈັງໝັ້ນຄົງ ດັ່ງກ່າວມານີ້ສະມະນະວາທະທີ່ຖືກຕ້ອງຕາມທຳ ເປັນຂອງສະເພາະໂຕ ຍ່ອມບໍ່ມີແກ່ບຸກຄົນຜູ້ມີສະຕິຟັ່ນເຟືອນ ບໍ່ມີເຄື່ອງປ້ອງກັນ ນີ້ແລ ເປັນວາທະທີ ໒ ສຳລັບຂົ່ມໂດຍຖືກຕ້ອງຕາມທຳຂອງເຮົາຕໍ່ສະມະນະພາມເຫຼົ່ານັ້ນ ຜູ້ມີວາທະແນວນີ້ມີທິດຖິແນວນີ້ (໒)

ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມພວກໃດມີວາທະແນວນີ້ມີທິດຖິແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກ ທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນບໍ່ມີເຫດ ບໍ່ມີປັດໄຈ" ເຮົາເຂົ້າໄປຫາສະມະນະພາມພວກນັ້ນ ກ່າວແນວນີ້ວ່າ "ຮູ້ມາວ່າ ແມ່ນບໍ? ທີ່ທ່ານທັງຫຼາຍມີວາທະແນວນີ້ມີທິດຖິແນວນີ້ວ່າ "ສຸກ ທຸກ ບໍ່ທຸກ ບໍ່ສຸກ ທີ່ບຸຣຸດບຸກຄົນນີ້ສະເຫວີຍ ທັງໝົດລ້ວນບໍ່ມີເຫດ ບໍ່ມີປັດໄຈ" ຖ້າທ່ານເຫຼົ່ານັ້ນຖືກເຮົາຖາມ ແນວນີ້ຍອມຮັບວ່າ "ຈິງ" ເຮົາກໍຈະກ່າວກັບທ່ານເຫຼົ່ານັ້ນແນວນີ້ວ່າ "ຖ້າເປັນແນວນັ້ນ ຍ້ອນບໍ່ມີເຫດ ບໍ່ມີປັດໄຈ ທ່ານທັງຫຼາຍຈັກເປັນຄົນຂ້າສັດ ໗ລ໗ ແລະເປັນມິດສາທິດຖິ"

ອັນໜຶ່ງ ເມື່ອບຸກຄົນຍຶດຖືຄວາມບໍ່ມີເຫດໂດຍຄວາມເປັນແກ່ນສານຍ່ອມບໍ່ມີຄວາມພໍໃຈ ຫຼືຄວາມພະຍາຍາມວ່າ "ສິ່ງນີ້ຄວນເຮັດ ຫຼືສິ່ງນີ້ບໍ່ຄວນເຮັດ" ກໍເມື່ອບໍ່ໄດ້ກະທຳກິດແລະອະ

ກະຣະນີຍະກິດໂດຍຈິງຈັງໝັ້ນຄົງ ດັ່ງກ່າວມານີ້ສະມະນະວາທະທີ່ຖືກຕ້ອງຕາມທຳ ເປັນຂອງສະເພາະໂຕຍ່ອມບໍ່ມີແກ່ບຸກຄົນຜູ້ມີສະຕິຟັ່ນເຟືອນ ບໍ່ມີເຄື່ອງປ້ອງກັນ ນີ້ແລ ເປັນວາທະທີ ໓ ສຳລັບຂົ້ມໂດຍຖືກຕ້ອງ ຕາມທຳຂອງເຮົາຕໍ່ສະມະນະພາມເຫຼົ່ານັ້ນ ຜູ້ມີວາທະແນວນີ້ມີທິດຖິແນວນີ້ (໓)

ພິກຂຸທັງຫຼາຍ ບ່ອນເກີດແຫ່ງທິດຖິເປັນຄືທ່າ ໓ ປະການ ເຊິ່ງເມື່ອຖືກບັນດິດໄຕ່ຖາມຊັກໄຊ້ໄລ່ລຽງເຂົ້າ ກໍອ້າງການຖືສືບ ໆ ກັນມາ ຍືນຍັນຢູ່ໃນຫຼັກອະກິຣິຍະວາທະ

ສ່ວນທຳທີ່ເຮົາສະແດງໄວ້ນີ້ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ

ທຳທີ່ເຮົາສະແດງໄວ້ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ເປັນແນວໃດ?

ຄື (໑) ທຳທີ່ເຮົາສະແດງໄວ້ວ່າ “ທາດ ໖ ປະການນີ້” ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ

(໒) ທຳທີ່ເຮົາສະແດງໄວ້ວ່າ “ຜັດສາຍະຕະນະ ໖ ປະການນີ້” ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ

(໓) ທຳທີ່ເຮົາສະແດງໄວ້ວ່າ “ມະໂນປະວິຈານ ໑໘ ປະການນີ້” ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ

(໔) ທຳທີ່ເຮົາສະແດງໄວ້ວ່າ “ອະຣິຍະສັດ ໔ ປະການນີ້” ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ ທຳທີ່ເຮົາສະແດງໄວ້ວ່າ “ທາດ ໖ ປະການນີ້” ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ຍ້ອນອາໄສອັນໃດເຮົາຈິ່ງກ່າວໄວ້ເຊັ່ນນັ້ນ ທາດ ໖ ປະການນີ້ຄື ປະຖະວີທາດ (ທາດດິນ) ອາໂປທາດ (ທາດນ້ຳ) ເຕໂຊທາດ (ທາດໄຟ) ວາໂຍທາດ (ທາດລົມ) ອາກາສະທາດ (ທາດອາກາດ) ວິນຍານະທາດ (ທາດວິນຍານ) ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ ທຳທີ່ເຮົາສະແດງໄວ້ວ່າ “ທາດ ໖ ປະການນີ້” ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ເຮົາຈິ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ ທຳທີ່ເຮົາສະແດງໄວ້ວ່າ “ຜັດສາຍະຕະນະ ໖ ປະການນີ້” ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ຍ້ອນອາໄສອັນໃດເຮົາຈິ່ງກ່າວໄວ້ເຊັ່ນນັ້ນ ຜັດສາຍະຕະນະ ໖ ປະການນີ້ຄື ຈັກຂຸ (ຕາ) ໂສຕະ (ຫູ) ຄາ

ນະ (ດັງ) ຊິວຫາ (ລີ້ນ) ກາຍະ (ກາຍ) ມະໂນ (ໃຈ) ຍ້ອນອາໄສຄໍາທີ່ເຮົາກ່າວໄວ້ວ່າ ທໍາທີ່ເຮົາສະແດງໄວ້ວ່າ "ຜັດສາຍະຕະນະ ໖ ປະການນີ້" ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕໍາໜິສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ ທໍາທີ່ເຮົາສະແດງໄວ້ວ່າ "ມະໂນປະວິຈານ ໑໘ ປະການນີ້" ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕໍາໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ຍ້ອນອາໄສອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຍ້ອນບຸກຄົນເຫັນຮູບດ້ວຍຕາແລ້ວ ຍ່ອມເຂົ້າໄປຮິ່ນຕອງຮູບອັນເປັນບ່ອນຕັ້ງແຫ່ງໂສມະນັດ ເຂົ້າໄປຮິ່ນຕອງຮູບອັນເປັນບ່ອນຕັ້ງແຫ່ງໂທມະນັດ ເຂົ້າໄປຮິ່ນຕອງຮູບອັນເປັນບ່ອນຕັ້ງແຫ່ງອຸເປກຂາ ບຸກຄົນຟັງສຽງດ້ວຍຫູແລ້ວ ຯລຯ ດົມກິ່ນດ້ວຍດັງແລ້ວ ຯລຯ ຊີມຣົດດ້ວຍລີ້ນແລ້ວ ຯລຯ ຖືກຕ້ອງໂຜດຖັບພະດ້ວຍກາຍແລ້ວ ຯລຯ ຮູ້ແຈ້ງທໍາມາຣົມດ້ວຍໃຈແລ້ວ ຍ່ອມເຂົ້າໄປຮິ່ນຕອງທໍາອັນເປັນບ່ອນຕັ້ງແຫ່ງໂສມະນັດ ເຂົ້າໄປຮິ່ນຕອງທໍາອັນເປັນບ່ອນຕັ້ງແຫ່ງໂທມະນັດ ເຂົ້າໄປຮິ່ນຕອງທໍາອັນເປັນບ່ອນຕັ້ງແຫ່ງອຸເປກຂາ ຍ້ອນອາໄສຄໍາທີ່ເຮົາກ່າວໄວ້ວ່າ ທໍາທີ່ເຮົາສະແດງວ່າ "ມະໂນປະວິຈານ ໑໘ ປະການນີ້" ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕໍາໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ອັນໜຶ່ງ ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ ທໍາທີ່ເຮົາສະແດງໄວ້ວ່າ "ອະຣິຍະສັດ ໔ ປະການນີ້" ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕໍາໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຍ້ອນຖືໝັ້ນທາດ ໖ ປະການ ສັດຈຶ່ງກ້າວລົງສູ່ທ້ອງ ເມື່ອມີການກ້າວລົງສູ່ທ້ອງ ນາມຮູບຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະ ຈຶ່ງມີ ຍ້ອນສະລາຍະຕະນະເປັນ ປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ກໍເຮົາບັນຍັດໄວ້ວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ແລະນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ແກ່ບຸກຄົນຜູ້ສະເຫວີຍອາລົມຢູ່

ທຸກຂະອະຣິຍະສັດ ເປັນແນວໃດ?

ຄື ແມ່ນຊາດ (ຄວາມເກີດ) ກໍເປັນທຸກ ແມ່ນຊະຣາ (ຄວາມແກ່) ກໍເປັນທຸກ ແມ່ນມໍລະນະ (ຄວາມຕາຍ) ກໍເປັນທຸກ ແມ່ນໂສກະ (ຄວາມໂສກ) ແມ່ນປະຣິເທວະ (ຄວາມຮໍ່າໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ກໍເປັນທຸກ ຄວາມປະສົບກັບສິ່ງທີ່ບໍ່ເປັນທີ່ຮັກກໍເປັນທຸກ ຄວາມພັດພາກຈາກສິ່ງອັນເປັນທີ່ຮັກກໍເປັນທຸກ ປາຖະໜາສິ່ງໃດບໍ່ໄດ້ສິ່ງນັ້ນກໍເປັນທຸກ ໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ ນີ້ຮຽກວ່າ ທຸກຂະອະຣິຍະສັດ

ທຸກຂະສະມຸໄທອະຣິຍະສັດ ເປັນແນວໃດ?

ຄື ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຣູບຈຶ່ງມີ
ຍ້ອນນາມຣູບເປັນປັດໄຈ ສະລາຍະຕະນະຈຶ່ງມີ
ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ

ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຈຶ່ງມີ ກອງທຸກທັງມວນນີ້ມີຄວາມເກີດຂຶ້ນດ້ວຍອາການແນວນີ້

ນີ້ຮຽກວ່າ ທຸກຂະສະມຸໄທອະຣິຍະສັດ

ທຸກຂະນິໂຣທະອະຣິຍະສັດ ເປັນແນວໃດ?

ຄື ຍ້ອນອະວິດຊາຄາຍດັບໄປ ສັງຂານຈຶ່ງດັບ
ຍ້ອນສັງຂານດັບ ວິນຍານຈຶ່ງດັບ
ຍ້ອນວິນຍານດັບ ນາມຣູບຈຶ່ງດັບ
ຍ້ອນນາມຣູບດັບ ສະລາຍະຕະນະຈຶ່ງດັບ
ຍ້ອນສະລາຍະຕະນະດັບ ຜັດສະຈຶ່ງດັບ
ຍ້ອນຜັດສະດັບ ເວທະນາຈຶ່ງດັບ
ຍ້ອນເວທະນາດັບ ຕັນຫາຈຶ່ງດັບ
ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ
ຍ້ອນອຸປາທານດັບ ພົບຈຶ່ງດັບ
ຍ້ອນພົບດັບ ຊາດຈຶ່ງດັບ

ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຈຶ່ງດັບກອງທຸກທັງມວນນີ້ຍ່ອມມີຄວາມດັບດ້ວຍອາການແນວນີ້

ນີ້ຮຽກວ່າ ທຸກຂະນິໂຣທະອະຣິຍະສັດ

ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ໄດ້ແກ່

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໔. ສຳມາສັງກັບປະ | (ຄິດຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ ທຳທີ່ເຮົາສະແດງໄວ້ວ່າ “ອະຣິຍະສັດ ໔ ປະການນີ້” ໃຜ ໆ ຂົ່ມບໍ່ໄດ້ ບໍ່ມົວໝອງ ບໍ່ຖືກຕຳໜິ ບໍ່ຖືກສະມະນະພາມຜູ້ຮູ້ແຈ້ງຄັດຄ້ານ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ຕິດຖາຍະຕະນະສູດ ທີ ໑ ຈົບ**

## ໔. ພະຍະສູດ

## ວ່າດ້ວຍໄພ

[໖໓] ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບຍ່ອມຮຽກໄພ ໓ ຢ່າງນີ້ວ່າ “ອະມາຕາປຸດຕິກະໄພ”

ໄພ ໓ ຢ່າງ ອັນໃດແດ່ ຄື

໑. ສະໄໝທີ່ເກີດໄຟໄໝ້ໃຫຍ່ມີຢູ່ ເມື່ອເກີດໄຟໄໝ້ໃຫຍ່ແລ້ວ ແມ່ນໝູ່ບ້ານກໍຖືກໄຟເຜົາ ເຂດກໍຖືກໄຟເຜົາ ເມືອງກໍຖືກໄຟເຜົາ ເມື່ອໝູ່ບ້ານຖືກໄຟເຜົາຢູ່ ເມື່ອເຂດຖືກໄຟເຜົາຢູ່ ເມື່ອເມືອງຖືກໄຟເຜົາຢູ່ ໃນບ່ອນນັ້ນ ແມ່ນມານດາກໍບໍ່ໄດ້ພົບບຸດ ແມ່ນບຸດກໍບໍ່ໄດ້ພົບມານດາ ປຸຖຸຊົນຜູ້ບໍ່ໄດ້ສະດັບຮຽກໄພທີ ໑ ນີ້ວ່າ “ອະມາຕາປຸດຕິກະໄພ”

໔. ສະໄໝທີ່ມະຫາເມກຕັ້ງເຄົ້າມີຢູ່ ເມື່ອມະຫາເມກຕັ້ງເຄົ້າຂຶ້ນແລ້ວ ຝົນຕົກລົງມາ ຍ່ອມເກີດແມ່ນ້ຳໃຫຍ່ ເມື່ອເກີດແມ່ນ້ຳໃຫຍ່ແລ້ວ ແມ່ນໝູ່ບ້ານກໍຖືກນ້ຳພັດໄປ ເຂດກໍຖືກນ້ຳພັດໄປ ເມືອງກໍຖືກນ້ຳພັດໄປ ເມື່ອໝູ່ບ້ານຖືກນ້ຳພັດໄປຢູ່ ເມື່ອເຂດຖືກນ້ຳພັດໄປຢູ່ ເມື່ອເມືອງຖືກນ້ຳພັດໄປຢູ່ ໃນບ່ອນນັ້ນ ແມ່ນມານດາ ກໍບໍ່ໄດ້ພົບບຸດ ແມ່ນບຸດກໍບໍ່ໄດ້ພົບມານດາ ປຸຖຸຊົນຜູ້ບໍ່ໄດ້ສະດັບຮຽກໄພທີ ໔ ນີ້ວ່າ “ອະມາຕາປຸດຕິກະໄພ”

໙. ສະໄໝທີ່ໄພຄີໂຈນປ່າປຸ້ນສະດົມ ພວກຊາວບ້ານຕ່າງພາກັນຂຶ້ນຍານໜີໄປມີຢູ່ເມື່ອມີໄພຄີໂຈນປ່າປຸ້ນສະດົມ ເມື່ອຊາວບ້ານພາກັນຂຶ້ນຍານໜີໄປໃນບ່ອນນັ້ນ ແມ່ນມານດາກໍບໍ່ໄດ້ພົບບຸດ ແມ່ນບຸດກໍບໍ່ໄດ້ພົບມານດາ ປຸຖຸຊົນຜູ້ບໍ່ໄດ້ສະດັບຮຽກໄພທີ ໙ ນີ້ວ່າ “ອະມາຕາປຸດຕິກະໄພ”

ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບຍ່ອມຮຽກອະມາຕາປຸດຕິກະໄພທັງ ໙ ຢ່າງນີ້ ວ່າ “ອະມາຕາປຸດຕິກະໄພ” ແຕ່ປຸຖຸຊົນຜູ້ບໍ່ໄດ້ສະດັບຮຽກສະມາຕາປຸດຕິກະໄພທັງ ໙ ຢ່າງນີ້ວ່າ “ອະມາຕາປຸດຕິກະໄພ”

ສະມາຕາປຸດຕິກະໄພ ໙ ຢ່າງ ອັນໃດແດ່ ຄື

໑. ສະໄໝທີ່ເກີດໄຟໄໝ້ໃຫຍ່ມີຢູ່ ເມື່ອເກີດໄຟໄໝ້ໃຫຍ່ແລ້ວ ແມ່ນໝູ່ບ້ານກໍຖືກໄຟເຜົາ ເຂດກໍຖືກໄຟເຜົາ ເມືອງກໍຖືກໄຟເຜົາ ເມື່ອໝູ່ບ້ານຖືກໄຟເຜົາຢູ່ ເມື່ອເຂດຖືກໄຟເຜົາຢູ່ ເມື່ອເມືອງຖືກໄຟນັ້ນເຜົາຢູ່ ສະໄໝທີ່ມານດາໄດ້ພົບບຸດແມ່ນບຸດກໍໄດ້ພົບມານດາ ເປັນລາງເທື່ອບາງເວລາມີຢູ່ ປຸຖຸຊົນຜູ້ບໍ່ໄດ້ສະດັບຮຽກສະມາຕາປຸດຕິກະໄພທີ ໑ ນີ້ ວ່າ “ອະມາຕາປຸດຕິກະໄພ”

໒. ສະໄໝທີ່ມະຫາເມກຕັ້ງເຄົ້າຂຶ້ນມີຢູ່ ເມື່ອມະຫາເມກຕັ້ງເຄົ້າຂຶ້ນແລ້ວ ຝົນຕົກລົງມາ ຍ່ອມເກີດແມ່ນ້ຳໃຫຍ່ ເມື່ອເກີດແມ່ນ້ຳໃຫຍ່ແລ້ວ ແມ່ນໝູ່ບ້ານກໍຖືກນ້ຳພັດໄປ ເຂດກໍຖືກນ້ຳພັດໄປ ເມືອງກໍຖືກນ້ຳພັດໄປ ເມື່ອໝູ່ບ້ານຖືກນ້ຳພັດໄປຢູ່ ເມື່ອເຂດຖືກນ້ຳພັດໄປຢູ່ ເມື່ອເມືອງຖືກນ້ຳພັດໄປຢູ່ ສະໄໝທີ່ມານດາໄດ້ພົບບຸດ ແມ່ນບຸດກໍໄດ້ພົບມານດາເປັນລາງເທື່ອບາງເວລາມີຢູ່ ປຸຖຸຊົນຜູ້ບໍ່ໄດ້ ສະດັບຮຽກສະມາຕາປຸດຕິກະໄພທີ ໒ ນີ້ ວ່າ “ອະມາຕາປຸດຕິກະໄພ”

໙. ສະໄໝທີ່ໄພຄີໂຈນປ່າປຸ້ນສະດົມ ພວກຊາວບ້ານຕ່າງພາກັນຂຶ້ນຍານໜີໄປມີຢູ່ ເມື່ອໄພຄີໂຈນປ່າປຸ້ນສະດົມ ເມື່ອຊາວບ້ານຕ່າງພາກັນຂຶ້ນຍານໜີໄປມີຢູ່ສະໄໝທີ່ມານດາໄດ້ພົບບຸດ ແມ່ນບຸດກໍໄດ້ພົບມານດາເປັນລາງເທື່ອບາງເວລາມີຢູ່ ປຸຖຸຊົນຜູ້ບໍ່ໄດ້ສະດັບຮຽກສະມາຕາປຸດຕິກະໄພທີ ໙ ນີ້ວ່າ “ອະມາຕາປຸດຕິກະໄພ”

ປຸຖຸຊົນຜູ້ບໍ່ໄດ້ສະດັບຮຽກສະມາຕາປຸດຕິກະໄພ ໙ ຢ່າງນີ້ວ່າ “ອະມາຕາປຸດຕິກະໄພ”

ພິກຂຸທັງຫຼາຍ ອະມາຕາປຸດຕິກະໄພ ໙ ຢ່າງນີ້

ອະມາຕາປຸດຕິກະໄພ ໙ ຢ່າງ ອັນໃດແດ່ ຄື

໑. ຊະຣາໄພ (ໄພທີ່ເກີດຂຶ້ນຍ້ອນຄວາມແກ່)
໔. ພະຍາທິໄພ (ໄພທີ່ເກີດຂຶ້ນຍ້ອນຄວາມເຈັບ)
໓. ມໍຣະນະໄພ (ໄພທີ່ເກີດຂຶ້ນຍ້ອນຄວາມຕາຍ)

ເມື່ອບຸດແກ່ ມານດາຍ່ອມບໍ່ໄດ້ດັ່ງໃຈຫວັງແນວນີ້ວ່າ "ເຮົາຈົ່ງແກ່ ບຸດຂອງເຮົາຢ່າໄດ້ແກ່" ຫຼືເມື່ອມານດາແກ່ ບຸດຍ່ອມບໍ່ໄດ້ດັ່ງໃຈຫວັງແນວນີ້ວ່າ "ເຮົາຈົ່ງແກ່ ມານດາຂອງເຮົາຢ່າໄດ້ແກ່"

ເມື່ອບຸດເຈັບໄຂ້ ມານດາຍ່ອມບໍ່ໄດ້ດັ່ງໃຈຫວັງແນວນີ້ວ່າ "ເຮົາຈົ່ງເຈັບໄຂ້ ບຸດຂອງເຮົາຢ່າໄດ້ເຈັບໄຂ້" ຫຼືເມື່ອມານດາເຈັບໄຂ້ ບຸດຍ່ອມບໍ່ໄດ້ດັ່ງໃຈຫວັງແນວນີ້ວ່າ "ເຮົາຈົ່ງເຈັບໄຂ້ ມານດາຂອງເຮົາຢ່າໄດ້ເຈັບໄຂ້"

ເມື່ອບຸດກຳລັງຈະຕາຍ ມານດາຍ່ອມບໍ່ໄດ້ດັ່ງໃຈຫວັງແນວນີ້ວ່າ "ເຮົາຈົ່ງຕາຍ ບຸດຂອງເຮົາຢ່າໄດ້ຕາຍ" ຫຼື ເມື່ອມານດາກຳລັງຈະຕາຍ ບຸດຍ່ອມບໍ່ໄດ້ດັ່ງໃຈຫວັງແນວນີ້ວ່າ "ເຮົາຈົ່ງຕາຍ ມານດາຂອງເຮົາຢ່າໄດ້ຕາຍ"

ອະມາຕາປຸດຕິກະໄພ ໓ ຢ່າງນີ້ແລ

ມັກປະຕິປະທາທີ່ເປັນໄປເພື່ອລະ ເພື່ອກ້າວລ່ວງສະມາຕາປຸດຕິກະໄພ ໓ ຢ່າງນີ້ ແລະອະມາຕາປຸດຕິກະໄພ ໓ ຢ່າງນີ້ມີຢູ່

ມັກປະຕິປະທາ ເປັນແນວໃດ?
ຄື ອະຣິຍະມັກມີອົງ ໘ ນີ້ໄດ້ແກ່

໑. ສຳມາທິດຖິ ໔. ສຳມາສັງກັບປະ
໓. ສຳມາວາຈາ ໔. ສຳມາກຳມັນຕະ
໕. ສຳມາອາຊີວະ ໖. ສຳມາວາຍາມະ
໗. ສຳມາສະຕິ ໘. ສຳມາສະມາທິ

ຍ່ອມເປັນໄປເພື່ອລະ ເພື່ອກ້າວລ່ວງສະມາຕາປຸດຕິກະໄພ ໓ ຢ່າງນີ້ ແລະອະມາຕາປຸດຕິກະໄພ ໓ ຢ່າງນີ້

ພິກຂຸທັງຫຼາຍ ມັກປະຕິປະທານີ້ແລ ຍ່ອມເປັນໄປເພື່ອລະ ເພື່ອກ້າວລ່ວງສະມາຕາປຸດຕິກະໄພ ໓ ຢ່າງນີ້ແລະອະມາຕາປຸດຕິກະໄພ ໓ ຢ່າງນີ້

**ພະຍະສູດ ທີ ໔ ຈົບ**

# ៧. ເວນາຄະປຸຣະສູດ

## ວ່າດ້ວຍໝູ່ບ້ານພາມຊື່ເວນາຄະປຸຣະ

[໗໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນພ້ອມກັບພິກຂຸໝູ່ໃຫຍ່ ສະເດັດເຖິງໝູ່ບ້ານພາມຂອງຊາວໂກສົນຊື່ ເວນາຄະປຸຣະ ພາມແລະຄະຫະບໍດີຊາວເວນາຄະປຸຣະໄດ້ຮູ້ວ່າ "ທ່ານຜູ້ຈະເລີນທັງຫຼາຍ ໄດ້ຍິນຂ່າວວ່າ ພຣະສະມະນະໂຄດົມສາກະຍະບຸດສະເດັດອອກບວດຈາກສາກະຍະຕະກູນ ສະເດັດເຖິງເວນາຄະປຸຣະໂດຍລຳດັບແລ້ວ ທ່ານພຣະສະມະນະໂຄດົມນັ້ນມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດດ້ວຍພຣະອົງເອງແລ້ວ ຈຶ່ງຊົງປະກາດໃຫ້ຜູ້ອື່ນຮູ້ນຳ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນການໄດ້ພົບພຣະອະຣະຫັນແນວນີ້ເປັນຄວາມດີຢ່າງແທ້ຈິງ"

ຕໍ່ມາ ພາມແລະຄະຫະບໍດີຊາວເວນາຄະປຸຣະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ລາງພວກຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະນົມມືໄຫວ້ໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະກາດຊື່ແລະໂຄດແລ້ວນັ່ງຢູ່ບ່ອນສົມຄວນ ລາງພວກນັ່ງມິດຢູ່ບ່ອນທີ່ສົມຄວນ

ພາມວັດສະໂຄດຊາວເວນາຄະປຸຣະຜູ້ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ທ່ານພຣະໂຄດົມ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ອິນຊີຂອງທ່ານພຣະໂຄດົມຜ່ອງໃສຫຼາຍ ພຣະສະຫວີວັນບໍລິສຸດຜຸດຜ່ອງ ໝາກກະທັນສຸກທີ່ມີໃນສາຣະທະການ[១] ຍ່ອມບໍລິສຸດຜຸດຜ່ອງແມ່ນສັນໃດ ອິນຊີຂອງທ່ານພຣະໂຄດົມກໍຜ່ອງໃສຫຼາຍ ພຣະສະຫວີວັນກໍບໍລິສຸດຜຸດຜ່ອງ ຄືກັນສັນນັ້ນ ຂ້າແດ່ ທ່ານພຣະໂຄດົມ ໝາກຕານສຸກທີ່ຫຼົ່ນຈາກຂ້ວນຍ່ອມບໍລິສຸດຜຸດຜ່ອງ ແມ່ນສັນໃດ ອິນຊີຂອງທ່ານພຣະໂຄດົມກໍບໍລິສຸດຜຸດຜ່ອງ ພຣະສະຫວີວັນກໍບໍລິສຸດຜຸດ

ຜ່ອງຄືກັນສັນນັ້ນ ຄໍາແທ່ງຊົມພູນຸດ ທີ່ບຸດນາຍຊ່າງຄໍາຜູ້ຊ່ຽວຊານຫຼອມດີແລ້ວ ທີ່ນາຍຊ່າງຄໍາຜູ້ສະຫຼາດບຸດີແລ້ວ ວາງໄວ້ເທິງຜ້າກໍາພົນ ສ່ອງແສງເຫຼື້ອມ ສຸກສະຫວ່າງຢູ່ ແມ່ນສັນໃດ ອິນຊີຂອງທ່ານພຣະໂຄດົມກໍຜ່ອງໃສຫຼາຍ ພຣະສະຫວີວັນກໍບໍລິສຸດຜຸດຜ່ອງ ຄືກັນສັນນັ້ນ ບ່ອນນອນສູງແລະບ່ອນນອນໃຫຍ່ຄືຕຽງມີຕີນເກີນປະມານ ບັນລັງ ຜ້າໂກເຊົາ ເຄື່ອງປູລາດເຮັດດ້ວຍຂົນແກະວິຈິດດ້ວຍລວດລາຍ ເຄື່ອງປູລາດ ເຮັດດ້ວຍຂົນແກະສີຂາວ ເຄື່ອງປູລາດເຮັດດ້ວຍຂົນແກະລາຍດອກໄມ້ ເຄື່ອງປູລາດທີ່ຍັດນຸ່ນ ເຄື່ອງປູລາດຂົນແກະທີ່ວິຈິດດ້ວຍຮູບສັດຮ້າຍມີຣາດຊະສີແລະເສືອເປັນຕົ້ນ ເຄື່ອງປູລາດຂົນແກະມີຂົນຕັ້ງຂ້າງດຽວ ເຄື່ອງປູລາດຂົນແກະມີຂົນຕັ້ງສອງຂ້າງ ເຄື່ອງປູລາດໄໝຂີບຣັດຕະນະ ເຄື່ອງປູລາດໄໝ ເຄື່ອງປູລາດຂົນແກະທີ່ນາງລໍາ ໑໖ ນາງຢືນລໍາໄດ້ ເຄື່ອງປູລາດຫຼັງຊ້າງ ເຄື່ອງປູລາດຫຼັງມ້າ ເຄື່ອງປູລາດໃນລົດ ເຄື່ອງປູລາດເຮັດດ້ວຍໜັງເສືອດາວເຊິ່ງມີຂົນອ່ອນນຸ່ມ ເຄື່ອງປູລາດຢ່າງດີເຮັດດ້ວຍໜັງຊະມົດ ເຄື່ອງປູລາດຂ້າງເທິງມີເພດານ ເຄື່ອງປູລາດມີໝອນສີແດງວາງໄວ້ທັງ ໒ ຂ້າງ<sup>໑</sup>(ເຫຼົ່ານີ້) ທ່ານພຣະໂຄດົມໄດ້ບ່ອນນອນສູງແລະບ່ອນນອນໃຫຍ່ແນວນີ້ຕາມຄວາມປາຖະໜາໂດຍບໍ່ຍາກ ບໍ່ລໍາບາກແນ່ນອນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ບ່ອນນອນສູງແລະບ່ອນນອນໃຫຍ່ ຄືຕຽງມີຕີນເກີນປະມານ ໗ລ໗ ເຄື່ອງປູລາດມີໝອນຂ້າງ ຂອງເຫຼົ່ານັ້ນບັນພະຊິດຫາໄດ້ຍາກ ແລະໄດ້ມາແລ້ວກໍບໍ່ສົມຄວນ

ບ່ອນນອນສູງແລະບ່ອນນອນໃຫຍ່ ໓ ຢ່າງ ໃນປັດຈຸບັນນີ້ ທີ່ເຮົາໄດ້ຕາມຄວາມປາຖະໜາໂດຍບໍ່ຍາກ ບໍ່ລໍາບາກ

ບ່ອນນອນສູງ ແລະບ່ອນນອນໃຫຍ່ ໓ ຢ່າງ ອັນໃດແດ່ ຄື

໑. ບ່ອນນອນສູງແລະບ່ອນນອນໃຫຍ່ທີ່ເປັນຂອງທິບ
໒. ບ່ອນນອນສູງແລະບ່ອນນອນໃຫຍ່ທີ່ເປັນຂອງພົມ
໓. ບ່ອນນອນສູງແລະບ່ອນນອນໃຫຍ່ທີ່ເປັນຂອງພຣະອະຣິຍະ

ບ່ອນນອນສູງແລະບ່ອນນອນໃຫຍ່ ໓ ຢ່າງໃນປັດຈຸບັນນີ້ທີ່ເຮົາໄດ້ຕາມຄວາມປາຖະໜາໂດຍບໍ່ຍາກ ບໍ່ລໍາບາກ

ພາມວັດສະໂຄດທູນຖາມວ່າ ຂ້າແດ່ ທ່ານພຣະໂຄດົມ ກໍບ່ອນນອນສູງແລະບ່ອນນອນໃຫຍ່ທີ່ເປັນຂອງທິບ ທີ່ທ່ານພຣະໂຄດົມໄດ້ຕາມຄວາມປາຖະໜາ ໂດຍບໍ່ຍາກ ບໍ່ລໍາບາກໃນປັດຈຸບັນນີ້ເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມເຮົາອາໄສໝູ່ບ້ານ ຫຼື ເຂດໃດໃນໂລກນີ້ຢູ່ໃນເວລາເຊົ້າ ເຮົາຄອງອັນຕະຣະວາສົກ ຖືບາດຈີວອນ ເຂົ້າໄປສູ່ໝູ່ບ້ານຫຼືເຂດນັ້ນ ເພື່ອບິນທະບາດກັບຈາກບິນທະບາດ ຫຼັງຈາກສັນສຳເລັດແລ້ວເຂົ້າໄປສູ່ປ່າ ກວາດຫຍ້າຫຼືໃບໄມ້ທີ່ມີຢູ່ໃນບ່ອນນັ້ນລວມເປັນກອງແລ້ວນັ່ງຂັດສະມາທິ ຕັ້ງກາຍກົງດຳລົງສະຕິໄວ້ໝັ້ນ ສະຫງັດຈາກກາມແລະອະກຸສົນທຳແລ້ວ ບັນລຸປະຖົມຊານມີວິຕົກ ວິຈານ ປີຕິແລະສຸກເກີດແຕ່ວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ເຮົາບັນລຸທຸຕິຍະຊານມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກເກີດແຕ່ສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ເຮົາມີອຸເປກຂາມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ “ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ” ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ເຮົາບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ຖ້າເຮົານັ້ນຜູ້ເປັນແນວນີ້ຈົງກົມຢູ່ ໃນສະໄໝນັ້ນ ບ່ອນຈົງກົມຂອງເຮົານັ້ນຊື່ວ່າ ເປັນທິບຖ້າເຮົາຜູ້ເປັນແນວນີ້ຢືນຢູ່ ໃນສະໄໝນັ້ນບ່ອນຢືນຂອງເຮົານັ້ນ ຊື່ວ່າເປັນທິບ ຖ້າເຮົາຜູ້ເປັນແນວນີ້ນັ່ງຢູ່ ໃນສະໄໝນັ້ນບ່ອນນັ່ງຂອງເຮົານັ້ນຊື່ວ່າ ເປັນທິບ ຖ້າເຮົາຜູ້ເປັນແນວນີ້ນອນຢູ່ ໃນສະໄໝນັ້ນ ບ່ອນນອນສູງ ແລະບ່ອນນອນໃຫຍ່ຂອງເຮົານັ້ນຊື່ວ່າເປັນທິບ

ນັ້ນຄື ບ່ອນນອນສູງ ແລະບ່ອນນອນໃຫຍ່ທີ່ເປັນຂອງທິບ ທີ່ເຮົາໄດ້ຕາມຄວາມປາຖະໜາ ໂດຍບໍ່ຍາກ ບໍ່ລຳບາກໃນປັດຈຸບັນນີ້

ພາມວັດສະໂຄດຂາບທູນວ່າ ຂ້າແດ່ ທ່ານພຣະໂຄດົມ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດກໍໃຜອື່ນນອກຈາກທ່ານພຣະໂຄດົມຈັກໄດ້ບ່ອນນອນສູງ ແລະບ່ອນນອນໃຫຍ່ເປັນຂອງທິບຕາມຄວາມປາຖະໜາໂດຍບໍ່ຍາກ ບໍ່ລຳບາກແນວນັ້ນ

ຂ້າແດ່ ທ່ານພຣະໂຄດົມ ບ່ອນນອນສູງແລະບ່ອນນອນໃຫຍ່ທີ່ເປັນຂອງພົມທີ່ທ່ານພຣະໂຄດົມໄດ້ຕາມຄວາມປາຖະໜາ ໂດຍບໍ່ຍາກ ບໍ່ລຳບາກ ໃນປັດຈຸບັນນີ້ເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ເຮົາອາໄສໝູ່ບ້ານຫຼືເຂດໃດໃນໂລກນີ້ຢູ່ໃນເວລາເຊົ້າ ເຮົາຄອງອັນຕະຣະວາສົກ ຖືບາດຈີວອນ ເຂົ້າໄປສູ່ໝູ່ບ້ານຫຼືເຂດນັ້ນແລ ເພື່ອບິນທະບາດກັບຈາກບິນທະບາດ ຫຼັງຈາກສັນສຳເລັດແລ້ວເຂົ້າໄປສູ່ປ່າ ກວາດຫຍ້າຫຼືໃບໄມ້ທີ່ມີຢູ່ໃນບ່ອນນັ້ນລວມເປັນກອງແລ້ວນັ່ງຂັດສະມາທິ ຕັ້ງກາຍກົງດຳລົງສະຕິໄວ້ໝັ້ນ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງລ່າງ ທິດ

ສູງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍອຸເປກຂາຈິດ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ພາມ ຖ້າເຮົາຜູ້ເປັນແນວນີ້ຈົງກົມຢູ່ ໃນສະໄໝນັ້ນບ່ອນຈົງກົມຂອງເຮົານັ້ນຊື່ວ່າເປັນ ຂອງພົມ ຖ້າເຮົາຜູ້ເປັນແນວນີ້ຍືນຢູ່ ໆລໆ ນັ່ງຢູ່ ໆລໆ ນອນຢູ່ ໃນສະໄໝນັ້ນ ບ່ອນນອນສູງ ແລະບ່ອນນອນໃຫຍ່ຂອງເຮົານັ້ນຊື່ວ່າ ເປັນຂອງພົມ

ນັ້ນຄືບ່ອນນອນສູງ ແລະບ່ອນນອນໃຫຍ່ທີ່ເປັນຂອງພົມ ທີ່ເຮົາໄດ້ຕາມຄວາມປາຖະໜາ ໂດຍບໍ່ຍາກ ບໍ່ລຳບາກ ໃນປັດຈຸບັນນີ້

ພາມວັດສະໂຄດຂາບທູນວ່າ ຂ້າແດ່ ທ່ານພຣະໂຄດົມ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ກໍໃຜອື່ນນອກຈາກທ່ານພຣະໂຄດົມຈັກໄດ້ບ່ອນນອນສູງ ແລະບ່ອນນອນໃຫຍ່ທີ່ເປັນຂອງພົມ ຕາມຄວາມປາຖະໜາໂດຍບໍ່ຍາກ ບໍ່ລຳບາກແນວນັ້ນ

ຂ້າແດ່ ທ່ານພຣະໂຄດົມ ບ່ອນນອນສູງແລະບ່ອນນອນໃຫຍ່ທີ່ເປັນຂອງອະຣິຍະທີ່ທ່ານ ພຣະໂຄດົມໄດ້ຕາມຄວາມປາຖະໜາ ໂດຍບໍ່ຍາກ ບໍ່ລຳບາກໃນປັດຈຸບັນນີ້ເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ເຮົາອາໄສໝູ່ບ້ານຫຼືເຂດໃດໃນໂລກນີ້ຢູ່ໃນ ເວລາເຊົ້າ ເຮົາຄອງອັນຕະຣະວາສົກ ຖືບາດຈີວອນ ເຂົ້າໄປສູ່ໝູ່ບ້ານຫຼືເຂດນັ້ນແລເພື່ອບິນທະ ບາດ ກັບຈາກບິນທະບາດ ຫຼັງຈາກສັນສຳເລັດແລ້ວເຂົ້າໄປສູ່ປ່າ ກວາດຫຍ້າ ຫຼືໃບໄມ້ທີ່ມີຢູ່ໃນ ບ່ອນນັ້ນລວມເຂົ້າເປັນກອງແລ້ວນັ່ງຂັດສະມາທິ ຕັ້ງກາຍກົງ ດຳລົງສະຕິໄວ້ໝັ້ນ ຮູ້ແຈ້ງແນວນີ້ ວ່າ ເຮົາລະຣາຄະ ໂທສະ ໂມຫະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກ ກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ພາມ ຖ້າເຮົາຜູ້ເປັນແນວນີ້ຈົງກົມຢູ່ ໃນສະໄໝນັ້ນບ່ອນຈົງກົມຂອງເຮົານັ້ນຊື່ວ່າ ເປັນ ຂອງອະຣິຍະ ຖ້າເຮົາຜູ້ເປັນແນວນີ້ຍືນຢູ່ ໆລໆ ນັ່ງຢູ່ ໆລໆ ນອນຢູ່ ໃນສະໄໝນັ້ນບ່ອນນອນ ສູງແລະບ່ອນນອນໃຫຍ່ຂອງເຮົານັ້ນຊື່ວ່າ ເປັນຂອງອະຣິຍະ

ນັ້ນຄື ບ່ອນນອນສູງແລະບ່ອນນອນໃຫຍ່ທີ່ເປັນຂອງອະຣິຍະ ທີ່ເຮົາໄດ້ຕາມຄວາມ ປາຖະໜາໂດຍບໍ່ຍາກ ບໍ່ລຳບາກໃນປັດຈຸບັນນີ້ເອງ

ພາມວັດສະໂຄດຂາບທູນວ່າ ຂ້າແດ່ ທ່ານພຣະໂຄດົມ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ກໍໃຜອື່ນນອກຈາກທ່ານພຣະໂຄດົມ ຈັກໄດ້ບ່ອນນອນສູງ ແລະບ່ອນນອນໃຫຍ່ທີ່ເປັນຂອງອະຣິ ຍະ ຕາມປາຖະໜາໂດຍບໍ່ຍາກ ບໍ່ລຳບາກແນວນັ້ນ

ຂ້າແດ່ ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດໂດຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ເວນາຄະປຸຣະສູດທີ ៣ ຈົບ**

# ໔. ສະຣະພະສູດ

## ວ່າດ້ວຍປະຣິພາຊົກຊື່ວ່າສະຣະພະ

[໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ກໍສະໄໝນັ້ນ ສະຣະພະປະຣິພາຊົກຜູ້ອອກໄປຈາກພຣະທຳວິໄນນີ້ບໍ່ດົນ ເຂົາກ່າວແນວນີ້ໃນໝູ່ຊົນທີ່ນະຄອນຣາດຊະຄຶແນວນີ້ວ່າ "ເຮົາຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດແລ້ວ ກໍຍ້ອນຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດ ເຮົາຈຶ່ງອອກມາ ຖ້າບໍ່ດັ່ງນັ້ນແລ້ວ ເຮົາຄົງບໍ່ອອກມາຈາກທຳວິໄນນັ້ນ"

ຄັ້ງນັ້ນ ໃນເວລາເຊົ້າ ພິກຂຸຈຳນວນຫຼາຍຄອງອັນຕະຣະວາສົກ ຖືບາດຈີວອນ ເຂົ້າໄປໃນເມືອງຣາດຊະຄຶເພື່ອບິນທະບາດ ພິກຂຸເຫຼົ່ານັ້ນ ໄດ້ຍິນສະຣະພະປະຣິພາຊົກກຳລັງກ່າວແນວນີ້ໃນໝູ່ຊົນທີ່ນະຄອນຣາດຊະຄຶແນວນີ້ວ່າ "ເຮົາຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດແລ້ວ ຍ້ອນຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດ ເຮົາຈຶ່ງອອກມາ ຖ້າບໍ່ດັ່ງນັ້ນແລ້ວ ເຮົາຄົງບໍ່ອອກມາຈາກທຳວິໄນນັ້ນ"

ເມື່ອຕໍ່ມາ ພິກຂຸເຫຼົ່ານັ້ນ ທ່ຽວບິນທະບາດໃນນະຄອນຣາດຊະຄຶ ກັບຈາກບິນທະບາດຫຼັງຈາກສັນສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ສະຣະພະປະຣິພາຊົກຜູ້ອອກໄປຈາກພຣະທຳວິໄນນີ້ໄດ້ບໍ່ດົນກ່າວໃນໝູ່ຊົນທີ່ນະຄອນຣາດຊະຄຶແນວນີ້ວ່າ "ເຮົາຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດກໍຍ້ອນຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດ ເຮົາຈຶ່ງອອກມາ ຖ້າບໍ່ດັ່ງນັ້ນແລ້ວ ເຮົາຄົງ

ບໍ່ອອກມາຈາກທຳວິໄນນັ້ນ" ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າສະເດັດໄປສູ່ອາຣາມຂອງປະຣິພາຊົກທີ່ແຄມຝັ່ງແມ່ນ້ຳສັບປິນິກາ ໄດ້ໂຜດອະນຸເຄາະສະເດັດໄປຫາສະຣະພະປະຣິພາຊົກແດ່ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບໂດຍດຸດສະນີພາບ

ຄັ້ງນັ້ນ ໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ສະເດັດໄປສູ່ອາຣາມປະຣິພາຊົກທີ່ແຄມຝັ່ງແມ່ນ້ຳສັບປິນິກາ ສະເດັດເຂົ້າໄປຫາສະຣະພະປະຣິພາຊົກຮອດບ່ອນຢູ່ແລ້ວປະທັບນັ່ງ ເທິງອາສະນະທີ່ປູໄວ້ ແລ້ວໄດ້ຕັດກັບສະຣະພະປະຣິພາຊົກດັ່ງນີ້ ວ່າ

"ສະຣະພະ ໄດ້ຂ່າວວ່າ ທ່ານກ່າວແນວນີ້ວ່າ "ເຮົາຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະ-ບຸດແລ້ວ ກໍຍ້ອນຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດ ເຮົາຈຶ່ງອອກມາ ຖ້າບໍ່ດັ່ງນັ້ນແລ້ວ ເຮົາຄົງບໍ່ອອກມາຈາກທຳວິໄນນັ້ນ" ແມ່ນແທ້ບໍ?"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສະຣະພະປະຣິພາຊົກໄດ້ມິດງຽບ

ແມ່ນເທື່ອທີ່ ໔ ໗ລ໗ ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບສະຣະພະປະຣິພາຊົກດັ່ງນີ້ວ່າ "(ສະຣະພະເຮົາເອງບັນຍັດທຳໄວ້ສຳລັບເຫຼົ່າສະມະນະສາກະຍະບຸດ) ສະຣະພະຈົ່ງກ່າວເທີ້ນ ທ່ານຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດວ່າແນວໃດ ຖ້າຄວາມຮູ້ຂອງທ່ານຍັງບໍ່ບໍລິບູນ ເຮົາຈັກຊ່ອຍເຮັດໃຫ້ບໍລິບູນ ແຕ່ຖ້າຄວາມຮູ້ຂອງທ່ານບໍລິບູນ ເຮົາຈັກພອຍຍິນດີນຳ"

ແມ່ນເທື່ອທີ ໓ ສະຣະພະປະຣິພາຊົກກໍຍັງມິດຢູ່

ລຳດັບນັ້ນ ປະຣິພາຊົກເຫຼົ່ານັ້ນ ໄດ້ກ່າວກັບສະຣະພະປະຣິພາຊົກດັ່ງນີ້ວ່າ "ທ່ານສະຣະພະ ພຣະສະມະນະໂຄດົມຈະປະວາຣະນາພຣະອົງເອງທຸກຄັ້ງທີ່ທ່ານຂໍ ທ່ານສະຣະພະ ຈົ່ງກ່າວເທີ້ນ ທ່ານຮູ້ທົ່ວເຖິງທຳຂອງເຫຼົ່າສະມະນະສາກະຍະບຸດວ່າແນວໃດ ຖ້າຄວາມຮູ້ຂອງທ່ານຍັງບໍ່ບໍລິບູນ ພຣະສະມະນະໂຄດົມຈັກຊ່ອຍເຮັດໃຫ້ບໍລິບູນ ແຕ່ຖ້າຄວາມຮູ້ຂອງທ່ານບໍລິບູນ ພຣະສະມະນະໂຄດົມຈັກພອຍຍິນດີນຳ"

ເມື່ອປະຣິພາຊົກເຫຼົ່ານັ້ນກ່າວແນວນີ້ແລ້ວ ສະຣະພະປະຣິພາຊົກມິດງຽບ ເກີ້ເຂີນ ນັ່ງຄໍຕົກ ກົ້ມໜ້າ ຈຸກເຈົ່າ ບໍ່ສາມາດຈະໂຕ້ຕອບໄດ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າເມື່ອຮູ້ວ່າສະຣະພະປະຣິພາຊົກມິດງຽບ ເກີ້ເຂີນ ນັ່ງຄໍຕົກ ກົ້ມໜ້າ ຈຸກເຈົ່າ ບໍ່ສາມາດຈະໂຕ້ຕອບໄດ້ ຈຶ່ງໄດ້ຕັດກັບປະຣິພາຊົກເຫຼົ່ານັ້ນດັ່ງນີ້ ວ່າ

ປະຣິພາຊົກທັງຫຼາຍ ຜູ້ໃດເພິ່ງກ່າວກັບເຮົາແນວນີ້ວ່າ "ທ່ານຜູ້ເປັນພຣະສຳມາສຳພຸດທະເຈົ້າ ປະຕິຍານຕົນຢູ່ ຍັງບໍ່ໄດ້ຕັດສະຮູ້ທຳເຫຼົ່ານີ້ ເຮົາເພິ່ງໄຕ່ຖາມຊັກໄຊ້ໄລ່ລຽງຜູ້ນັ້ນໃນທຳນັ້ນຕາມຫຼັກເຫດຜົນ" ເປັນໄປບໍ່ໄດ້ເລີຍ ທີ່ຜູ້ນັ້ນເມື່ອຖືກເຮົາໄຕ່ຖາມຊັກໄຊ້ໄລ່ລຽງຕາມຫຼັກເຫດຜົນຈະບໍ່ເຂົ້າເຖິງຖານະແນວໃດແນວໜຶ່ງໃນຖານະ ໓ ຢ່າງ ຄື (໑) ເວົ້າກົບເກື່ອນຫຼືເວົ້ານອກເລື້ອງ (໔) ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ (໓) ມິດງຽບ ເກີ້ເຂີນ ນັ່ງຄໍຕົກ ກົ້ມໜ້າ ຈຸກເຈົ່າ ບໍ່ສາມາດຈະໂຕ້ຕອບໄດ້ ຄື ສະຣະພະປະຣິພາຊົກ

ປະຣິພາຊົກທັງຫຼາຍ ຜູ້ໃດເພິ່ງກ່າວກັບເຮົາແນວນີ້ວ່າ "ອາສະວະເຫຼົ່ານີ້ຂອງທ່ານຜູ້ປະຕິຍານຕົນວ່າ ເປັນພຣະຂີນາສົບຍັງບໍ່ໝົດໄປເລີຍ ເຮົາເພິ່ງໄຕ່ຖາມຊັກໄຊ້ໄລ່ລຽງຜູ້ນັ້ນໃນທຳນັ້ນຕາມຫຼັກເຫດຜົນ" ເປັນໄປບໍ່ໄດ້ເລີຍ ທີ່ຜູ້ນັ້ນເມື່ອຖືກເຮົາໄຕ່ຖາມຊັກໄຊ້ໄລ່ລຽງຕາມຫຼັກເຫດຜົນຈະບໍ່ເຂົ້າເຖິງຖານະແນວໃດແນວໜຶ່ງໃນຖານະ ໓ ຢ່າງ ຄື (໑) ເວົ້າກົບເກື່ອນຫຼືເວົ້ານອກເລື້ອງ (໔) ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ (໓) ມິດງຽບ ເກີ້ເຂີນ ນັ່ງຄໍຕົກ ກົ້ມໜ້າ ຈຸກເຈົ່າ ບໍ່ສາມາດຈະໂຕ້ຕອບໄດ້ຄືສະຣະພະປະຣິພາຊົກ

ປະຣິພາຊົກທັງຫຼາຍ ຜູ້ໃດ ເພິ່ງກ່າວກັບເຮົາແນວນີ້ວ່າ "ທ່ານສະແດງທຳເພື່ອປະໂຫຍດໃດ ທຳທີ່ທ່ານສະແດງນັ້ນ ບໍ່ອຳນວຍປະໂຫຍດນັ້ນເພື່ອຄວາມສິ້ນທຸກໂດຍຖືກຕ້ອງ ແກ່ຜູ້ປະຕິບັດທຳນັ້ນ ເຮົາເພິ່ງໄຕ່ຖາມຊັກໄຊ້ໄລ່ລຽງຜູ້ນັ້ນໃນທຳນັ້ນຕາມຫຼັກເຫດຜົນ"

ເປັນໄປບໍ່ໄດ້ເລີຍ ທີ່ຜູ້ນັ້ນເມື່ອຖືກເຮົາໄຕ່ຖາມຊັກໄຊ້ໄລ່ລຽງຕາມຫຼັກເຫດຜົນ ຈະບໍ່ເຂົ້າເຖິງຖານະ ແນວໃດແນວໜຶ່ງໃນຖານະ ໓ ຢ່າງ ຄື (໑) ເວົ້າກົບເກື່ອນ ຫຼື ເວົ້ານອກເລື້ອງ (໔) ສະແດງອາການໂກດ ຂັດເຄືອງ ແລະອາການບໍ່ພໍໃຈ (໓) ມິດງຽບ ເກີ້ເຂີນ ນັ່ງຄໍຕົກ ກົ້ມໜ້າ ຈຸກເຈົ່າ ບໍ່ສາມາດຈະໂຕ້ຕອບໄດ້ ຄື ສະຣະພະປະຣິພາຊົກ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງບັນລືສີຫະນາດ ໓ ເທື່ອທີ່ອາຣາມປະຣິພາຊົກ ທີ່ແຄມຝັ່ງແມ່ນ້ຳສັບປີນິກາແລ້ວຊົງເຫາະຫຼີກໄປ

ຕໍ່ມາ ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດຫຼີກໄປບໍ່ດົນ ປະຣິພາຊົກພາກັນໃຊ້ເຫຼັກແຫຼມຄືວາຈາສຽບແທງສະຣະພະປະຣິພາຊົກຮອບດ້ານວ່າ "ທ່ານສະຣະພະ ໝາຈອກແກ່ໃນປ່າໃຫຍ່ຄິດວ່າຈັກຮ້ອງຄືສຽງຣາດຊະສີ ແຕ່ກໍຮ້ອງເປັນໝາຈອກຢູ່ນັ້ນເອງ ຮ້ອງບໍ່ຕ່າງຈາກໝາຈອກເລີຍແມ່ນສັນໃດ ທ່ານສະຣະພະ ໂຕທ່ານເອງກໍຄືກັນສັນນັ້ນ ຄິດວ່າ "ນອກຈາກພຣະສະມະນະໂຄດົມແລ້ວ ເຮົາກໍບັນລືສີຫະນາດໄດ້" ກັບບັນລືໄດ້ຄືໝາຈອກແກ່ ບັນລືບໍ່ຕ່າງຈາກໝາຈອກເລີຍ ທ່ານສະຣະພະ ໄກ່ນ້ອຍໂຕແມ່ຄິດວ່າຈັກຂັນໃຫ້ໄດ້ຄືໄກ່ຜູ້ໂອກ ກັບຂັນໄດ້ຢ່າງໄກ່ນ້ອຍໂຕແມ່ທໍ່ນັ້ນ ແມ່ນສັນໃດ ທ່ານສະຣະພະ ໂຕທ່ານເອງກໍຄືກັນສັນນັ້ນ ຄິດວ່າ "ນອກຈາກພຣະສະມະນະໂຄດົມແລ້ວ ເຮົາກໍຈັກຂັນຄືໄກ່ຜູ້ໂອກໄດ້" ກັບຂັນໄດ້ຄືໄກ່ນ້ອຍໂຕແມ່ ທ່ານສະຣະພະ

ງົວຜູ້ເຂົ້າໃຈວ່າ ຕົນຮ້ອງໄດ້ຢ່າງເລີກເຊິ່ງໃນໂຮງງົວທີ່ວ່າງ ແມ່ນສັນໃດ ທ່ານສະຣະພະໂຕທ່ານເອງກໍຄືກັນສັນນັ້ນ ເຂົ້າໃຈວ່າຕົນຮ້ອງໄດ້ຢ່າງເລີກເຊິ່ງ”

ຄັ້ງນັ້ນ ປະຣິພາຊົກເຫຼົ່ານັ້ນ ພາກັນໃຊ້ເຫຼັກແຫຼມ ຄື ວາຈາສຽບແທງສະຣະພະປະຣິພາຊົກຮອບດ້ານ

**ສະຣະພະສູດ ທີ ໔ ຈົບ**

# ໕. ເກສະປຸດຕິສູດ

## ວ່າດ້ວຍກາລາມະຊາວເກສະປຸດຕິນິຄົມ

[໖໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງເຂດຂອງພວກກາລາມະຊື່ວ່າເກສະປຸດຕິນິຄົມ

ພວກກາລາມະຊາວເກສະປຸດຕິນິຄົມໄດ້ຮູ້ວ່າ “ໄດ້ຂ່າວວ່າ ທ່ານພຣະສະມະນະໂຄດົມສາກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນສະເດັດເຖິງເກສະປຸດຕິນິຄົມໂດຍລຳດັບແລ້ວ ທ່ານພຣະສະມະນະໂຄດົມນັ້ນ ມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ “ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດດ້ວຍພຣະອົງເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ນຳ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ” ການໄດ້ພົບພຣະອະຣະຫັນທັງຫຼາຍເຊັ່ນນີ້ ເປັນຄວາມດີຢ່າງແທ້ຈິງ”

ລຳດັບນັ້ນ ພວກກາລາມະຊາວເກສະປຸດຕິນິຄົມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ລາງພວກຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະນົມມືໄຫວ້ໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະກາດຊື່ແລະໂຄດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກນັ່ງມິດຢູ່ບ່ອນທີ່ສົມຄວນ

ພວກກາລາມະຊາວເກສະປຸດຕິນິຄົມ ຜູ້ນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ມີສະມະນະພາມພວກໜຶ່ງມາຍັງເກສະປຸດຕິນິຄົມ ສະແດງ ປະກາດວາທະ໌ຂອງຕົນທໍ່ນັ້ນ ແຕ່ກະທົບກະທຽບ ດູໝິ່ນ ກ່າວຂົ່ມວາທະຂອງຜູ້ອື່ນ ເຮັດໃຫ້ບໍ່ໜ້າເຊື່ອຖື

ຂ້າແດ່ ພຣະອົງຜູ້ຈະເລີນ ມີສະມະນະພາມອີກພວກໜຶ່ງ ມາຍັງເກສະປຸດຕິນິຄົມສະແດງປະກາດວາທະຂອງຕົນທໍ່ນັ້ນ ແຕ່ກະທົບກະທຽບ ດູໝິ່ນ ກ່າວຂົ່ມວາທະຂອງຜູ້ອື່ນ ເຮັດໃຫ້ບໍ່ໜ້າເຊື່ອຖື

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍ ມີຄວາມສົງໄສລັງເລໃຈໃນສະມະນະພາມເຫຼົ່ານັ້ນວ່າ “ບັນດາທ່ານສະມະນະພາມເຫຼົ່ານີ້ໃຜເວົ້າຈິງ ໃຜເວົ້າຕົວະ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາລາມະຊົນທັງຫຼາຍ ກໍສົມຄວນທີ່ທ່ານທັງຫຼາຍຈະສົງໄສ ສົມຄວນທີ່ຈະລັງເລໃຈ ທ່ານທັງຫຼາຍເກີດຄວາມະສົງໄສລັງເລໃຈໃນຖານະທີ່ຄວນສົງໄສຢ່າງແທ້ຈິງ ມາເຫີ້ນ ກາລາມະທັງຫຼາຍ ທ່ານທັງຫຼາຍ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ
ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ(ການຄິດເອົາເອງ)
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອ ຍ້ອນເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອ ຍ້ອນແນມເຫັນຮູບລັກສະນະມັກຈະເປັນໄປໄດ້
ຢ່າປົງໃຈເຊື່ອ ຍ້ອນນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ກາລາມະທັງຫຼາຍ ເມື່ອໃດ ທ່ານທັງຫຼາຍເພິ່ງຮູ້ດ້ວຍຕົນເອງທໍ່ນັ້ນວ່າ “ທຳເຫຼົ່ານີ້ເປັນອະກຸສົນ ທຳເຫຼົ່ານີ້ມີໂທດ ທຳເຫຼົ່ານີ້ຜູ້ຮູ້ຕິຕຽນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ” ເມື່ອນັ້ນ ທ່ານທັງຫຼາຍຄວນລະ (ທຳເຫຼົ່ານັ້ນ) ສາ

ກາລາມະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ໂລພະ (ຄວາມຢາກໄດ້) ເມື່ອເກີດຂຶ້ນພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ

"ບໍ່ເກື້ອກູນ ຂ້ານ້ອຍ"

"ກາລາມະທັງຫຼາຍ ກໍບຸຣຸດບຸກຄົນຜູ້ມີໂລພະນີ້ຖືກໂລພະຄອບງຳ ມີຈິດຖືກໂລພະ ກຸ້ມລຸມ ຂ້າສັດແດ່ ລັກຊັບແດ່ ລ່ວງເກີນພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຊັກຊວນຜູ້ອື່ນເພື່ອສິ່ງທີ່ບໍ່ເກື້ອກູນເພື່ອທຸກແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ກາລາມະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ໂທສະ (ຄວາມຄິດປະທຸດສະຮ້າຍ) ເມື່ອເກີດຂຶ້ນພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ"

"ບໍ່ເກື້ອກູນ ຂ້ານ້ອຍ"

"ກາລາມະທັງຫຼາຍ ກໍບຸຣຸດບຸກຄົນຜູ້ມີໂທສະນີ້ຖືກໂທສະຄອບງຳ ມີຈິດຖືກໂທສະກຸ້ມລຸມ ຂ້າສັດແດ່ ລັກຊັບແດ່ ລ່ວງເກີນພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຊັກຊວນຜູ້ອື່ນເພື່ອສິ່ງທີ່ບໍ່ເກື້ອກູນ ເພື່ອທຸກແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ກາລາມະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ໂມຫະ (ຄວາມຫຼົງ) ເມື່ອເກີດຂຶ້ນພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ"

"ບໍ່ເກື້ອກູນ ຂ້ານ້ອຍ"

"ກາລາມະທັງຫຼາຍ ກໍບຸຣຸດບຸກຄົນຜູ້ມີໂມຫະນີ້ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຂ້າສັດແດ່ ລັກຊັບແດ່ ລ່ວງເກີນພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຊັກຊວນຜູ້ອື່ນເພື່ອສິ່ງທີ່ບໍ່ເກື້ອກູນ ເພື່ອທຸກແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ກາລາມະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ທຳເຫຼົ່ານີ້ ເປັນກຸສົນຫຼືອະກຸສົນ?"

"ເປັນອະກຸສົນ ຂ້ານ້ອຍ"

"ເປັນທຳທີ່ມີໂທດຫຼືບໍ່ມີໂທດ?"

"ເປັນທຳທີ່ມີໂທດ ຂ້ານ້ອຍ"

"ເປັນທຳທີ່ຜູ້ຮູ້ຕິຕຽນຫຼືຜູ້ຮູ້ສັນເສີນ?"

"ເປັນທຳທີ່ຜູ້ຮູ້ຕິຕຽນ ຂ້ານ້ອຍ"

"ທຳເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກແມ່ນບໍ? ຫຼື ທ່ານທັງຫຼາຍມີຄວາມເຂົ້າໃຈໃນເລື້ອງນີ້ແນວໃດ?"

"ທຳເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ ຂ້າພະເຈົ້າທັງຫຼາຍມີຄວາມເຂົ້າໃຈໃນເລື້ອງນີ້ແນວນີ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາລາມະທັງຫຼາຍ ຍ້ອນເຫດນີ້ ເຮົາຈຶ່ງໄດ້ກ່າວໄວ້ວ່າ ມາເທີ້ນ ກາລາມະທັງຫຼາຍ ທ່ານທັງຫຼາຍ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ
ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະມັກຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ກາລາມະທັງຫຼາຍ ເມື່ອໃດ ທ່ານທັງຫຼາຍ ເພິ່ງຮູ້ດ້ວຍຕົນເອງຢ່າງນີ້ວ່າ "ທຳເຫຼົ່ານີ້ເປັນອະກຸສົນ ທຳເຫຼົ່ານີ້ມີໂທດ ທຳເຫຼົ່ານີ້ຜູ້ຮູ້ຕິຕຽນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ" ເມື່ອນັ້ນ ທ່ານທັງຫຼາຍຄວນລະ(ທຳເຫຼົ່ານັ້ນ)ສາ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ນັ້ນ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ມາເທີ້ນ ກາລາມະທັງຫຼາຍ ທ່ານທັງຫຼາຍ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ
ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະມັກຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ກາລາມະທັງຫຼາຍ ເມື່ອໃດ ທ່ານທັງຫຼາຍ ເພິ່ງຮູ້ດ້ວຍຕົນເອງທີ່ນັ້ນວ່າ "ທຳເຫຼົ່ານີ້ເປັນກຸສົນ ທຳເຫຼົ່ານີ້ບໍ່ມີໂທດ ທຳເຫຼົ່ານີ້ຜູ້ຮູ້ສັນເສີນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ" ເມື່ອນັ້ນ ທ່ານທັງຫຼາຍຄວນເຂົ້າເຖິງ (ທຳເຫຼົ່ານັ້ນ) ຢູ່

ກາລາມະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ອະໂລພະ (ຄວາມບໍ່ຢາກໄດ້) ເມື່ອເກີດຂຶ້ນພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ?"

"ເກື້ອກູນ ຂ້ານ້ອຍ"

"ກາລາມະທັງຫຼາຍ ກໍບຸຣຸດບຸກຄົນຜູ້ບໍ່ມີໂລພະນີ້ບໍ່ຖືກໂລພະຄອບງຳ ມີຈິດບໍ່ຖືກໂລພະກຸ້ມລຸມ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ລ່ວງເກີນພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ ຊັກຊວນຜູ້ອື່ນເພື່ອສິ່ງທີ່ເກື້ອກູນ ເພື່ອສຸກແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ກາລາມະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ອະໂທສະ (ຄວາມບໍ່ຄິດປະທຸດສະຮ້າຍ) ເມື່ອເກີດຂຶ້ນພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ?"

"ເກື້ອກູນ ຂ້ານ້ອຍ"

"ກາລາມະທັງຫຼາຍ ກໍບຸຣຸດບຸກຄົນຜູ້ບໍ່ມີໂທສະນີ້ບໍ່ຖືກໂທສະຄອບງຳ ມີຈິດບໍ່ຖືກໂທສະກຸ້ມລຸມ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ລ່ວງເກີນພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ ຊັກຊວນຜູ້ອື່ນເພື່ອສິ່ງທີ່ເກື້ອກູນ ເພື່ອສຸກແມ່ນບໍ?"

"ເປັນແນວນັ້ນ ຂ້ານ້ອຍ"

"ກາລາມະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ອະໂມຫະ (ຄວາມບໍ່ຫຼົງ) ເມື່ອເກີດຂຶ້ນພາຍໃນບຸກຄົນ ຍ່ອມເກີດຂຶ້ນເພື່ອເກື້ອກູນຫຼືບໍ່ເກື້ອກູນ"

"ເກື້ອກູນ ຂ້ານ້ອຍ"

"ກາລາມະທັງຫຼາຍ ກໍບຸຣຸດບຸກຄົນຜູ້ບໍ່ມີໂມຫະນີ້ບໍ່ຖືກໂມຫະຄອບງຳ ມີຈິດບໍ່ຖືກໂມຫະກຸ້ມລຸມ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ລ່ວງເກີນພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ ຊັກຊວນຜູ້ອື່ນເພື່ອສິ່ງທີ່ເກື້ອກູນ ເພື່ອສຸກແມ່ນບໍ?"

"ແມ່ນແລ້ວ ຂ້ານ້ອຍ"

"ກາລາມະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນວ່າແນວໃດ ຄືທຳເຫຼົ່ານັ້ນເປັນກຸສົນຫຼືເປັນອະກຸສົນ?"

"ເປັນກຸສົນ ຂ້ານ້ອຍ"

"ເປັນທຳທີ່ມີໂທດຫຼືບໍ່ມີໂທດ?"

"ເປັນທຳທີ່ບໍ່ມີໂທດ ຂ້ານ້ອຍ"

"ເປັນທຳທີ່ຜູ້ຮູ້ຕິຕຽນຫຼືຜູ້ຮູ້ສັນເສີນ?"

"ເປັນທຳທີ່ຜູ້ຮູ້ສັນເສີນ ຂ້ານ້ອຍ"

"ທຳເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກແມ່ນບໍ? ຫຼືທ່ານທັງຫຼາຍ ມີຄວາມເຂົ້າໃຈໃນເລື້ອງນີ້ແນວໃດ"

"ທຳເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ ຂ້າພະເຈົ້າທັງຫຼາຍມີຄວາມເຂົ້າໃຈໃນເລື້ອງນີ້ແນວນີ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາລາມະທັງຫຼາຍ ຍ້ອນເຫດນີ້ແລ ເຮົາຈຶ່ງໄດ້ກ່າວໄວ້ວ່າ ມາເທີ້ນ ກາລາມະທັງຫຼາຍ ທ່ານທັງຫຼາຍ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ
ຢ່າປົງໃຈເຊື່ອດ້ວຍການ ເລົ່າລື້
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະມັກຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ກາລາມະທັງຫຼາຍ ເມື່ອໃດ ທ່ານທັງຫຼາຍເພິ່ງຮູ້ດ້ວຍຕົນເອງທໍ່ນັ້ນວ່າ ທຳເຫຼົ່ານີ້ເປັນກຸສົນ ທຳເຫຼົ່ານີ້ບໍ່ມີໂທດ ທຳເຫຼົ່ານີ້ຜູ້ຮູ້ສັນເສີນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ ເມື່ອນັ້ນ ທ່ານທັງຫຼາຍຄວນເຂົ້າເຖິງ(ທຳເຫຼົ່ານັ້ນ)ຢູ່ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ນັ້ນ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ກາລາມະທັງຫຼາຍ ອະຣິຍະສາວົກນັ້ນປາສະຈາກອະພິດຊາ ປາສະຈາກພະຍາບາດ ບໍ່ລຸ້ມຫຼົງ ມີສຳປະຊັນຍະ ມີສະຕິໝັ້ນຄົງ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍເມດຕາ ຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ໆລໆ ມີມຸທິຕາຈິດ ໆລໆ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ກາລາມະທັງຫຼາຍ ອະຣິຍະສາວົກນັ້ນ ມີຈິດບໍ່ມີເວນແນວນີ້ ມີຈິດບໍ່ພະຍາບາດແນວນີ້ມີຈິດບໍ່ເສົ້າໝອງແນວນີ້ ມີຈິດບໍລິສຸດແນວນີ້ ທ່ານບັນລຸຄວາມເບົາໃຈ ໔ ປະການໃນປັດຈຸບັນ ຄື

໑. ຖ້າໂລກໜ້າມີ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວມີ ເປັນໄປໄດ້ທີ່ເລື້ອງນັ້ນຈະເປັນເຫດໃຫ້ເຮົາຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິໂລກສະຫວັນ ນີ້ຄື ຄວາມເບົາໃຈປະການທີ ໑ ທີ່ອະຣິຍະສາວົກນັ້ນບັນລຸແລ້ວ

໒. ຖ້າໂລກໜ້າບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວບໍ່ມີ ເຮົາກໍຖືຮັກສາຕົນບໍ່ໃຫ້ມີເວນ ບໍ່ມີຄວາມບຽດບຽນ ບໍ່ໃຫ້ມີທຸກ ໃຫ້ມີສຸກໃນປັດຈຸບັນໃນໂລກນີ້ໄດ້ ນີ້ຄືຄວາມເບົາໃຈປະການທີ ໒ ທີ່ອະຣິຍະສາວົກນັ້ນບັນລຸແລ້ວ

໓. ຖ້າບຸກຄົນເມື່ອເຮັດບາບກໍຊື່ວ່າເຮັດບາບ ເຮົາບໍ່ເຈາະຈົງບາບໄວ້ເພື່ອໃຜ ໆ ເລີຍ ເມື່ອເຮົາບໍ່ເຮັດບາບເລີຍ ຄວາມທຸກຈະຖືກຕ້ອງເຮົາໄດ້ແນວໃດ ນີ້ຄືຄວາມເບົາໃຈປະການທີ ໓ ທີ່ອະຣິຍະສາວົກນັ້ນບັນລຸແລ້ວ

໔. ຖ້າບຸກຄົນເມື່ອເຮັດບາບກໍຊື່ວ່າບໍ່ເຮັດບາບ ເຮົາກໍພິຈາລະນາເຫັນຕົນບໍລິສຸດທັງ ໒ ສ່ວນໃນໂລກນີ້ ນີ້ຄື ຄວາມເບົາໃຈປະການທີ ໔ ທີ່ອະຣິຍະສາວົກນັ້ນບັນລຸແລ້ວ

ກາລາມະທັງຫຼາຍ ອະຣິຍະສາວົກນັ້ນ ມີຈິດບໍ່ມີເວນແນວນີ້ມີຈິດບໍ່ພະຍາບາດແນວນີ້ມີຈິດບໍ່ເສົ້າໝອງແນວນີ້ ມີຈິດບໍລິສຸດແນວນີ້ອະຣິຍະສາວົກນັ້ນຊື່ວ່າ ບັນລຸຄວາມເບົາໃຈ ໔ ປະການນີ້ໃນປັດຈຸບັນ

ພວກກາລາມະຂາບທູນວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເລື້ອງນັ້ນເປັນແນວນີ້ຂ້າແດ່ພຣະສຸຄົດເຈົ້າ ເລື້ອງນັ້ນເປັນແນວນີ້ ພຣະອະຣິຍະສາວົກນັ້ນ ມີຈິດບໍ່ມີເວນແນວນີ້ ມີຈິດບໍ່ພະຍາບາດແນວນີ້ ມີຈິດບໍ່ເສົ້າໝອງແນວນີ້ ມີຈິດບໍລິສຸດແນວນີ້ ພຣະອະຣິຍະສາວົກນັ້ນບັນລຸຄວາມເບົາໃຈ ໔ ປະການໃນປັດຈຸບັນ ຄື

໑. ຖ້າໂລກໜ້າມີ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວມີ ເປັນໄປໄດ້ທີ່ເລື້ອງນັ້ນຈະເປັນເຫດໃຫ້ເຮົາຫຼັງຈາກຕາຍແລ້ວ ໄປເກີດໃນສຸກຄະຕິໂລກສະຫວັນ ນີ້ຄືຄວາມເບົາໃຈປະການທີ ໑ ທີ່ພຣະອະຣິຍະສາວົກນັ້ນບັນລຸແລ້ວ
໒. ຖ້າໂລກໜ້າບໍ່ມີ ຜົນວິບາກແຫ່ງກຳທີ່ເຮັດດີແລະເຮັດຊົ່ວບໍ່ມີ ເຮົາກໍຖືຮັກສາຕົນບໍ່ໃຫ້ມີເວນ ບໍ່ໃຫ້ມີຄວາມບຽດບຽນ ບໍ່ໃຫ້ມີທຸກ ໃຫ້ມີສຸກໃນປັດຈຸບັນໃນໂລກນີ້ໄດ້ ນີ້ຄືຄວາມເບົາໃຈປະການທີ ໒ ທີ່ພຣະອະຣິຍະສາວົກນັ້ນບັນລຸແລ້ວ
໓. ຖ້າບຸກຄົນເມື່ອເຮັດບາບກໍຊື່ວ່າເຮັດບາບ ເຮົາບໍ່ເຈາະຈົງບາບໄວ້ເພື່ອໃຜ ໆ ເລີຍ ເມື່ອເຮົາບໍ່ເຮັດບາບເລີຍ ຄວາມທຸກຈະຖືກຕ້ອງເຮົາໄດ້ແນວໃດ ນີ້ຄືຄວາມເບົາໃຈປະການທີ ໓ ທີ່ພຣະອະຣິຍະສາວົກນັ້ນບັນລຸແລ້ວ
໔. ຖ້າບຸກຄົນເມື່ອເຮັດບາບກໍຊື່ວ່າບໍ່ເຮັດບາບ ເຮົາກໍພິຈາລະນາເຫັນຕົນບໍລິສຸດທັງ ໒ ສ່ວນໃນໂລກນີ້ ນີ້ຄືຄວາມເບົາໃຈປະການທີ ໔ ທີ່ພຣະອະຣິຍະສາວົກນັ້ນບັນລຸແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອະຣິຍະສາວົກນັ້ນ ມີຈິດບໍ່ມີເວນແນວນີ້ ມີຈິດບໍ່ພະຍາບາດແນວນີ້ ມີຈິດບໍ່ເສົ້າໝອງແນວນີ້ ມີຈິດບໍລິສຸດແນວນີ້ ພຣະອະຣິຍະສາວົກນັ້ນຊື່ວ່າບັນລຸຄວາມເບົາໃຈ ໔ ປະການນີ້ໃນປັດຈຸບັນ

ຂ້າແດ່ ພຣະອົງຜູ້ຈະເລີນ ພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ฯລฯ ຂ້າພຣະອົງທັງຫຼາຍນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຈື່ ຂ້າພຣະອົງທັງຫຼາຍວ່າ ເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ເກສະປຸດຕິສູດ ທີ ໕ ຈົບ**

## ໖. ສາລະຫະສູດ

## ວ່າດ້ວຍນາຍສາລະຫະຖາມເຖິງຫຼັກຄວາມເຊື່ອ

[໖໗] ສະໄໝໜຶ່ງ ທ່ານພຣະນັນທະກະຢູ່ທີ່ຜາສາດຂອງວິສາຂາມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີ ຄັ້ງນັ້ນ ນາຍສາລະຫະຜູ້ເປັນຫຼານຊາຍຂອງມິຄານເສດຖີ ແລະນາຍໂຣຫະນະຜູ້ເປັນຫຼານຊາຍຂອງເປຂຸນິຍະເສດຖີ ເຂົ້າໄປຫາທ່ານພຣະນັນທະກະເຖິງບ່ອນຢູ່ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະນັນທະກໍໄດ້ກ່າວກັບສາລະຫະມິຄາຣະນັດດາດັ່ງນີ້ວ່າ ມາເທີ້ນ ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ
ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະມັກຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ສາລະຫະແລະໂຣຫະນະ ເມື່ອໃດ ທ່ານທັງຫຼາຍເພິ່ງຮູ້ດ້ວຍຕົນເອງວ່າ "ທຳເຫຼົ່ານີ້ເປັນອະກຸສົນ ທຳເຫຼົ່ານີ້ມີໂທດ ທຳເຫຼົ່ານີ້ທ່ານຜູ້ຮູ້ຕິຕຽນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ" ເມື່ອນັ້ນ ທ່ານທັງຫຼາຍຄວນລະ (ທຳເຫຼົ່ານັ້ນ) ສາ

ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍ ເຂົ້າໃຈເລື້ອງນີ້ແນວໃດ ຄື ໂລພະມີຢູ່ບໍ?

"ມີຢູ່ ທ່ານຜູ້ຈະເລີນ"

"ສາລະຫະແລະໂຣຫະນະ ເຮົາຈະອະທິບາຍຄຳວ່າ "ອະພິດຊາ" ບຸກຄົນຜູ້ເພ່ງເລັງຍາກໄດ້ຂອງເຂົານີ້ເປັນຜູ້ໂລບ ຂ້າສັດແດ່ ລັກຊັບແດ່ ລ່ວງເກີນພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຊັກຊວນຜູ້ອື່ນເພື່ອສິ່ງທີ່ບໍ່ເກື້ອກູນ ເພື່ອທຸກແມ່ນບໍ?"

"ແມ່ນແລ້ວ ທ່ານຜູ້ຈະເລີນ"
"ສາລະຫະແລະໂຣຫະນະ ທ່ານທັງຫຼາຍ ເຂົ້າໃຈເລື້ອງນີ້ແນວໃດ ຄື ໂທສະມີຢູ່ແມ່ນບໍ?"
"ມີຢູ່ ທ່ານຜູ້ຈະເລີນ"

"ສາລະຫະ ແລະໂຣຫະນະ ເຮົາຈະອະທິບາຍຄຳວ່າ "ພະຍາບາດ" ບຸກຄົນຜູ້ມີຈິດພະຍາບາດ (ຄວາມຄິດຮ້າຍ) ນີ້ ເປັນຜູ້ຄິດຮ້າຍ ຂ້າສັດແດ່ ລັກຊັບແດ່ ລ່ວງເກີນພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຊັກຊວນຜູ້ອື່ນເພື່ອສິ່ງທີ່ບໍ່ເກື້ອກູນ ເພື່ອທຸກແມ່ນບໍ?"

"ແມ່ນແລ້ວ ທ່ານຜູ້ຈະເລີນ"
"ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ໂມຫະມີຢູ່ແມ່ນບໍ?"
"ມີຢູ່ ທ່ານຜູ້ຈະເລີນ"

"ສາລະຫະ ແລະໂຣຫະນະ ເຮົາຈະອະທິບາຍຄຳວ່າ "ອະວິດຊາ" ບຸກຄົນຜູ້ຕົກຢູ່ໃນອະວິດຊາ (ຄວາມບໍ່ຮູ້ແຈ້ງ) ນີ້ ເປັນຜູ້ຫຼົງ ຂ້າສັດແດ່ ລັກຊັບແດ່ ລ່ວງເກີນພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຊັກຊວນຜູ້ອື່ນເພື່ອສິ່ງທີ່ບໍ່ເກື້ອກູນ ເພື່ອທຸກແມ່ນບໍ?"

"ແມ່ນແລ້ວ ທ່ານຜູ້ຈະເລີນ"

"ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍ ເຂົ້າໃຈເລື້ອງນັ້ນແນວໃດ ຄື ທຳເຫຼົ່ານັ້ນເປັນກຸສົນ ຫຼື ອະກຸສົນ?"

"ເປັນອະກຸສົນ ທ່ານຜູ້ຈະເລີນ"

"ເປັນທຳທີ່ມີໂທດ ຫຼື ບໍ່ມີໂທດ?"

"ເປັນທຳທີ່ມີໂທດ ທ່ານຜູ້ຈະເລີນ"

"ເປັນທຳທີ່ຜູ້ຮູ້ຕິຕຽນ ຫຼື ຜູ້ຮູ້ສັນເສີນ?"

"ເປັນທຳທີ່ຜູ້ຮູ້ຕິຕຽນ ທ່ານຜູ້ຈະເລີນ"

"ທຳເຫຼົ່ານັ້ນ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກແມ່ນບໍ? ຫຼື ທ່ານທັງຫຼາຍ ມີຄວາມເຂົ້າໃຈໃນເລື້ອງນັ້ນແນວໃດ?"

"ທຳເຫຼົ່ານັ້ນ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ ພວກຂ້ານ້ອຍມີຄວາມເຂົ້າໃຈໃນເລື້ອງນັ້ນແນວນີ້ ທ່ານຜູ້ຈະເລີນ"

ທ່ານພຣະນັນທະກະກ່າວວ່າ ສາລະຫະແລະໂຣຫະນະ ຍ້ອນເຫດນີ້ແລ ເຮົາຈຶ່ງໄດ້ກ່າວໄວ້ວ່າ ມາເທີ້ນ ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ
ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະມັກຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ສາລະຫະແລະໂຣຫະນະ ເມື່ອໃດ ທ່ານທັງຫຼາຍພຶງຮູ້ດ້ວຍຕົນເອງວ່າ "ທຳເຫຼົ່ານີ້ເປັນອະກຸສົນ ທຳເຫຼົ່ານີ້ມີໂທດ ທຳເຫຼົ່ານີ້ຜູ້ຮູ້ຕິຕຽນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກ" ເມື່ອນັ້ນ ທ່ານທັງຫຼາຍຄວນລະ (ທຳເຫຼົ່ານັ້ນ)ສາ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ນັ້ນ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ມາເທີ້ນ ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ
ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ
ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕຳລາຫຼືຄຳພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະມັກຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ສາລະຫະແລະໂຣຫະນະ ເມື່ອໃດ ທ່ານທັງຫຼາຍເພິ່ງຮູ້ດ້ວຍຕົນເອງທໍ່ນັ້ນວ່າ "ທຳເຫຼົ່ານີ້ເປັນກຸສົນ ທຳເຫຼົ່ານີ້ບໍ່ມີໂທດ ທຳເຫຼົ່ານີ້ຜູ້ຮູ້ສັນເສີນ ທຳເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ" ເມື່ອນັ້ນ ທ່ານທັງຫຼາຍຄວນເຂົ້າເຖິງ (ທຳເຫຼົ່ານັ້ນ) ຢູ່ເທີ້ນ

ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍ ເຂົ້າໃຈເລື້ອງນັ້ນແນວໃດ ຄື ອະໂລພະມີຢູ່ແມ່ນບໍ?

"ມີຢູ່ ທ່ານຜູ້ຈະເລີນ"

ສາລະຫະ ແລະໂຣຫະນະ ເຮົາຈະອະທິບາຍຄຳນີ້ວ່າ "ອະນະພິດຊາ" ບຸກຄົນຜູ້ບໍ່ເພ່ງເລັງຍາກ ໄດ້ຂອງເຂົານີ້ເປັນຜູ້ບໍ່ໂລບ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ລ່ວງເກີນພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ ຊັກຊວນຜູ້ອື່ນເພື່ອສິ່ງທີ່ເກື້ອກູນ ເພື່ອສຸກແມ່ນບໍ?"

"ເປັນແນວນັ້ນ ທ່ານຜູ້ຈະເລີນ"

"ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ອະໂທສະມີຢູ່ແມ່ນບໍ?"

"ມີຢູ່ ທ່ານຜູ້ຈະເລີນ"

"ສາລະຫະ ແລະໂຣຫະນະ ເຮົາຈະອະທິບາຍຄຳນີ້ວ່າ "ອະພະຍາບາດ" ບຸກຄົນຜູ້ມີຈິດບໍ່ພະຍາບາດນີ້ ເປັນຜູ້ບໍ່ຄິດຮ້າຍ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ລ່ວງເກີນພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ ຊັກຊວນຜູ້ອື່ນເພື່ອສິ່ງທີ່ເກື້ອກູນ ເພື່ອສຸກແມ່ນບໍ?"

"ແມ່ນແລ້ວ ທ່ານຜູ້ຈະເລີນ"

"ສາລະຫະ ແລະໂຣຫະນະ ທ່ານທັງຫຼາຍ ເຂົ້າໃຈເລື້ອງນັ້ນແນວໃດ ຄື ອະໂມຫະມີຢູ່ແມ່ນບໍ?"

"ມີຢູ່ ທ່ານຜູ້ຈະເລີນ"

"ສາລະຫະແລະໂຣຫະນະ ເຮົາຈະອະທິບາຍຄຳນີ້ວ່າ "ວິດຊາ" ບຸກຄົນຜູ້ມີວິດຊານີ້ເປັນຜູ້ບໍ່ຫຼົງຢູ່ໃນຄວາມຮູ້ນີ້ ບໍ່ຂ້າສັດ ບໍ່ລັກຊັບ ບໍ່ລ່ວງເກີນພັນລະຍາຂອງຜູ້ອື່ນ ບໍ່ເວົ້າຕົວະ ຊັກຊວນຜູ້ອື່ນເພື່ອສິ່ງທີ່ເກື້ອກູນ ເພື່ອສຸກແມ່ນບໍ?"

"ແມ່ນແລ້ວ ທ່ານຜູ້ຈະເລີນ"

"ສາລະຫະແລະໂຣຫະນະ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ທຳເຫຼົ່ານັ້ນເປັນກຸສົນຫຼືເປັນອະກຸສົນ?"

"ເປັນກຸສົນ ທ່ານຜູ້ຈະເລີນ"

"ເປັນທຳທີ່ມີໂທດ ຫຼື ບໍ່ມີໂທດ?"

"ເປັນທຳທີ່ບໍ່ມີໂທດ ທ່ານຜູ້ຈະເລີນ"

"ເປັນທຳທີ່ຜູ້ຮູ້ຕິຕຽນ ຫຼື ຜູ້ຮູ້ສັນເສີນ?"

"ເປັນທຳທີ່ຜູ້ຮູ້ສັນເສີນ ທ່ານຜູ້ຈະເລີນ"

"ທຳເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກບໍ ຫຼືທ່ານທັງຫຼາຍ ມີຄວາມເຂົ້າໃຈໃນເລື້ອງນີ້ແນວໃດ"

"ທຳເຫຼົ່ານີ້ ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວ ຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ ພວກຂ້ານ້ອຍມີຄວາມເຂົ້າໃຈໃນເລື້ອງນີ້ແນວນີ້ ທ່ານຜູ້ຈະເລີນ"

ທ່ານພຣະນັນທະກະກ່າວວ່າ ສາລະຫະແລະໂຣຫະນະ ຍ້ອນເຫດນີ້ແລ ເຮົາຈຶ່ງໄດ້ກ່າວໄວ້ວ່າ ມາເຫີ້ນ ທ່ານສາລະຫະ ແລະໂຣຫະນະ ທ່ານທັງຫຼາຍ

ຢ່າປົງໃຈເຊື່ອດ້ວຍການ ຟັງຕາມກັນມາ

ຢ່າປົງໃຈເຊື່ອດ້ວຍການ ຖືສືບ ໆ ກັນມາ

ຢ່າປົງໃຈເຊື່ອດ້ວຍການ ເລົ່າລື
ຢ່າປົງໃຈເຊື່ອດ້ວຍການ ອ້າງຕໍາລາຫຼືຄໍາພີ
ຢ່າປົງໃຈເຊື່ອຍ້ອນ ຕັກກະ
ຢ່າປົງໃຈເຊື່ອຍ້ອນການ ອະນຸມານ
ຢ່າປົງໃຈເຊື່ອດ້ວຍການ ຄິດຕອງຕາມແນວເຫດຜົນ
ຢ່າປົງໃຈເຊື່ອຍ້ອນ ເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ
ຢ່າປົງໃຈເຊື່ອຍ້ອນ ແນມເຫັນຮູບລັກສະນະມັກຈະເປັນໄປໄດ້
ຢ່າປົງໃຈເຊື່ອຍ້ອນ ນັບຖືວ່າ ທ່ານສະມະນະນີ້ເປັນຄູຂອງເຮົາ

ສາລະຫະແລະໂຣຫະນະ ເມື່ອໃດ ທ່ານທັງຫຼາຍ ເພິ່ງຮູ້ດ້ວຍຕົນເອງທໍ່ນັ້ນວ່າ "ທໍາເຫຼົ່ານີ້ເປັນກຸສົນ ທໍາເຫຼົ່ານີ້ບໍ່ມີໂທດ ທໍາເຫຼົ່ານີ້ຜູ້ຮູ້ສັນເສີນ ທໍາເຫຼົ່ານີ້ທີ່ບຸກຄົນຖືປະຕິບັດບໍລິບູນແລ້ວຍ່ອມເປັນໄປເພື່ອເກື້ອກູນ ເພື່ອສຸກ" ເມື່ອນັ້ນ ທ່ານທັງຫຼາຍ ຄວນເຂົ້າເຖິງ (ທໍາເຫຼົ່ານັ້ນ) ຢູ່ເທີ້ນ ຍ້ອນອາໄສຄໍາທີ່ເຮົາກ່າວໄວ້ນັ້ນ ເຮົາຈຶ່ງກ່າວໄວ້ ເຊັ່ນນັ້ນ

ສາລະຫະ ແລະໂຣຫະນະ ພຣະອະຣິຍະສາວົກນັ້ນ ປາສະຈາກອະພິດຊາ ປາສະຈາກພະຍາບາດ ບໍ່ລຸ້ມຫຼົງ ມີສໍາປະຊັນຍະ ມີສະຕິໝັ້ນຄົງ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີກະລຸນາຈິດ ໗ລ໗ ມີມຸທິຕາຈິດ ໗ລ໗ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ພຣະອະຣິຍະສາວົກນັ້ນ ຮູ້ແຈ້ງແນວນີ້ວ່າ "ທໍາມະຊາດນີ້°ມີຢູ່ ທໍາອັນຊາມ໌ມີຢູ່ ທໍາອັນປະນີດມີຢູ່ ການທີ່ສັນຍານີ້ສະບັດອອກຢ່າງປະເສີດມີຢູ່" ເມື່ອທ່ານຮູ້ເຫັນຢູ່ແນວນີ້ຈິດ ຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະອະຣິຍະສາວົກນັ້ນ ຮູ້ແຈ້ງແນວນີ້ວ່າ "ແຕ່ກ່ອນເຮົາມີໂລພະ ເລື້ອງນັ້ນ ເປັນສິ່ງບໍ່ດີບັດນີ້ໂລພະນັ້ນບໍ່ມີ ເລື້ອງນັ້ນເປັນສິ່ງທີ່ດີ ແຕ່ກ່ອນເຮົາມີໂທສະ ໗ລ໗ ແຕ່ກ່ອນເຮົາມີໂມຫະເລື້ອງນັ້ນເປັນສິ່ງບໍ່ດີ ບັດນີ້ໂມຫະນັ້ນບໍ່ມີ ເລື້ອງນັ້ນເປັນສິ່ງທີ່ດີ" ທ່ານບໍ່ມີຄວາມທະຍານຢາກດັບສະນິດ ເຢືອກເຢັນ ສະເຫວີຍສຸກ ມີຕົນເປັນຄືພົມຢູ່ໃນປັດຈຸບັນ

**ສາລະຫະສູດທີ ໖ ຈົບ**

# ໗. ກະຖາວັດຖຸສູດ

## ວ່າດ້ວຍເລື້ອງທີ່ຄວນກ່າວ

[໖໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກະຖາວັດຖຸ ໓ ປະການນີ້

ກະຖາວັດຖຸ ໓ ປະການ ອັນໃດແດ່ ຄື

໑. ຄວນກ່າວຄຳເວົ້າຍ້ອນອະດີດຕະການວ່າ "ອະດີດຕະການໄດ້ມີແນວນີ້"
໘. ຄວນກ່າວຄຳເວົ້າມຸ້ງເຖິງອະນາຄົດຕະການວ່າ "ອະນາຄົດຕະການຈັກມີແນວນີ້"
໓. ຄວນກ່າວຄຳເວົ້າສືບເນື່ອງກັບປັດຈຸບັນການວ່າ "ປັດຈຸບັນການມີຢູ່ແນວນີ້"

ຊາວໂລກເພິ່ງຮູ້ຈັກບຸກຄົນໄດ້ດ້ວຍການມາຮ່ວມປະຊຸມສົນທະນາກັນວ່າ "ຜູ້ນີ້ຄວນເວົ້ານຳຫຼືບໍ່ຄວນເວົ້ານຳ" ຖ້າບຸກຄົນນີ້ຖືກຖາມບັນຫາ ບໍ່ຕອບໂດຍໄນຍງວເຊິ່ງບັນຫາທີ່ຄວນຕອບໄນຍງວ ບໍ່ຈຳແນກຕອບເຊິ່ງບັນຫາທີ່ຄວນຈຳແນກຕອບ ບໍ່ຍ້ອນຖາມແລ້ວຈຶ່ງຕອບບັນຫາທີ່ຄວນຍ້ອນຖາມແລ້ວຈຶ່ງຕອບ ບໍ່ພັກບັນຫາທີ່ຄວນພັກໄວ້ ເມື່ອເປັນແນວນີ້ບຸກຄົນນີ້ຊື່ວ່າ "ຜູ້ບໍ່ຄວນເວົ້ານຳ" ແຕ່ຖ້າບຸກຄົນນີ້ຖືກຖາມບັນຫາ ຕອບໂດຍໄນຍງວເຊິ່ງບັນຫາທີ່ຄວນຕອບໂດຍໄນຍງວ ຈຳແນກຕອບບັນຫາທີ່ຄວນຈຳແນກຕອບ ຍ້ອນຖາມແລ້ວຈຶ່ງຕອບບັນຫາທີ່ຄວນຍ້ອນຖາມແລ້ວຈຶ່ງຕອບ ພັກບັນຫາທີ່ຄວນພັກໄວ້ ເມື່ອເປັນແນວນີ້ບຸກຄົນນີ້ຊື່ວ່າ "ຜູ້ຄວນເວົ້ານຳ"

ຊາວໂລກເພິ່ງຮູ້ຈັກບຸກຄົນໄດ້ດ້ວຍການມາຮ່ວມປະຊຸມສົນທະນາກັນວ່າ "ຜູ້ນີ້ຄວນເວົ້ານຳຫຼືບໍ່ຄວນເວົ້ານຳ" ຖ້າບຸກຄົນນີ້ຖືກຖາມບັນຫາ ບໍ່ຕັ້ງໝັ້ນຢູ່ໃນຖານະແລະອະຖານະ ບໍ່ຕັ້ງໝັ້ນຢູ່ໃນປະຣິກັບ ບໍ່ຕັ້ງໝັ້ນຢູ່ໃນເລື້ອງທີ່ຄວນຮູ້ ບໍ່ຕັ້ງໝັ້ນຢູ່ໃນເລື້ອງປະຕິບັດ ເມື່ອເປັນແນວນີ້ບຸກຄົນນີ້ຊື່ວ່າ "ຜູ້ບໍ່ຄວນເວົ້ານຳ" ແຕ່ຖ້າບຸກຄົນນີ້ຖືກຖາມບັນຫາ ຕັ້ງໝັ້ນຢູ່ໃນຖານະແລະອະຖານະ ຕັ້ງໝັ້ນຢູ່ໃນປະຣິກັບ ຕັ້ງໝັ້ນຢູ່ໃນເລື້ອງທີ່ຄວນຮູ້ ຕັ້ງໝັ້ນຢູ່ໃນເລື້ອງປະຕິບັດ ເມື່ອເປັນແນວນີ້ບຸກຄົນນີ້ຊື່ວ່າ "ຜູ້ຄວນເວົ້ານຳ"

ຊາວໂລກເພິ່ງຮູ້ຈັກບຸກຄົນໄດ້ດ້ວຍການມາຮ່ວມປະຊຸມສົນທະນາກັນວ່າ "ຜູ້ນີ້ຄວນເວົ້ານຳຫຼືບໍ່ຄວນເວົ້ານຳ" ຖ້າບຸກຄົນນີ້ຖືກຖາມບັນຫາ ເວົ້າກົບເກື່ອນ ເວົ້ານອກເລື້ອງ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ເມື່ອເປັນແນວນີ້ບຸກຄົນນີ້ຊື່ວ່າ "ຜູ້ບໍ່ຄວນເວົ້ານຳ" ແຕ່ຖ້າບຸກຄົນນີ້ຖືກຖາມບັນຫາ ບໍ່ເວົ້າກົບເກື່ອນ ບໍ່ເວົ້ານອກເລື້ອງ ບໍ່ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ເມື່ອເປັນແນວນີ້ບຸກຄົນນີ້ຊື່ວ່າ "ຜູ້ຄວນເວົ້ານຳ"

ຊາວໂລກເພິ່ງຮູ້ຈັກບຸກຄົນໄດ້ດ້ວຍການມາຮ່ວມປະຊຸມສົນທະນາກັນວ່າ "ຜູ້ນີ້ຄວນເວົ້ານຳຫຼືບໍ່ຄວນເວົ້ານຳ" ຖ້າບຸກຄົນນີ້ຖືກຖາມບັນຫາ ເວົ້າຟຸ້ງເຟີ້ ເວົ້າຍ່ຳຍີ ເວົ້າຫົວເຍາະຫຍັນ ຖ້າຈັບຜິດ ເມື່ອເປັນແນວນີ້ບຸກຄົນນີ້ຊື່ວ່າ "ຜູ້ບໍ່ຄວນເວົ້ານຳ" ແຕ່ຖ້າບຸກຄົນນີ້ຖືກຖາມບັນຫາ ບໍ່ເວົ້າຟຸ້ງເຟີ້ ບໍ່ເວົ້າຍ່ຳຍີ ບໍ່ເວົ້າຫົວເຍາະຫຍັນ ບໍ່ຖ້າຈັບຜິດ ເມື່ອເປັນແນວນີ້ບຸກຄົນນີ້ຊື່ວ່າ "ຜູ້ຄວນເວົ້ານຳ"

ຊາວໂລກເພິ່ງຮູ້ຈັກບຸກຄົນໄດ້ດ້ວຍການມາຮ່ວມປະຊຸມສົນທະນາກັນວ່າ "ຜູ້ນີ້ມີອຸປະນິໄສບໍ່ມີອຸປະນິໄສ" ບຸກຄົນຜູ້ບໍ່ງ່ຽງຫູຟັງ ຊື່ວ່າ "ບໍ່ມີອຸປະນິໄສ" ບຸກຄົນຜູ້ງ່ຽງຫູຟັງຊື່ວ່າ "ມີອຸປະນິໄສ" ບຸກຄົນນັ້ນຜູ້ມີອຸປະນິໄສຍ່ອມຮູ້ທຳແນວໜຶ່ງ ກຳນົດຮູ້ທຳແນວໜຶ່ງ ລະທຳແນວໜຶ່ງ ເຮັດໃຫ້ແຈ້ງທຳແນວໜຶ່ງ ເຂົາເມື່ອຮູ້ຍິ່ງທຳແນວໜຶ່ງ ກຳນົດຮູ້ທຳແນວໜຶ່ງ ລະທຳແນວໜຶ່ງ ເຮັດໃຫ້ແຈ້ງທຳແນວໜຶ່ງ ຍ່ອມສຳຜັດຄວາມລຸດພົ້ນໂດຍຖືກຕ້ອງ ການສົນທະນາກັນມີປະໂຫຍດແນວນີ້ ການເປີກສາກັນມີປະໂຫຍດແນວນີ້ ອຸປະນິໄສມີປະໂຫຍດແນວນີ້ ການງ່ຽງຫູຟັງມີປະໂຫຍດແນວນີ້ ຄື ຄວາມລຸດພົ້ນແຫ່ງຈິດຍ້ອນຄວາມບໍ່ຖືໝັ້ນ

ຊົນເຫຼົ່າໃດເປັນຄົນມັກໂກດ
ຟຸ້ງຊ່ານ ໂອ້ອວດ ເວົ້າບໍ່ມີສາລະ
ຊົນເຫຼົ່ານັ້ນຊື່ວ່າຢຶດຖືຄຳເວົ້າທີ່ບໍ່ປະເສີດ
ແນມເບິ່ງເລື້ອງຜິດພາດຂອງກັນແລະກັນ
ຊົນເຫຼົ່າໃດຊົມຊື່ນທຸບພາສິດ ຄວາມຜິດພາດ
ຄວາມຫຼົງລືມ ຄວາມປຣາໄຊຂອງກັນແລະກັນ
ພຣະອະຣິຍະບໍ່ເວົ້າເຖິງເລື້ອງນັ້ນຂອງຊົນເຫຼົ່ານັ້ນ
ແຕ່ຖ້າບັນດິດຮູ້ຈັກການອັນເໝາະສົມແລ້ວ
ປະສົງຈະເວົ້າ ຄວນມີຄວາມຮູ້ ບໍ່ໂກດ ບໍ່ຟຸ້ງຊ່ານ
ບໍ່ໂອ້ອວດ ບໍ່ໃຈເບົາຫຸນຫັນພັນແລ່ນ ບໍ່ຖ້າຈັບຜິດ
ເວົ້າແຕ່ເລື້ອງທີ່ກ່ຽວກັບບຸກຄົນຜູ້ດຳລົງຢູ່ໃນທຳ
ເປັນເລື້ອງທີ່ພຣະອະຣິຍະປະພຶດກັນມາ
ຍ້ອນຮູ້ທົ່ວເຖິງໂດຍຖືກຕ້ອງ ເຂົາບໍ່ເວົ້າຣິດສະຫຍາ
ບຸກຄົນຄວນຊົມຊື່ນຄຳເວົ້າທີ່ເປັນສຸພາສິດ
ບໍ່ຄວນເຫຼື້ອມໃສຄຳເວົ້າທີ່ເປັນທຸບພາສິດ
ບໍ່ຄວນໃສ່ໃຈເຖິງຄວາມແຂ່ງດີ
ແລະບໍ່ຄວນຖ້າຈັບຜິດ ບໍ່ຄວນເວົ້າທັບຖົມ
ບໍ່ຄວນເວົ້າຍ່ຳຍີ ບໍ່ຄວນເວົ້າເຫຼາະແຫຼະ

ເພື່ອຄວາມຮູ້ ເພື່ອຄວາມເຫຼື້ອມໃສ
ສັດຕະບຸຣຸດທັງຫຼາຍຈຶ່ງມີການເປີກສາກັນ
ພຣະອະຣິຍະທັງຫຼາຍຍ່ອມເປີກສາກັນເຊັ່ນນັ້ນ
ນີ້ເປັນການເປີກສາກັນຂອງພຣະອະຣິຍະທັງຫຼາຍ
ບຸກຄົນຜູ້ມີປັນຍາຮູ້ເລື້ອງນີ້ແລ້ວ
ບໍ່ຄວນຖືໂຕ ຄວນເປີກສາກັນ

**ກະຖາວັດຖຸສູດ ທີ ໗ ຈົບ**

## ໘. ອັນຍະຕິດຖິຍະສູດ

## ວ່າດ້ວຍພວກອັນຍະເດຍຣະຖີ

[໖໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກ ເພິ່ງຖາມແນວນີ້ ວ່າ

ທ່ານທັງຫຼາຍ ທຳ ໓ ປະການນີ້ຄື (໑) ຣາຄະ (ຄວາມກຳໜັດ) (໒) ໂທສະ (ຄວາມຄິດປະທຸດສະຮ້າຍ) (໓) ໂມຫະ (ຄວາມຫຼົງ) ທ່ານທັງຫຼາຍ ທຳ ໓ ປະການນີ້ ທຳ ໓ ປະການນີ້ມີຄວາມແປກກັນແນວໃດ? ມີຄຳອະທິບາຍແນວໃດ? ມີຄວາມຕ່າງກັນແນວໃດ?

ທ່ານທັງຫຼາຍ ເມື່ອຖືກຖາມແນວນີ້ ເພິ່ງຕອບພວກເຂົາແນວໃດ?

ພິກຂຸເຫຼົ່ານັ້ນ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນບ່ອນເພິ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າທີ່ນັ້ນທີ່ຈະຊົງ ອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ່ມແຈ້ງໄດ້ ພິກຂຸທັງຫຼາຍ ຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈ ໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ຖ້າພວກອັນຍະເດຍຣະຖີປະຣິພາຊົກ ເພິ່ງຖາມແນວນີ້ວ່າ ທ່ານທັງຫຼາຍ ທຳ ໓ ປະການນີ້ຄື (໑) ຣາຄະ (໒) ໂທສະ (໓) ໂມຫະ ທ່ານທັງຫຼາຍ ທຳ ໓ ປະການນີ້ແລ ທຳ ໓ ປະການນີ້ມີຄວາມແປກກັນແນວໃດ? ມີຄຳອະທິບາຍແນວໃດ? ມີຄວາມຕ່າງກັນແນວໃດ?

ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບພວກເຂົາແນວນີ້ວ່າ ຣາຄະມີໂທດໜ້ອຍແຕ່ຄາຍຊ້າ ໂທສະມີໂທດຫຼາຍແຕ່ຄາຍໄວ ໂມຫະມີໂທດຫຼາຍແລະຄາຍຊ້າ

ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມແນວນີ້ວ່າ ອັນໃດເປັນເຫດເປັນປັດໄຈໃຫ້ຣາຄະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ທ່ານທັງຫຼາຍເພິ່ງຕອບວ່າ "ສຸພະນິມິດ" ເມື່ອມະນະສິການສຸພະນິມິດໂດຍບໍ່ແຍບຄາຍ ຣາຄະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວ ກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນນີ້ເປັນເຫດເປັນປັດໄຈໃຫ້ຣາຄະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມແນວນີ້ວ່າ ອັນໃດ? ເປັນເຫດເປັນປັດໄຈໃຫ້ໂທສະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ທ່ານທັງຫຼາຍເພິ່ງຕອບວ່າ "ປະຕິຄະນິມິດ" ເມື່ອມະນະສິການປະຕິຄະນິມິດໂດຍບໍ່ແຍບຄາຍ ໂທສະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ນີ້ແລ ເປັນເຫດເປັນປັດໄຈໃຫ້ໂທສະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມແນວນີ້ວ່າ ອັນໃດເປັນເຫດເປັນປັດໄຈໃຫ້ໂມຫະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ທ່ານທັງຫຼາຍເພິ່ງຕອບວ່າ "ອະໂຍນິໂສມະນະສິການ" ເມື່ອມະນະສິການໂດຍບໍ່ແຍບຄາຍ ໂມຫະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ນີ້ແລ ເປັນເຫດເປັນປັດໄຈໃຫ້ໂມຫະທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມແນວນີ້ວ່າ ອັນໃດ ເປັນເຫດເປັນປັດໄຈໃຫ້ຣາຄະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້

ທ່ານທັງຫຼາຍເພິ່ງຕອບວ່າ "ອະສຸພະນິມິດ" ເມື່ອມະນະສິການອະສຸພະນິມິດໂດຍແຍບຄາຍ ຣາຄະ ທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້ ນີ້ແລ ເປັນເຫດເປັນປັດໄຈໃຫ້ຣາຄະທີ່ ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້

ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມແນວນີ້ວ່າ ອັນໃດ ເປັນເຫດເປັນປັດໄຈໃຫ້ໂທສະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້

ທ່ານທັງຫຼາຍເພິ່ງຕອບວ່າ "ເມດຕາເຈໂຕວິມຸດຕິ" ເມື່ອມະນະສິການເມດຕາເຈໂຕວິມຸດຕິໂດຍແຍບຄາຍ ໂທສະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້ ນີ້ແລ ເປັນເຫດເປັນປັດໄຈໃຫ້ໂທສະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້

ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມແນວນີ້ວ່າ ອັນໃດ ເປັນເຫດເປັນປັດໄຈໃຫ້ໂມຫະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້

ທ່ານທັງຫຼາຍ ເພິ່ງຕອບວ່າ "ໂຍນິໂສມະນະສິການ" ເມື່ອມະນະສິການໂດຍແຍບຄາຍໂມຫະ ທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້ ນີ້ແລ ເປັນເຫດເປັນປັດໄຈໃຫ້ໂມຫະທີ່ຍັງບໍ່ເກີດຂຶ້ນກໍບໍ່ເກີດຂຶ້ນ ຫຼື ທີ່ເກີດຂຶ້ນແລ້ວກໍລະໄດ້

**ອັນຍະຕິດຖິຍະສູດທີ ໙ ຈົບ**

## ໑. ອະກຸສົນມູລະສູດ

## ວ່າດ້ວຍຮາກເຫງົ້າຂອງອະກຸສົນ

[໗໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອະກຸສົນມູນ (ຮາກເຫງົ້າຂອງອະກຸສົນ) ໓ ປະການນີ້

ອະກຸສົນມູນ ໓ ປະການ ອັນໃດແດ່ ຄື

໑. ອະກຸສົນມູນ ຄື ໂລພະ (ຄວາມຢາກໄດ້)
໒. ອະກຸສົນມູນ ຄື ໂທສະ (ຄວາມຄິດປະທຸດສະຮ້າຍ)
໓. ອະກຸສົນມູນ ຄື ໂມຫະ (ຄວາມຫຼົງ)

ໂລພະຈັດເປັນອະກຸສົນມູນ ກຳທີ່ບຸກຄົນຜູ້ມີໂລພະເຮັດທາງກາຍ ວາຈາແລະໃຈຈັດເປັນອະກຸສົນກຳ ແມ່ນກຳຂອງບຸກຄົນຜູ້ມີໂລພະ ຖືກໂລພະຄອບງຳ ມີຈິດຖືກໂລພະກຸ້ມລຸມ ກໍ່ທຸກໃຫ້ເກີດຂຶ້ນແກ່ຜູ້ອື່ນດ້ວຍເລື່ອງທີ່ບໍ່ຈິງ ດ້ວຍການບຽດບຽນ ຄຸມຂັງ ໃຫ້ເສຍຊັບ ຕິຕຽນ ຫຼື ຂັບໄລ່ ໂດຍອວດອ້າງວ່າ "ເຮົາມີກຳລັງ ຊົງພະລັງ" ກໍຈັດເປັນອະກຸສົນກຳ ບາບອະກຸສົນທຳຫຼວງຫຼາຍເຫຼົ່ານີ້ ທີ່ເກີດຈາກ ໂລພະ ມີໂລພະເປັນເຫດ ມີໂລພະເປັນແດນເກີດ ມີໂລພະເປັນປັດໄຈ ຍ່ອມເກີດມີແກ່ບຸກຄົນຜູ້ມີໂລພະນັ້ນດ້ວຍປະການດັ່ງນີ້

ໂທສະຈັດເປັນອະກຸສົນມູນ ກຳທີ່ບຸກຄົນຜູ້ມີໂທສະເຮັດທາງກາຍ ວາຈາ ແລະໃຈຈັດເປັນອະກຸສົນກຳ ແມ່ນກຳຂອງບຸກຄົນຜູ້ມີໂທສະ ຖືກໂທສະຄອບງຳ ມີຈິດຖືກໂທສະກຸ້ມລຸມ

ກໍ່ທຸກໃຫ້ເກີດຂຶ້ນແກ່ຜູ້ອື່ນດ້ວຍເລື້ອງທີ່ບໍ່ຈິງ ດ້ວຍການບຽດບຽນ ຄຸມຂັງ ໃຫ້ເສຍຊັບ ຕິຽນ ຫຼື ຂັບໄລ່ ໂດຍອວດອ້າງວ່າ "ເຮົາມີກຳລັງ ຊົງພະລັງ" ກໍຈັດເປັນອະກຸສົນກຳ ບາບອະກຸສົນທຳຫຼວງຫຼາຍເຫຼົ່ານີ້ເກີດຈາກໂທສະ ມີໂທສະເປັນເຫດ ມີໂທສະເປັນແດນເກີດ ມີໂທສະເປັນປັດໄຈຍ່ອມເກີດມີແກ່ບຸກຄົນຜູ້ມີໂທສະນັ້ນດ້ວຍປະການດັ່ງນີ້

ໂມຫະຈັດເປັນອະກຸສົນມູນ ກຳທີ່ບຸກຄົນຜູ້ມີໂມຫະເຮັດທາງກາຍ ວາຈາ ແລະໃຈຈັດເປັນອະກຸສົນກຳ ແມ່ນກຳຂອງບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ກໍ່ທຸກໃຫ້ເກີດຂຶ້ນແກ່ຜູ້ອື່ນດ້ວຍເລື້ອງທີ່ບໍ່ຈິງ ດ້ວຍການບຽດບຽນ ຄຸມຂັງ ໃຫ້ເສຍຊັບ ຕິຽນ ຫຼື ຂັບໄລ່ ໂດຍອວດອ້າງວ່າ "ເຮົາມີກຳລັງ ຊົງພະລັງ" ກໍຈັດເປັນອະກຸສົນກຳ

ບາບອະກຸສົນທຳຫຼວງຫຼາຍເຫຼົ່ານີ້ເກີດຈາກໂມຫະ ມີໂມຫະເປັນເຫດ ມີໂມຫະເປັນແດນເກີດ ມີໂມຫະເປັນປັດໄຈຍ່ອມເກີດມີແກ່ຜູ້ບຸກຄົນຜູ້ມີໂມຫະນັ້ນ ດ້ວຍປະການດັ່ງນີ້

ບຸກຄົນແນວນີ້ຮຽກວ່າ ອະກາລະວາທີ (ກ່າວບໍ່ຖືກເວລາ) ແດ່ ອະພູຕະວາທີ (ກ່າວເລື້ອງບໍ່ຈິງ) ແດ່ ອະນັດຖະວາທີ (ກ່າວບໍ່ອີງອັດຖະ) ແດ່ ອະທຳມະວາທີ (ກ່າວບໍ່ອີງທຳ) ແດ່ ອະວິນະຍະວາທີ (ກ່າວບໍ່ອີງວິໄນ) ແດ່

ຍ້ອນເຫດໃດ ບຸກຄົນແນວນີ້ຈຶ່ງຮຽກວ່າ ອະກາລະວາທີແດ່ ອະພູຕະວາທີແດ່ ອະນັດຖະວາທີແດ່ ອະທຳມະວາທີແດ່ ອະວິນະຍະວາທີແດ່

ຍ້ອນບຸກຄົນນີ້ ກໍ່ທຸກໃຫ້ເກີດຂຶ້ນແກ່ຜູ້ອື່ນດ້ວຍເລື້ອງທີ່ບໍ່ເປັນຈິງ ດ້ວຍການບຽດບຽນ ຄຸມຂັງ ໃຫ້ເສຍຊັບ ຕິຽນ ຫຼືຂັບໄລ່ ໂດຍອວດອ້າງວ່າ "ເຮົາມີກຳລັງ ຊົງພະລັງ"ແດ່ ເຂົາເມື່ອຖືກວ່າກ່າວດ້ວຍເລື້ອງທີ່ເປັນຈິງກໍປະຕິເສດ ບໍ່ຍອມຮັບ ເມື່ອຖືກວ່າກ່າວດ້ວຍເລື້ອງທີ່ບໍ່ເປັນຈິງກັບບໍ່ພະຍາຍາມທີ່ຈະປະຕິເສດເລື້ອງນັ້ນວ່າ "ແມ່ນຍ້ອນເຫດນີ້ເລື້ອງນີ້ຈຶ່ງບໍ່ຈິງ ບໍ່ແທ້" ດັ່ງນັ້ນ ບຸກຄົນແນວນີ້ຈຶ່ງຮຽກວ່າ ອະກາລະວາທີແດ່ ອະພູຕະວາທີແດ່ ອະນັດຖະວາທີແດ່ ອະທຳມະວາທີແດ່ ອະວິນະຍະວາທີແດ່

ບຸກຄົນແນວນີ້ ຖືກບາບອະກຸສົນທຳທີ່ເກີດຍ້ອນໂລພະຄອບງຳ ມີຈິດຖືກບາບອະກຸສົນທຳທີ່ເກີດຍ້ອນໂລພະກຸ້ມລຸມ ຍ່ອມຢູ່ເປັນທຸກ ລຳບາກ ຄັບແຄ້ນ ເດືອດຮ້ອນໃນປັດຈຸບັນ ຫຼັງຈາກຕາຍແລ້ວຍ່ອມຫວັງໄດ້ທຸກຄະຕິ[໑]

ບຸກຄົນແນວນີ້ ຖືກບາບອະກຸສົນທຳທີ່ເກີດຍ້ອນໂທສະ ຯລຯ ທີ່ເກີດຍ້ອນໂມຫະ ຄອບງຳ ມີ ຈິດຖືກບາບອະກຸສົນທຳທີ່ເກີດຍ້ອນໂມຫະກຸ້ມລຸມ ຍ່ອມຢູ່ເປັນທຸກ ລຳບາກ ຄັບແຄ້ນ ເດືອດຮ້ອນໃນປັດຈຸບັນ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ທຸກຄະຕິ

ປຽບຄື ຕົ້ນສາລະ ຕົ້ນກາກະເລົາ ຫຼືຕົ້ນຄໍ້ທີ່ຖືກເຄືອເຂົາ ໓ ຊະນິດ ຄຸມຍອດ ພັນຮອບຕົ້ນ ຍ່ອມເຖິງຄວາມເສື່ອມ ເຖິງຄວາມພິນາດ ເຖິງຄວາມສູນຫາຍສັນໃດ

ບຸກຄົນແນວນີ້ ຖືກບາບອະກຸສົນທຳທີ່ເກີດຍ້ອນໂລພະຄອບງຳ ມີຈິດຖືກບາບອະກຸສົນທຳທີ່ເກີດຍ້ອນໂລພະກຸ້ມລຸມ ຍ່ອມຢູ່ເປັນທຸກ ລຳບາກ ຄັບແຄ້ນ ເດືອດຮ້ອນໃນປັດຈຸບັນ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ທຸກຄະຕິ

ບຸກຄົນແນວນີ້ ຖືກບາບອະກຸສົນທຳທີ່ເກີດຍ້ອນໂທສະ ຯລຯ ທີ່ເກີດຍ້ອນໂມຫະ ຄອບງຳ ມີຈິດຖືກບາບອະກຸສົນທຳທີ່ເກີດຍ້ອນໂມຫະກຸ້ມລຸມ ຍ່ອມຢູ່ເປັນທຸກ ລຳບາກ ຄັບແຄ້ນເດືອດຮ້ອນໃນປັດຈຸບັນ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ທຸກຄະຕິ ກໍສັນນັ້ນ ຄືກັນ

ພິກຂຸທັງຫຼາຍ ອະກຸສົນມູນ ໓ ປະການນີ້ແລ

ກຸສົນມູນ (ຮາກເຫງົ້າແຫ່ງກຸສົນ) ໓ ປະການນີ້

ກຸສົນມູນ ໓ ປະການ ອັນໃດແດ່ ຄື

໑. ກຸສົນມູນ ຄື ອະໂລພະ (ຄວາມບໍ່ຢາກໄດ້)
໒. ກຸສົນມູນ ຄື ອະໂທສະ (ຄວາມບໍ່ຄິດປະທຸດສະຮ້າຍ)
໓. ກຸສົນມູນ ຄື ອະໂມຫະ (ຄວາມບໍ່ຫຼົງ)

ອະໂລພະຈັດເປັນກຸສົນມູນ ກຳທີ່ບຸກຄົນຜູ້ບໍ່ມີໂລພະເຮັດທາງກາຍ ວາຈາ ແລະໃຈຈັດເປັນກຸສົນກຳ ແມ່ນກຳຂອງບຸກຄົນຜູ້ບໍ່ມີໂລພະ ບໍ່ຖືກໂລພະຄອບງຳ ມີຈິດບໍ່ຖືກໂລພະກຸ້ມລຸມບໍ່ກໍ່ທຸກໃຫ້ເກີດແກ່ຜູ້ອື່ນດ້ວຍເລື້ອງທີ່ບໍ່ເປັນຈິງ ດ້ວຍການບຽດບຽນ ຄຸມຂັງ ໃຫ້ເສຍຊັບ ຕິຕຽນຫຼືຂັບໄລ່ ໂດຍອວດອ້າງວ່າ “ເຮົາມີກຳລັງ ຊົງພະລັງ” ກໍຈັດເປັນກຸສົນກຳ ກຸສົນທຳຫຼວງຫຼາຍເຫຼົ່ານີ້ທີ່ເກີດຈາກອະໂລພະ ມີອະໂລພະເປັນເຫດ ມີອະໂລພະເປັນແດນເກີດ ມີອະໂລພະເປັນປັດໄຈຍ່ອມເກີດມີແກ່ບຸກຄົນຜູ້ບໍ່ມີໂລພະນັ້ນ ດ້ວຍປະການດັ່ງນີ້

ອະໂທສະຈັດເປັນກຸສົນມູນ ກຳທີ່ບຸກຄົນຜູ້ບໍ່ມີໂທສະເຮັດທາງກາຍ ວາຈາ ແລະໃຈຈັດເປັນກຸສົນກຳ ແມ່ນກຳຂອງບຸກຄົນຜູ້ບໍ່ມີໂທສະ ບໍ່ຖືກໂທສະຄອບງຳ ມີຈິດບໍ່ຖືກໂທສະກຸ້ມລຸມ ບໍ່ກໍ່ທຸກໃຫ້ເກີດຂຶ້ນແກ່ຜູ້ອື່ນດ້ວຍເລື້ອງທີ່ບໍ່ເປັນຈິງ ດ້ວຍການບຽດບຽນ ຄຸມຂັງ ໃຫ້ເສຍຊັບ ຕິຕຽນ ຫຼື ຂັບໄລ່ ໂດຍອວດອ້າງວ່າ “ເຮົາມີກຳລັງ ຊົງພະລັງ” ກໍຈັດເປັນກຸສົນກຳ ກຸສົນທຳຫຼວງຫຼາຍເຫຼົ່ານີ້ທີ່ເກີດຈາກອະໂທສະ ມີອະໂທສະເປັນເຫດ ມີອະໂທສະເປັນແດນເກີດ ມີອະໂທສະເປັນປັດໄຈຍ່ອມເກີດມີແກ່ບຸກຄົນຜູ້ບໍ່ມີໂທສະນັ້ນ ດ້ວຍປະການດັ່ງນີ້

ອະໂມຫະຈັດເປັນກຸສົນມູນ ກຳທີ່ບຸກຄົນຜູ້ບໍ່ມີໂມຫະເຮັດທາງກາຍ ວາຈາ ແລະໃຈຈັດເປັນກຸສົນກຳ ແມ່ນກຳຂອງບຸກຄົນຜູ້ບໍ່ມີໂມຫະ ບໍ່ຖືກໂມຫະຄອບງຳ ມີຈິດບໍ່ຖືກໂມຫະກຸ້ມລຸມ ບໍ່ກໍ່ທຸກໃຫ້ເກີດຂຶ້ນແກ່ຜູ້ອື່ນດ້ວຍເລື້ອງທີ່ບໍ່ເປັນຈິງ ດ້ວຍການບຽດບຽນ ຄຸມຂັງ ເຮັດໃຫ້ເສຍຊັບ ຕິຕຽນ ຫຼື ຂັບໄລ່ ໂດຍອວດອ້າງວ່າ “ເຮົາມີກຳລັງ ຊົງພະລັງ” ກໍຈັດເປັນກຸສົນກຳ ກຸສົນທຳຫຼວງຫຼາຍເຫຼົ່ານີ້ທີ່ເກີດຈາກອະໂມຫະ ມີອະໂມຫະເປັນເຫດ ມີອະໂມຫະເປັນແດນເກີດ ມີອະໂມຫະເປັນປັດໄຈ ຍ່ອມເກີດມີແກ່ບຸກຄົນຜູ້ບໍ່ມີໂມຫະນັ້ນ ດ້ວຍປະການດັ່ງນີ້

ບຸກຄົນແບບນີ້ຮຽກວ່າ ກາລະວາທີແດ່ ພູຕະວາທີແດ່ ອັດຖະວາທີແດ່ ທຳມະວາທີແດ່ ວິນະຍະວາທີແດ່

ຍ້ອນເຫດໃດ ບຸກຄົນແບບນີ້ຈຶ່ງຮຽກວ່າ ກາລະວາທີແດ່ ພູຕະວາທີແດ່ ອັດຖະວາທີແດ່ ທຳມະວາທີແດ່ ວິນະຍະວາທີແດ່

ຍ້ອນບຸກຄົນນີ້ ບໍ່ກໍ່ທຸກໃຫ້ເກີດຂຶ້ນແກ່ຜູ້ອື່ນດ້ວຍເລື້ອງທີ່ບໍ່ເປັນຈິງ ດ້ວຍການບຽດບຽນ ຄຸມຂັງ ໃຫ້ເສຍຊັບ ຕິຕຽນ ຫຼື ຂັບໄລ່ ໂດຍອວດອ້າງວ່າ “ເຮົາມີກຳລັງ ຊົງພະລັງ” ເຂົາເມື່ອຖືກວ່າກ່າວດ້ວຍເລື້ອງທີ່ເປັນຈິງກໍຍອມຮັບບໍ່ປະຕິເສດ ເມື່ອຖືກວ່າກ່າວດ້ວຍເລື້ອງທີ່ບໍ່ເປັນຈິງກໍພະຍາຍາມທີ່ຈະປະຕິເສດເລື້ອງນັ້ນວ່າ “ແມ່ນຍ້ອນເຫດນີ້ເລື້ອງນີ້ຈຶ່ງບໍ່ຈິງ ບໍ່ແທ້” ດັ່ງນັ້ນບຸກຄົນແບບນີ້ຈຶ່ງຮຽກວ່າ ກາລະວາທີແດ່ ພູຕະວາທີແດ່ ອັຕຖະວາທີແດ່ ທຳມະວາທີແດ່ ວິນະຍະວາທີແດ່

ບາບອະກຸສົນທຳທີ່ເກີດຈາກໂລພະເປັນອັນບຸກຄົນແບບນີ້ ລະໄດ້ເດັດຂາດຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ເຂົາຍ່ອມຢູ່ເປັນສຸກ ບໍ່ລຳບາກ ບໍ່ຄັບແຄ້ນ ບໍ່ເດືອດຮ້ອນໃນປັດຈຸບັນ ຍ່ອມປະຣິນິບພານໃນອັດຕະພາບປັດຈຸບັນ

ບາບອະກຸສົນທຳທີ່ເກີດຈາກໂທສະ ໆລໆ ທີ່ເກີດຈາກໂມຫະເປັນອັນບຸກຄົນແບບນີ້ລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ເຂົາຍ່ອມຢູ່ເປັນສຸກ ບໍ່ລຳບາກ ບໍ່ຄັບແຄ້ນ ບໍ່ເດືອດຮ້ອນໃນປັດຈຸບັນ ຍ່ອມປະຣິນິບພານໃນອັດຕະພາບປັດຈຸບັນ

ປຽບຄື ຕົ້ນສາລະ ຕົ້ນກາກະເລົາ ຫຼືຕົ້ນຄໍ້ ຖືກເຄືອເຂົາ ໓ ຊະນິດຄຸມຍອດພັນຮອບຕົ້ນ ບັດນັ້ນ ບຸຣຸດຖືຈົກແລະກະຕ່າມາຕັດເຄືອເຂົາແລ້ວ ກໍຂຸດຮອບ ໆ ເຫງົ້າ ດຶງຮາກຂຶ້ນແມ່ນກະທັ່ງທໍ່ຮາກຫຍ້າຄາ ເຂົາຟັກເຄືອເຂົານັ້ນເປັນທ່ອນເລັກທ່ອນນ້ອຍແລ້ວ ຜ່າອອກເອົາລວມກັນເຂົ້າຕາກລົມ ແລະແດດແລ້ວເອົາໄຟເຜົາເຮັດໃຫ້ເປັນຂີ້ ແລ້ວໂຮຍໃສ່ລົມແຮງ ຫຼື ລອຍໃນແມ່ນ້ຳທີ່

ໄຫຼແຮງ ເຄືອເຂົາເຫຼົ່ານັ້ນ ຖືກບຸຣຸດນັ້ນຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ສັນໃດ

ພິກຂຸທັງຫຼາຍ ບາບອະກຸສົນທຳທີ່ເກີດຈາກໂລພະເປັນອັນບຸກຄົນແນວນີ້ ລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ເຂົາຍ່ອມຢູ່ເປັນສຸກ ບໍ່ລຳບາກ ບໍ່ຄັບແຄ້ນ ບໍ່ເດືອດຮ້ອນໃນປັດຈຸບັນ ຍ່ອມປະຣິນິບພານໃນອັດຕະພາບປັດຈຸບັນ

ບາບອະກຸສົນທຳທີ່ເກີດຈາກໂທສະ ຯລຯ ທີ່ເກີດຈາກໂມຫະເປັນອັນບຸກຄົນແນວນີ້ລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ເຂົາຍ່ອມຢູ່ເປັນສຸກ ບໍ່ລຳບາກ ບໍ່ຄັບແຄ້ນ ບໍ່ເດືອດຮ້ອນໃນປັດຈຸບັນຍ່ອມປະຣິນິບພານໃນອັດຕະພາບປັດຈຸບັນ ກໍຄືກັນສັນນັ້ນ

ພິກຂຸທັງຫຼາຍ ກຸສົນມູນ ໓ ປະການນີ້ແລ

**ອະກຸສົນມູລະສູດທີ ໙ ຈົບ**

## ໑໐. ອຸໂປສະຖະສູດ

## ວ່າດ້ວຍອຸໂປສົດ

[໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ຜາສາດຂອງນາງວິສາຂາມິຄາຣະມາຕາໃນບຸບພາຣາມ ເຂດນະຄອນສາວັດຖີ ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ໃນມື້ອຸໂປສົດນັ້ນ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບນາງວິສາຂາດັ່ງນີ້ວ່າ ວິສາຂາ ທ່ານມາຈາກໄສແຕ່ຍັງເວັນແທ້

ນາງວິສາຂາຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ມື້ນີ້ຂ້ານ້ອຍຈະຖືຮັກສາອຸໂປສົດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິສາຂາ ອຸໂປສົດມີ ໓ ປະການ

ອຸໂປສົດ ໓ ປະການ ອັນໃດແດ່ ຄື

໑. ໂຄປາລະອຸໂປສົດ (ອຸໂປສົດທີ່ປະຕິບັດຄືກັບຄົນລ້ຽງງົວ)

໘. ນິຄັນຖະອຸໂປສົດ (ອຸໂປສົດທີ່ປະຕິບັດຄືກັບນິຄົນ)
໙. ອະຣິຍະອຸໂປສົດ (ອຸໂປສົດປະຕິບັດຄືກັບອະຣິຍະສາວົກ)

ໂຄປາລະອຸໂປສົດ ເປັນແນວໃດ?

ຄື ຄົນລ້ຽງງົວໃນຕອນຄ່ຳມອບງົວໃຫ້ເຈົ້າຂອງຍ່ອມເຫັນປະຈັກແນວນີ້ວ່າ ມື້ນີ້ງົວທັງຫຼາຍທ່ຽວໄປໃນບ່ອນນັ້ນ ໆ ດື່ມນ້ຳໃນແຫຼ່ງນັ້ນ ໆ ມື້ອື່ນ ໃນຕອນນີ້ງົວທັງຫຼາຍຈັກທ່ຽວໄປໃນບ່ອນນັ້ນ ໆ ຈັກດື່ມນ້ຳໃນແຫຼ່ງນັ້ນ ໆ ສັນໃດ ຄົນທີ່ຖືຮັກສາອຸໂປສົດລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ຄິດແນວນີ້ວ່າ "ມື້ນີ້ເຮົາເອງຫຍ້ຳກິນຂອງຫຍ້ຳຊະນິດນີ້ ໆ ບໍຣິໂພກຂອງກິນຊະນິດນີ້ ໆ ມື້ອື່ນ ໃນຕອນນີ້ເຮົາຈັກຫຍ້ຳກິນຂອງຫຍ້ຳຊະນິດນີ້ ໆ ຈັກບໍຣິໂພກຂອງກິນຊະນິດນີ້ ໆ" ບຸກຄົນນັ້ນ ມີໃຈປະກອບດ້ວຍອະພິດຊາ ຍ່ອມໃຫ້ມື້ເວລາຜ່ານໄປນຳໂລພະນັ້ນ

ວິສາຂາ ໂຄປາລະອຸໂປສົດເປັນແນວນີ້ແລ ໂຄປາລະອຸໂປສົດທີ່ບຸກຄົນຖືຮັກສາແນວນີ້ຍ່ອມບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ບໍ່ມີຄວາມຮຸ່ງເຮືອງຫຼາຍ ບໍ່ແຜ່ໄພສານຫຼາຍ (໑)

ນິຄັນຖະອຸໂປສົດ ເປັນແນວໃດ?

ຄື ມີສະມະນະນິກາຍໜຶ່ງນາມວ່ານິຄົນ ນິຄົນເຫຼົ່ານັ້ນ ຊັກຊວນສາວົກແນວນີ້ວ່າ "ມາເຖີ້ນ ທ່ານ ທ່ານຈົ່ງລົງອາຍາໃນໝູ່ສັດທີ່ຢູ່ທາງທິດຕາເວັນອອກເລີຍຮ້ອຍໂຍດໄປ ຈົ່ງລົງອາຍາໃນໝູ່ສັດທີ່ຢູ່ທາງທິດຕາເວັນຕົກເລີຍຮ້ອຍໂຍດໄປ ຈົ່ງລົງອາຍາໃນໝູ່ສັດທີ່ຢູ່ທາງທິດເໜືອເລີຍຮ້ອຍໂຍດໄປ ຈົ່ງລົງອາຍາໃນໝູ່ສັດທີ່ຢູ່ທາງທິດໃຕ້ເລີຍຮ້ອຍໂຍດໄປ" ນິຄົນເຫຼົ່ານັ້ນຊັກຊວນເພື່ອອິດູອະນຸເຄາະສັດບາງເຫຼົ່າບໍ່ຊັກຊວນ ເພື່ອອິດູອະນຸເຄາະສັດບາງເຫຼົ່າດ້ວຍປະການດັ່ງນີ້ນິຄົນເຫຼົ່ານັ້ນ ຊັກຊວນສາວົກແນວນີ້ໃນມື້ອຸໂປສົດມື້ນັ້ນວ່າ "ມາເຖີ້ນ ທ່ານ ທ່ານຈົ່ງຖິ້ມຜ້າທຸກຜືນ ແລ້ວກ່າວແນວນີ້ວ່າ "ເຮົາບໍ່ເປັນທີ່ກັງວົນ ຂອງໃຜ ໆ ໃນບ່ອນໃດ ໆ ແລະໂຕເຮົາກໍບໍ່ມີຄວາມກັງວົນໃນບຸກຄົນແລະ ສິ່ງຂອງໃດ ໆ ໃນບ່ອນໃດ ໆ" ແຕ່ບິດາ ແລະມານດາຂອງເຂົາຮູ້ຢູ່ວ່າ "ຜູ້ນີ້ເປັນບຸດຂອງເຮົາ" ແມ່ນເຂົາກໍຮູ້ວ່າ "ທ່ານເຫຼົ່ານີ້ເປັນບິດາແລະມານດາຂອງເຮົາ" ອັນໜຶ່ງ ບຸດແລະພັນລະຍາຂອງເຂົາກໍຮູ້ວ່າ "ຜູ້ນີ້ເປັນສາມີຂອງເຮົາ" ແມ່ນໂຕເຂົາກໍຮູ້ວ່າ "ຜູ້ນີ້ເປັນບຸດແລະພັນລະຍາຂອງເຮົາ" ພວກຂ້າທາດ ຄົນງານ ແລະຄົນຮັບໃຊ້ໃກ້ຊິດກໍຮູ້ວ່າ "ຜູ້ນີ້ເປັນນາຍຂອງພວກເຮົາ" ແມ່ນເຂົາກໍຮູ້ວ່າ "ຄົນເຫຼົ່ານີ້ເປັນຂ້າທາດ ຄົນງານ ແລະຄົນຮັບໃຊ້ໃກ້ຊິດຂອງເຮົາ" ນິຄົນເຫຼົ່ານັ້ນ ຊັກຊວນໃນການເວົ້າຕົວະໃນເວລາທີ່ຄວນຊັກຊວນໃນການເວົ້າຄຳສັດດ້ວຍປະການດັ່ງນີ້ ເຮົາກ່າວເຖິງກຳນີ້ຂອງຜູ້ນັ້ນວ່າເປັນມຸສາວາທະ ພໍລ່ວງຣາຕີນັ້ນໄປ ເຂົາບໍຣິໂພກໂພຄະເຫຼົ່ານັ້ນທີ່ເຈົ້າຂອງບໍ່ໄດ້ໃຫ້ ເຮົາກ່າວເຖິງກຳນີ້ຂອງຜູ້ນັ້ນວ່າເປັນອະທິນນາທານ

ວິສາຂາ ນິຄັນຖະອຸໂປສົດເປັນແບວນີ້ ນິຄັນຖະອຸໂປສົດທີ່ບຸກຄົນຖືຮັກສາແບບນີ້ແລ ຍ່ອມບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ບໍ່ມີຄວາມຮຸ່ງເຮືອງຫຼາຍ ບໍ່ແຜ່ໄພສານຫຼາຍ (໘)

ອະຣິຍະອຸໂປສົດ ເປັນແນວໃດ?

ຄື ໑. ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວ ຍ່ອມມີໄດ້ດ້ວຍຄວາມພຽນ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍ ວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ເມື່ອອະຣິຍະສາວົກຣະນຶກເຖິງຕະຖາຄົດຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ປຽບຄື ການເຮັດຫົວທີ່ເປື້ອນໃຫ້ສະອາດ ຍ່ອມມີໄດ້ດ້ວຍຄວາມພຽນ ການເຮັດຫົວທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ການເຮັດຫົວທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ຍ້ອນອາໄສຊ່າ ດິນໜຽວ ນ້ຳ ແລະອາໄສຄວາມພະຍາຍາມອັນເໝາະສົມແກ່ເຫດນັ້ນຂອງບຸກຄົນ ການເຮັດຫົວທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ຣະນຶກເຖິງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ເມື່ອທ່ານຣະນຶກເຖິງຕະຖາຄົດຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມະປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ອະຣິຍະສາວົກນີ້ເຮົາຮຽກວ່າ ຖືຮັກສາພົມອຸໂປສົດ ຢູ່ຮ່ວມກັບພົມ ແລະຍ້ອນຜາຣົບພົມ ຈິດຂອງທ່ານຈຶ່ງຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ (ໞ ກ)

໘. ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວ ຍ່ອມມີໄດ້ດ້ວຍຄວາມພຽນ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ" ເມື່ອທ່ານຣະນຶກເຖິງພຣະທຳຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມະປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວ ຍ່ອມມີໄດ້ດ້ວຍຄວາມພຽນ ປຽບຄື ການເຮັດກາຍທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ດ້ວຍຄວາມພຽນ

ການເຮັດກາຍທີ່ເປື້ອນໃຫ້ສະອາດ ຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ການເຮັດກາຍທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ຍ້ອນອາໄສເຊືອກ ຜົງອາບນໍ້າ ແລະອາໄສຄວາມພະຍາຍາມອັນເໝາະສົມແກ່ເຫດນັ້ນຂອງບຸກຄົນ ການເຮັດກາຍທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວ ຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ฯລฯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ" ເມື່ອທ່ານຣະນຶກເຖິງພຣະທຳຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້

ອະຣິຍະສາວົກນີ້ເຮົາຮຽກວ່າ ຖືຮັກສາທຳມະອຸໂປສົດ ຢູ່ຮ່ວມກັບທຳ ແລະຍ້ອນຜາຣົບທຳ ຈິດຂອງທ່ານຈຶ່ງຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ (ໝ ຂ)

ໝ. ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນ ອັນປະເສີດຂອງໂລກ" ເມື່ອທ່ານຣະນຶກເຖິງພຣະສົງຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວ ຍ່ອມມີໄດ້ດ້ວຍຄວາມພຽນ ປຽບຄື ການເຮັດຜ້າທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ຄວາມພຽນ

ການເຮັດຜ້າທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ການເຮັດຜ້າທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ຍ້ອນອາໄສເກືອ ນ້ຳດ່າງ ມູນງົວ ນ້ຳແລະອາໄສຄວາມພະຍາຍາມອັນເໝາະສົມແກ່ເຫດນັ້ນຂອງບຸກຄົນ ການເຮັດຜ້າທີ່ເປື້ອນໃຫ້ສະອາດຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ" ເມື່ອທ່ານຣະນຶກເຖິງພຣະສົງຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ອະຣິຍະສາວົກນີ້ ເຮົາຮຽກວ່າຖືຮັກສາສັງຄະອຸໂປສົດ ຢູ່ຮ່ວມກັບພຣະສົງ ແລະຍ້ອນຜາຣົບສົງ ຈິດຂອງທ່ານຈຶ່ງຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ (ພ ຄ)

໔. ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງສີນຂອງຕົນທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະແກ່ໂຕ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ເມື່ອທ່ານຣະນຶກເຖິງສີນຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມະປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວ ຍ່ອມມີໄດ້ດ້ວຍຄວາມພຽນ ປຽບຄື ການເຮັດແວ່ນທີ່ມົວໃຫ້ໃສຍ່ອມມີໄດ້ດ້ວຍຄວາມພຽນ

ການເຮັດແວ່ນທີ່ມົວໃຫ້ໃສຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ການເຮັດແວ່ນທີ່ມົວໃຫ້ໃສຍ່ອມມີໄດ້ຍ້ອນອາໄສນ້ຳມັນ ເທົ່າ ແປງ ແລະອາໄສຄວາມພະຍາຍາມອັນເໝາະສົມແກ່ເຫດນັ້ນຂອງບຸກຄົນ ການເຮັດແວ່ນທີ່ມົວໃຫ້ໃສຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງສີນຂອງຕົນທີ່ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ເມື່ອທ່ານຣະນຶກເຖິງສີນຂອງຕົນຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມະປາໂມດ ລະເຄື່ອງເສົ້າໝອງແຫ່ງ ຈິດໄດ້ ອະຣິຍະສາວົກນີ້ເຮົາຮຽກວ່າ ຖືຮັກສາສີນອຸໂປສົດ ຢູ່ຮ່ວມກັບສີນ ແລະ ຍ້ອນພາຣົບສີນ ຈິດຂອງທ່ານຈຶ່ງຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ (໖ ຄ)

๕. ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວ ຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງເທວະດາວ່າ "ເທວະດາຊັ້ນຈາຕຸມະຫາຣາດ ຊັ້ນ ຕາວະຕິງສາ ຊັ້ນຍາມາ ຊັ້ນດຸສິດ ຊັ້ນນິມມານະຣະດີ ຊັ້ນປະຣະນິມມິຕະວະສະວັດດີ ເທວະດາທີ່ນັບເນື່ອງໃນໝູ່ພົມ ເທວະດາຊັ້ນທີ່ສູງກວ່ານັ້ນຂຶ້ນໄປມີຢູ່ ເທວະດາເຫຼົ່ານັ້ນປະກອບດ້ວຍສັດທາເຊັ່ນໃດ ຈຸຕິຈາກພົບນີ້ໄປເກີດໃນພົບນັ້ນ ແມ່ນໂຕເຮົາກໍມີສັດທາເຊັ່ນນັ້ນຢູ່ພ້ອມ ເທວະດາເຫຼົ່ານັ້ນ ປະກອບດ້ວຍສີນເຊັ່ນໃດ ຈຸຕິຈາກພົບນີ້ໄປເກີດໃນພົບນັ້ນ ແມ່ນໂຕເຮົາກໍມີສີນເຊັ່ນນັ້ນຢູ່ພ້ອມ ເທວະດາເຫຼົ່ານັ້ນປະກອບດ້ວຍສຸຕະເຊັ່ນໃດ ຈຸຕິຈາກພົບນີ້ໄປເກີດໃນພົບນັ້ນ ແມ່ນໂຕເຮົາກໍມີສຸຕະ ເຊັ່ນນັ້ນຢູ່ພ້ອມ ເທວະດາເຫຼົ່ານັ້ນປະກອບດ້ວຍຈາຄະເຊັ່ນໃດ ຈຸຕິຈາກພົບນີ້ໄປເກີດໃນພົບນັ້ນ ແມ່ນໂຕເຮົາກໍມີຈາຄະເຊັ່ນນັ້ນຢູ່ພ້ອມ ເທວະດາເຫຼົ່ານັ້ນ ປະກອບດ້ວຍປັນຍາເຊັ່ນໃດ ຈຸຕິຈາກພົບນີ້ໄປເກີດໃນພົບນັ້ນ ແມ່ນໂຕເຮົາກໍມີປັນຍາເຊັ່ນນັ້ນຢູ່ພ້ອມ" ເມື່ອທ່ານຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາທັງຂອງຕົນ ແລະຂອງເທວະດາເຫຼົ່ານັ້ນຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມະປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ດ້ວຍຄວາມພຽນ ປຽບຄື ການເຮັດຄຳທີ່ໝອງໃຫ້ສຸກໃສຍ່ອມມີໄດ້ດ້ວຍຄວາມພຽນ

ການເຮັດຄຳທີ່ໝອງໃຫ້ສຸກໃສຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ການເຮັດຄຳທີ່ໝອງໃຫ້ສຸກໃສຍ່ອມມີໄດ້ຍ້ອນອາໄສເບົ້າຫຼອມ ເກືອ ຢາງໄມ້ ຄີມ ແລະຄວາມພະຍາຍາມທີ່ເໝາະສົມແກ່ເຫດນັ້ນຂອງບຸກຄົນ ການເຮັດຄຳທີ່ໝອງໃຫ້ສຸກໃສຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວນີ້ແລ

ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວ ຍ່ອມມີໄດ້ດ້ວຍຄວາມພຽນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຣະນຶກເຖິງເທວະດາວ່າ "ເທວະດາຊັ້ນຈາຕຸມະຫາຣາດ ຊັ້ນ ຕາວະຕິງສາ ຯລຯ ເທວະດາທີ່ນັບເນື່ອງໃນໝູ່ພົມ ເທວະດາຊັ້ນທີ່ສູງກວ່ານັ້ນຂຶ້ນໄປມີຢູ່

ເທວະດາເຫຼົ່ານັ້ນປະກອບດ້ວຍສັດທາເຊັ່ນໃດ ຈຸຕິຈາກພົບນີ້ໄປເກີດໃນພົບນັ້ນ ແມ່ນໂຕເຮົາກໍມີສັດທາເຊັ່ນນັ້ນຢູ່ພ້ອມ ເທວະດາເຫຼົ່ານັ້ນປະກອບດ້ວຍສີນເຊັ່ນໃດ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ເທວະດາເຫຼົ່ານັ້ນປະກອບດ້ວຍປັນຍາເຊັ່ນໃດ ຈຸຕິຈາກພົບນີ້ໄປເກີດໃນພົບນັ້ນ ແມ່ນໂຕເຮົາກໍມີປັນຍາເຊັ່ນນັ້ນຢູ່ພ້ອມ" ເມື່ອທ່ານຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາທັງຂອງຕົນ ແລະຂອງເທວະດາເຫຼົ່ານັ້ນຢູ່ ຈິດຍ່ອມຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ອະຣິຍະສາວົກນີ້ເຮົາຮຽກວ່າ ຖືຮັກສາເທວະຕາອຸໂປສົດ ຢູ່ຮ່ວມກັບເທວະດາ ແລະຍ້ອນຜາຣົບເທວະດາ ຈິດຂອງທ່ານຈຶ່ງຜ່ອງໃສ ເກີດຄວາມປາໂມດ ລະເຄື່ອງເສົ້າໝອງແຫ່ງຈິດໄດ້ ການເຮັດຈິດທີ່ເສົ້າໝອງໃຫ້ຜ່ອງແຜ້ວຍ່ອມມີໄດ້ ດ້ວຍຄວາມພຽນ ເປັນແບບນີ້ແລ (໓ ໑)

ອະຣິຍະສາວົກນັ້ນຍ່ອມເຫັນປະຈັກວ່າ "ພຣະອະຣະຫັນທັງຫຼາຍ ລະເວັ້ນຂາດຈາກການຂ້າສັດ ຄືວາງທັນດາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການຂ້າສັດ ຄື ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ເມີດມື້ໜຶ່ງ ແລະຄືນໜຶ່ງນີ້ໃນມື້ນີ້ຍ້ອນອົງແມ່ນນີ້ເຮົາຊື່ວ່າ ເຮັດຕາມພຣະອະຣະຫັນ ແລະຖືຮັກສາອຸໂປສົດ

ພຣະອະຣະຫັນທັງຫຼາຍ ລະເວັ້ນຂາດຈາກການລັກຊັບ ຄື ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການລັກຊັບ ຖືເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດ ຢູ່ເມີດມື້ໜຶ່ງແລະຄືນໜຶ່ງນີ້ໃນມື້ນີ້ ຍ້ອນອົງແມ່ນນີ້ເຮົາຊື່ວ່າເຮັດຕາມ ພຣະອະຣະຫັນແລະຖືຮັກສາອຸໂປສົດ

ພຣະອະຣະຫັນທັງຫຼາຍ ລະພຶດຕິກໍາອັນເປັນຂ້າເສິກຕໍ່ພົມມະຈັນ ຄືປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທໍາອັນເປັນກິດຂອງຊາວບ້ານຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະພຶດຕິກໍາອັນເປັນຂ້າເສິກແກ່ພົມມະຈັນ ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທໍາອັນເປັນກິດຂອງຊາວບ້ານຢູ່ເມີດມື້ໜຶ່ງ ແລະຄືນໜຶ່ງນີ້ ໃນມື້ນີ້ ຍ້ອນອົງແມ່ນນີ້ ເຮົາຊື່ວ່າ ເຮັດຕາມພຣະອະຣະຫັນ ແລະຖືຮັກສາອຸໂປສົດ

ພຣະອະຣະຫັນທັງຫຼາຍ ລະເວັ້ນຂາດຈາກການເວົ້າຕົວະ ຄືເວົ້າແຕ່ຄໍາສັດ ດໍາລົງຄວາມສັດ ມີຄໍາເວົ້າເປັນຫຼັກ ໜ້າເຊື່ອຖື ບໍ່ຫຼອກລວງຊາວໂລກຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄໍາສັດ ດໍາລົງຄວາມສັດ ມີຄໍາເວົ້າເປັນຫຼັກ ໜ້າເຊື່ອຖື ບໍ່ຫຼອກລວງຊາວໂລກຢູ່ ເມີດມື້ໜຶ່ງ ແລະຄືນໜຶ່ງນີ້ ໃນມື້ນີ້ ຍ້ອນອົງແມ່ນນີ້ ເຮົາຊື່ວ່າ ເຮັດຕາມພຣະອະຣະຫັນແລະຖືຮັກສາອຸໂປສົດ

ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດຢູ່ ເມີດມື້ໜຶ່ງ ແລະຄືນໜຶ່ງນີ້ ໃນມື້ນີ້ ຍ້ອນອົງແມ່ນນີ້ ເຮົາຊື່ວ່າ ເຮັດຕາມພຣະອະຣະຫັນ ແລະຖືຮັກສາອຸໂປສົດ

ພຣະອະຣະຫັນທັງຫຼາຍ ສັນຄາບດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນອາຫານໃນເວລາວິການຢູ່ຕະຫຼອດຊີວິດ ແມ່ນເຮົາກໍບໍຣິໂພກຄາບດຽວ ບໍ່ບໍຣິໂພກຕອນກາງຄືນເວັ້ນຂາດຈາກການບໍຣິໂພກອາຫານໃນເວລາວິການຢູ່ເມີດມື້ໜຶ່ງ ແລະຄືນໜຶ່ງນີ້ໃນມື້ນີ້ ຍ້ອນອົງແມ່ນນີ້ເຮົາຊື່ວ່າ ເຮັດຕາມພຣະອະຣະຫັນ ແລະຖືຮັກສາອຸໂປສົດ

ພຣະອະຣະຫັນທັງຫຼາຍ ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ການເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນ ແລະຈາກການທັດຊົງປະດັບຕົກແຕ່ງຮ່າງກາຍດ້ວຍຮວດດອກໄມ້ ຂອງຫອມ ແລະເຄື່ອງຕົກແຕ່ງຜິວອັນເປັນລັກສະນະແຫ່ງການແຕ່ງໂຕຢູ່ຕະຫຼອດຊີວິດແມ່ນເຮົາກໍເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ການເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນ ແລະຈາກການທັດຊົງປະດັບຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ ຂອງຫອມແລະເຄື່ອງຕົກແຕ່ງຜິວອັນເປັນລັກສະນະແຫ່ງການແຕ່ງໂຕຢູ່ເມີດມື້ໜຶ່ງແລະ ຄືນໜຶ່ງນີ້ໃນມື້ນີ້ຍ້ອນອົງແມ່ນນີ້ເຮົາຊື່ວ່າເຮັດຕາມພຣະອະຣະຫັນແລະຖືຮັກສາອຸໂປສົດ

ພຣະອະຣະຫັນທັງຫຼາຍລະ ເວັ້ນຂາດຈາກບ່ອນນອນສູງແລະບ່ອນນອນໃຫຍ່ ນອນເທິງບ່ອນນອນຕ່ຳ ຄືເທິງຕຽງຫຼືເທິງບ່ອນນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກ ບ່ອນນອນສູງແລະບ່ອນນອນໃຫຍ່ ນອນເທິງບ່ອນນອນຕ່ຳ ຄື ເທິງຕຽງຫຼືເທິງບ່ອນນອນທີ່ປູລາດດ້ວຍຫຍ້າຢູ່ເມີດມື້ໜຶ່ງ ແລະຄືນໜຶ່ງນີ້ ໃນມື້ນີ້ ຍ້ອນອົງແມ່ນນີ້ເຮົາຊື່ວ່າເຮັດຕາມພຣະອະຣະຫັນແລະຖືຮັກສາອຸໂປສົດ

ວິສາຂາ ອະຣິຍະອຸໂປສົດເປັນແນວນີ້ແລ ອະຣິຍະອຸໂປສົດທີ່ບຸກຄົນຖືຮັກສາແນວນີ້ແລຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ

ອະຣິຍະອຸໂປສົດ ມີຜົນຫຼາຍພຽງໃດ? ມີອານິສົງຫຼາຍພຽງໃດ? ມີຄວາມຮຸ່ງເຮືອງຫຼາຍພຽງໃດ? ແຜ່ໄພສານຫຼາຍພຽງໃດ?

ຄື ປຽບຄື ພຣະຣາຊາພຣະອົງໃດເພິ່ງຄອງຣາດ ເປັນອິດສະຣາທິບໍດີ (ເປັນຜູ້ ຍິ່ງໃຫຍ່ເໜືອກວ່າຜູ້ອື່ນ) ແຫ່ງຊົນນະບົດໃຫຍ່ ໑໖ ແຄວັນທີ່ສົມບູນດ້ວຍແກ້ວ ໗ ປະການເຫຼົ່ານີ້ ຄື ອັງຄະ ມະຄະທະ ກາສີ ໂກສະລະ ວັດຊີ ມັນລະ ເຈຕີ ວັງສະ ກຸຣຸ ປັນຈາລະ ມັດສະ ສຸຣະເສນະ ອັດສະກະ ອະວັນຕີ ຄັນທາຣະ ກຳໂພຊະ ການຄອງຣາດຂອງພຣະຣາຊາພຣະອົງນັ້ນ ຍັງ

ມີຄ່າບໍ່ເຖິງສ່ວນທີ ໑໖ ແຫ່ງອຸໂປສົດທີ່ປະກອບດ້ວຍອົງ ໘ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຣາດຊະສົມບັດຂອງມະນຸດ ເມື່ອນຳໄປປຽບກັບສຸກທີ່ເປັນທິບຖືວ່າ ເປັນຂອງເລັກໜ້ອຍ

໕໐ ປີຂອງມະນຸດທີ່ກັບມື້ ແລະຄືນໜຶ່ງຂອງເທວະດາຊັ້ນຈາຕຸມະຫາຣາດ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໕໐໐ ປີທິບໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນຈາຕຸມະຫາຣາດ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄືສະຕີຫຼືບຸຣຸດລາງຄົນໃນໂລກນີ້ຖືຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງ ເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາຊັ້ນຈາຕຸມະຫາຣາດ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບຖືວ່າເປັນຂອງເລັກໜ້ອຍ

໑໐໐ ປີຂອງມະນຸດທີ່ກັບມື້ ແລະຄືນໜຶ່ງຂອງເທວະດາຊັ້ນຕາວະຕຶງສາ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໑,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນຕາວະຕຶງສາ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດລາງຄົນໃນໂລກນີ້ຖືຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາຊັ້ນຕາວະຕຶງສາ ຂໍ້ນີ້ ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບຖືວ່າ ເປັນຂອງເລັກໜ້ອຍ

໒໐໐ ປີຂອງມະນຸດທີ່ກັບມື້ ແລະຄືນໜຶ່ງຂອງເທວະດາຊັ້ນຍາມາ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໒,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນຍາມາ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄືສະຕີຫຼືບຸຣຸດລາງຄົນໃນໂລກນີ້ຖືຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາຊັ້ນຍາມາ ຂໍ້ນີ້ ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບຖືວ່າ ເປັນຂອງເລັກໜ້ອຍ

໔໐໐ ປີຂອງມະນຸດທີ່ກັບມື້ ແລະຄືນໜຶ່ງຂອງເທວະດາຊັ້ນດຸສິດ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໔,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນດຸສິດ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດ ລາງຄົນໃນໂລກນີ້ຖືຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາຊັ້ນດຸສິດ ຂໍ້ນີ້ ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບຖືວ່າ ເປັນຂອງເລັກໜ້ອຍ

໘໐໐ ປີຂອງມະນຸດທີ່ກັບມື້ ແລະຄືນໜຶ່ງຂອງເທວະດາຊັ້ນນິມມານະຣະດີ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໘,໐໐໐ ປີທິບໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນນິມມານະຣະດີ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄືສະຕີຫຼືບຸຣຸດ

ລາງຄົນໃນໂລກນີ້ຖືຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາຊັ້ນນິມມານະຣະດີ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນໍາໄປປຽບກັບສຸກທີ່ເປັນທິບຖືວ່າ ເປັນຂອງເລັກໜ້ອຍ

໑,໖໐໐ ປີຂອງມະນຸດທໍ່ກັບມື້ ແລະຄືນໜຶ່ງຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີ ໓໐ ຣາຕີ ໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໔ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໑໖,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດລາງຄົນໃນໂລກນີ້ ຖືຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວ ເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາຊັ້ນປະຣະນິມມິຕະວະສະວັດດີ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ວ່າ ຣາດຊະສົມບັດຂອງມະນຸດ ເມື່ອນໍາໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

ບຸກຄົນບໍ່ເພິ່ງຂ້າສັດ ບໍ່ເພິ່ງລັກຊັບ
ບໍ່ເພິ່ງເວົ້າຕົວະ ບໍ່ເພິ່ງດື່ມນໍ້າເມົາ
ເພິ່ງງົດເວັ້ນຈາກເມຖຸນທີ່ເປັນຄວາມປະພຶດບໍ່ປະເສີດ
ບໍ່ເພິ່ງບໍຣິໂພກອາຫານໃນເວລາວິການ ໃນເວລາກາງຄືນ
ບໍ່ເພິ່ງທັດຊົງດອກໄມ້ ບໍ່ເພິ່ງລູບທາຂອງຫອມ
ແລະເພິ່ງນອນເທິງຕຽງ ເທິງພື້ນ ຫຼືເທິງທີ່ທີ່ປູລາດໄວ້
ບັນດິດທັງຫຼາຍກ່າວວ່າ
ອຸໂປສົດທີ່ປະກອບດ້ວຍອົງ ໘ ນີ້ແລ
ທີ່ພຣະພຸດທະເຈົ້າຜູ້ເຖິງບ່ອນສຸດທຸກຊົງປະກາດໄວ້
ດວງຈັນ ດວງອາທິດ ທັງສອງ
ງົດງາມສ່ອງສະຫວ່າງໂຄຈອນໄປທົ່ວສະຖານທີ່ປະມານທໍ່ໃດ
ກໍດວງຈັນແລະດວງອາທິດນັ້ນ
ກໍາຈັດຄວາມມືດໄປໃນອາກາດ
ເຮັດໃຫ້ທິດສະຫວ່າງສະໄຫວ ສ່ອງແສງຢູ່ໃນອາກາດ
ທົ່ວສະຖານທີ່ປະມານທໍ່ໃດ
ຊັບ ຄືແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ
ທອງສິງຄີແລະຄໍາ ຕະຫຼອດເຖິງທອງຊື່ວ່າຫະຕະກະ
ທໍ່ທີ່ມີຢູ່ໃນສະຖານທີ່ປະມານທໍ່ນັ້ນ
ແລະແສງຈັນ ໝູ່ດາວທັງໝົດ ຍັງບໍ່ເຖິງແມ່ນສ່ຽວທີ່ ໑໖
ຂອງອຸໂປສົດທີ່ປະກອບດ້ວຍອົງ ໘

ຍ້ອນແນວນັ້ນ ສະຕີຫຼືບຸຣຸດຜູ້ມີສີນ
ຖືຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘
ທຳບຸນທີ່ມີສຸກເປັນກຳໄລ ບໍ່ຖືກນິນທາ ຍ່ອມເຂົ້າເຖິງສະຫວັນ

**ອຸໂປສະຖະສູດທີ ໑໐ ຈົບ**

**ມະຫາວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

# ๖. ອານັນທະວັກ

## ໝວດວ່າດ້ວຍພຣະອານົນ

## ໑. ສັນນະສູດ

## ວ່າດ້ວຍສັນນະປະຣິພາຊົກ

[໗໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ປະຣິພາຊົກຊື່ສັນນະເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ແມ່ນພວກທ່ານກໍບັນຍັດ ການລະຣາຄະ (ຄວາມກຳໜັດ) ໂທສະ (ຄວາມຄິດປະທຸດສະຮ້າຍ) ແລະໂມຫະ (ຄວາມຫຼົງ) ແມ່ນບໍ?"

ພຣະອານົນຕອບວ່າ "ຜູ້ມີອາຍຸ ພວກເຮົາເອງບັນຍັດການລະຣາຄະ ໂທສະ ແລະໂມຫະ"

ສັນນະປະຣິພາຊົກຮຽນຖາມວ່າ "ຜູ້ມີອາຍຸ ກໍພວກທ່ານເຫັນໂທດໃນຣາຄະແນວໃດ ຈຶ່ງບັນຍັດການລະຣາຄະ ເຫັນໂທດໃນໂທສະແນວໃດ ຈຶ່ງບັນຍັດການລະໂທສະ ແລະເຫັນໂທດໃນໂມຫະແນວໃດ ຈຶ່ງບັນຍັດການລະໂມຫະ"

ພຣະອານົນຕອບວ່າ ບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ສະເຫວີຍທຸກ ໂທມະນັດທາງໃຈແດ່ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນທັງ ໒ ຝ່າຍ ບໍ່ສະເຫວີຍທຸກ ໂທມະນັດທາງໃຈ

ບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມບໍ່ປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ

ບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມບໍ່ຮູ້ແຈ້ງຕາມຄວາມເປັນຈິງເຖິງປະໂຫຍດຕົນແດ່ ປະໂຫຍດຜູ້ອື່ນແດ່ ປະໂຫຍດທັງ ໒ ຝ່າຍແດ່ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມຮູ້ແຈ້ງຕາມຄວາມເປັນຈິງເຖິງປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງ

໔ ຝ່າຍ ຣາຄະນັ້ນເອງເຮັດໃຫ້ເປັນຄືຄົນຕາບອດ ເປັນຄືຄົນບໍ່ມີດວງຕາ ເຮັດໃຫ້ບໍ່ຮູ້ອັນໃດ ມີປັນຍາມືດບອດ ເປັນໄປໃນຝ່າຍຄວາມຄັບແຄ້ນ ບໍ່ເປັນໄປເພື່ອພຣະນິບພານ

ບຸກຄົນຜູ້ມີໂທສະ ຯລຯ ບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມຄິດເພື່ອບຽດບຽນຕົນແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໔ ຝ່າຍແດ່ ສະເຫວີຍທຸກ ໂທມະນັດທາງໃຈແດ່ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນ ບໍ່ຄິດເພື່ອບຽດບຽນຜູ້ອື່ນ ບໍ່ຄິດເພື່ອບຽດບຽນທັງ ໔ ຝ່າຍ ບໍ່ສະເຫວີຍທຸກ ໂທມະນັດທາງໃຈ

ບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມບໍ່ປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ

ບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມບໍ່ຮູ້ແຈ້ງຕາມຄວາມເປັນຈິງເຖິງປະໂຫຍດຕົນແດ່ ປະໂຫຍດຜູ້ອື່ນແດ່ ປະໂຫຍດທັງ ໔ ຝ່າຍແດ່ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມຮູ້ແຈ້ງຕາມຄວາມເປັນຈິງເຖິງປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງ ໔ ຝ່າຍ ໂມຫະນັ້ນເອງເຮັດໃຫ້ເປັນຄືຄົນຕາບອດ ເປັນຄືຄົນບໍ່ມີດວງຕາ ເຮັດໃຫ້ບໍ່ຮູ້ອັນໃດ ມີປັນຍາມືດບອດ ເປັນໄປໃນຝ່າຍຄວາມຄັບແຄ້ນ ບໍ່ເປັນໄປເພື່ອພຣະນິບພານ

ພວກເຮົາເຫັນໂທດໃນຣາຄະເຊັ່ນນີ້ແລຈຶ່ງບັນຍັດການລະຣາຄະ ເຫັນໂທດໃນໂທສະແນວນີ້ຈຶ່ງບັນຍັດການລະໂທສະ ແລະເຫັນໂທດໃນໂມຫະແນວນີ້ຈຶ່ງບັນຍັດການລະໂມຫະ

ສັນນະປະຣິພາຊົກຣຽນຖາມວ່າ “ຜູ້ມີອາຍຸ ມັກປະຕິປະທາເພື່ອລະຣາຄະ ໂທສະ ແລະໂມຫະນັ້ນມີຢູ່ແມ່ນບໍ?”

ພຣະອານົນຕອບວ່າ “ມັກປະຕິປະທາເພື່ອລະຣາຄະ ໂທສະ ແລະໂມຫະນັ້ນມີຢູ່”

ສັນນະປະຣິພາຊົກຣຽນຖາມຕໍ່ໄປອີກວ່າ “ຜູ້ມີອາຍຸ ມັກປະຕິປະທາເພື່ອລະຣາຄະ ໂທສະ ແລະໂມຫະນັ້ນ ເປັນແນວໃດ?”

ພຣະອານົນຕອບວ່າ “ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຈາ
໔. ສຳມາກຳມັນຕະ
໕. ສຳມາອາຊີວະ
໖. ສຳມາວາຍາມະ
໗. ສຳມາສະຕິ
໘. ສຳມາສະມາທິ

ຜູ້ມີອາຍຸ ນີ້ແລ ຄື ມັກປະຕິປະທາເພື່ອລະຣາຄະ ໂທສະ ແລະໂມຫະນັ້ນ"

ສັນນະປະຣິພາຊົກກ່າວວ່າ "ຜູ້ມີອາຍຸ ມັກປະຕິປະທາເພື່ອລະຣາຄະ ໂທສະ ແລະ ໂມຫະນັ້ນ ດີແທ້ນໍ ສົມຄວນແລ້ວທີ່ຈະບໍ່ຜະໝາດ"

**ສັນນະສູດ ທີ ໑ ຈົບ**

## ໘. ອາຊີວະກະສູດ

## ວ່າດ້ວຍສາວົກຂອງອາຊີວົກ

[໗໖] ສະໄໝໜຶ່ງ ທ່ານພຣະອານົນຢູ່ທີ່ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ຄະຫະບໍດີຄົນໜຶ່ງ ເປັນສາວົກຂອງອາຊີວົກ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນ ທີ່ສົມຄວນ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ ວ່າ

"ທ່ານອານົນຜູ້ຈະເລີນ ໃນໂລກ ຄົນພວກໃດກ່າວທຳໄວ້ດີແລ້ວ ປະຕິບັດດີແລ້ວ ດຳເນີນໄປດີແລ້ວ"

ພຣະອານົນຕອບວ່າ "ຄະຫະບໍດີ ຖ້າເປັນແນວນັ້ນ ໃນເລື້ອງນີ້ເຮົາຂໍຍ້ອນຖາມທ່ານ ທ່ານ ເພິ່ງຕອບຕາມທີ່ທ່ານພໍໃຈ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ຄືຄົນພວກໃດສະແດງທຳເພື່ອລະຣາຄະ ໂທສະ ແລະໂມຫະ ຄົນພວກນັ້ນກ່າວທຳໄວ້ດີແລ້ວບໍ ຫຼືທ່ານມີຄວາມເຂົ້າໃຈໃນເລື້ອງນີ້ແນວໃດ?"

ຄະຫະບໍດີກ່າວວ່າ "ທ່ານຜູ້ຈະເລີນ ຄົນພວກໃດສະແດງທຳເພື່ອລະຣາຄະ ໂທສະ ແລະ ໂມຫະ ຄົນພວກນັ້ນຊື່ວ່າ ກ່າວທຳໄວ້ດີແລ້ວ ຂ້າພະເຈົ້າມີຄວາມເຂົ້າໃຈໃນເລື້ອງນີ້ແນວນີ້"

ພຣະອານົນກ່າວວ່າ "ຄະຫະບໍດີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ຄືຄົນພວກໃດ ປະຕິບັດເພື່ອລະຣາຄະ ໂທສະ ແລະໂມຫະ ຄົນພວກນັ້ນປະຕິບັດດີແລ້ວໃນໂລກບໍ ຫຼື ທ່ານມີຄວາມເຂົ້າໃຈໃນເລື້ອງນີ້ແນວໃດ?"

ຄະຫະບໍດີກ່າວວ່າ "ທ່ານຜູ້ຈະເລີນ ຄົນພວກໃດປະຕິບັດເພື່ອລະຣາຄະ ໂທສະ ແລະ ໂມຫະ ຄົນພວກນັ້ນຊື່ວ່າ ປະຕິບັດດີແລ້ວໃນໂລກ ຂ້າພະເຈົ້າມີຄວາມເຂົ້າໃຈໃນເລື້ອງນີ້ແນວນີ້"

ພຣະອານົນກ່າວວ່າ "ຄະຫະບໍດີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ຄື ຄົນພວກໃດລະຣາຄະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດ

ໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄົນພວກໃດລະໂທສະໄດ້ແລ້ວ ฯລฯ ຄົນພວກໃດລະໂມຫະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄົນພວກນັ້ນດໍາເນີນໄປດີແລ້ວໃນໂລກບໍ ຫຼື ທ່ານມີຄວາມເຂົ້າໃຈໃນເລື້ອງນີ້ແນວໃດ"

ຄະຫະບໍດີກ່າວວ່າ "ທ່ານຜູ້ຈະເລີນ ຄົນພວກໃດລະຣາຄະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄົນພວກໃດລະໂທສະໄດ້ແລ້ວ ฯລฯ ຄົນພວກໃດລະໂມຫະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄົນພວກນັ້ນຊື່ວ່າດໍາເນີນໄປດີແລ້ວໃນໂລກ ຂ້າພະເຈົ້າມີຄວາມເຂົ້າໃຈໃນເລື້ອງນີ້ແນວນີ້"

ພຣະອານົນກ່າວວ່າ "ຄະຫະບໍດີ ເລື້ອງນີ້ທ່ານໄດ້ຕອບແລ້ວວ່າ "ທ່ານຜູ້ຈະເລີນ ຄົນພວກໃດ ສະແດງທໍາເພື່ອລະຣາຄະ ໂທສະ ແລະໂມຫະ ຄົນພວກນັ້ນຊື່ວ່າກ່າວທໍາໄວ້ດີແລ້ວ" ເລື້ອງນີ້ທ່ານໄດ້ຕອບແລ້ວວ່າ "ທ່ານຜູ້ຈະເລີນ ຄົນພວກໃດປະຕິບັດເພື່ອລະຣາຄະ ໂທສະ ແລະໂມຫະ ຄົນພວກນັ້ນຊື່ວ່າ ປະຕິບັດດີແລ້ວໃນໂລກ" ເລື້ອງນີ້ທ່ານໄດ້ຕອບແລ້ວຄືກັນວ່າ "ທ່ານຜູ້ຈະເລີນ ຄົນພວກໃດລະຣາຄະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄົນພວກໃດລະໂທສະ ໄດ້ແລ້ວ ฯລฯ ຄົນພວກໃດລະໂມຫະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກ ກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄົນພວກນັ້ນຊື່ວ່າ ດໍາເນີນໄປດີແລ້ວໃນໂລກແລ"

ຄະຫະບໍດີກ່າວວ່າ "ທ່ານຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທ່ານບໍ່ຍ້ອງຍໍທໍາຂອງຕົນເອງ ແລະບໍ່ມີການຮຸກຮານທໍາຂອງຜູ້ອື່ນ ມີແຕ່ສະແດງທໍາຕາມເຫດຜົນ ກ່າວແຕ່ເນື້ອຄວາມ ແລະບໍ່ໄດ້ນໍາຄວາມເຫັນຂອງຕົນເຂົ້າໄປກ່ຽວຂ້ອງ ທ່ານສະແດງທໍາເພື່ອລະຣາຄະ ໂທສະ ແລະໂມຫະ ທ່ານອານົນຜູ້ຈະເລີນ ທ່ານກ່າວທໍາໄວ້ດີແລ້ວ ທ່ານອານົນຜູ້ຈະເລີນ ທ່ານປະຕິບັດເພື່ອລະຣາຄະ ໂທສະ ແລະໂມຫະ ທ່ານປະຕິບັດດີແລ້ວໃນໂລກ ທ່ານອານົນຜູ້ຈະເລີນ ທ່ານລະຣາຄະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານລະໂທສະໄດ້ແລ້ວ ฯລฯ ທ່ານລະໂມຫະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານດໍາເນີນໄປດີແລ້ວໃນໂລກ

ທ່ານຜູ້ຈະເລີນ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ພຣະຜູ້ເປັນເຈົ້າອານົນປະກາດທໍາແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ໍາ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາ

ດີຈັກເຫັນຮູບໄດ້" ຂ້າພະເຈົ້ານີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງ ເປັນສະຣະນະ ຂໍພຣະຜູ້ເປັນເຈົ້າອານົນຈົ່ງຈຳຂ້າພະເຈົ້າວ່າເປັນອຸປາສົກຜູ້ເຂົ້າເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ອາຊີວະກະສູດ ທີ ໘ ຈົບ**

## ໙. ມະຫານາມະສັກກະສູດ

## ວ່າດ້ວຍເຈົ້າມະຫານາມະສາກະຍະ

[໗໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫາຍຈາກຄວາມອາພາດບໍ່ດົນ ຄັ້ງນັ້ນ ເຈົ້າມະຫານາມະສາກະຍະ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ເປັນເວລາດົນແລ້ວ ທີ່ຂ້າພຣະອົງຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າສະແດງແນວນີ້ວ່າ ຍານ (ຄວາມຮູ້) ເກີດແກ່ຜູ້ມີໃຈເປັນສະມາທິ ບໍ່ເກີດແກ່ຜູ້ມີໃຈບໍ່ເປັນສະມາທິ ຂ້າແດ່ ພຣະອົງຜູ້ຈະເລີນ ສະມາທິເກີດກ່ອນ ຍານເກີດທີຫຼັງ ຫຼື ວ່າ ຍານເກີດກ່ອນ ສະມາທິເກີດທີຫຼັງ?"

ໃນຂະນະນັ້ນ ທ່ານພຣະອານົນໄດ້ມີຄວາມດຳຣິວ່າ "ພຣະຜູ້ມີພຣະພາກເຈົ້າ ເພິ່ງຈະຊົງຫາຍຈາກຄວາມອາພາດໄດ້ບໍ່ດົນ ເຈົ້າມະຫານາມະສາກະຍະນີ້ທູນຖາມບັນຫາທີ່ເລິກເຊິ່ງກັບພຣະຜູ້ມີພຣະພາກເຈົ້າ ທາງທີ່ດີ ເຮົາຄວນນຳເຈົ້າມະຫານາມະສາກະຍະໄປອີກທີ່ໜຶ່ງແລ້ວສະແດງທຳ (ໃຫ້ຟັງ)"

ລຳດັບນັ້ນ ທ່ານພຣະອານົນ ພາເຈົ້າມະຫານາມະສາກະຍະຫຼີກໄປບ່ອນທີ່ສົມຄວນແລ້ວໄດ້ກ່າວວ່າ ມະຫານາມ ພຣະຜູ້ມີພຣະພາກເຈົ້າຕັດສິນທີ່ເປັນຂອງພຣະເສຂະໄວ້ກໍມີ ຕັດສິນທີ່ເປັນຂອງພຣະອະເສຂະໄວ້ກໍມີ ພຣະຜູ້ມີພຣະພາກເຈົ້າຕັດສະມາທິທີ່ເປັນຂອງພຣະເສຂະໄວ້ກໍມີ ຕັດສະມາທິທີ່ເປັນຂອງພຣະອະເສຂະໄວ້ກໍມີ ພຣະຜູ້ມີພຣະພາກເຈົ້າຕັດປັນຍາທີ່ເປັນຂອງພຣະເສຂະໄວ້ກໍມີ ຕັດປັນຍາທີ່ເປັນຂອງພຣະອະເສຂະໄວ້ກໍມີ

ສິນທີ່ເປັນຂອງພຣະເສຂະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສີນ ສັງລວມດ້ວຍຄວາມສັງວອນໃນພຣະປາຕິໂມກຢູ່ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ຮຽກວ່າ ສີນທີ່ເປັນຂອງພຣະເສຂະ

ສະມາທິທີ່ເປັນຂອງພຣະເສຂະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ຯລຯ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ສະມາທິທີ່ເປັນຂອງພຣະເສຂະ

ປັນຍາທີ່ເປັນຂອງພຣະເສຂະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະທາ" ນີ້ຮຽກວ່າ ປັນຍາທີ່ເປັນຂອງພຣະເສຂະ

ມະຫານາມ ອະຣິຍະສາວົກນັ້ນແລຜູ້ພຽບພ້ອມດ້ວຍສີນແນວນີ້ ພຽບພ້ອມດ້ວຍສະມາທິແນວນີ້ ພຽບພ້ອມດ້ວຍປັນຍາແນວນີ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ພຣະຜູ້ມີພຣະພາກເຈົ້າຕັດສີນທີ່ເປັນຂອງພຣະເສຂະໄວ້ກໍມີ ຕັດສີນທີ່ເປັນຂອງພຣະອະເສຂະໄວ້ກໍມີ ຕັດສະມາທິທີ່ເປັນຂອງພຣະເສຂະໄວ້ກໍມີ ຕັດສະມາທິທີ່ເປັນຂອງພຣະອະເສຂະໄວ້ກໍມີ ຕັດປັນຍາທີ່ເປັນຂອງພຣະເສຂະໄວ້ກໍມີ ຕັດປັນຍາທີ່ເປັນຂອງພຣະອະເສຂະໄວ້ກໍມີດ້ວຍປະການດັ່ງນີ້ແລ

**ມະຫານາມະສັກກະສູດ ທີ ໓ ຈົບ**

## ໔. ນິຄັນຖະສູດ

## ວ່າດ້ວຍນິຄົນນາຕະບຸດ

[໗໔] ສະໄໝໜຶ່ງ ທ່ານພຣະອານົນຢູ່ທີ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ສະໄໝນັ້ນ ເຈົ້າອະໄພລິດສະຫວີ ແລະເຈົ້າບັນດິດກຸມານລິດສະຫວີພາກັນເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ເຈົ້າອະໄພລິດສະຫວີຜູ້ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອານົນດັ່ງນີ້ ວ່າ

"ຂ້າແດ່ ທ່ານຜູ້ຈະເລີນ ນິຄົນນາຕະບຸດເປັນສັບພັນຍູ (ຜູ້ຮູ້ທຸກສິ່ງ) ແນມເຫັນທຸກຢ່າງປະຕິຍານຍານທັດສະນະໂດຍບໍ່ເຫຼືອວ່າ "ເມື່ອເຮົາຍ່າງ ຢືນ ຫຼັບ ແລະຕື່ນ ຍານທັດສະນະ ກໍຜາກົດເປັນປະຈຳ" ເຂົາບັນຍັດວ່າກຳເກົ່າສິ້ນສຸດຍ້ອນຕະບະ (ການພໍ່າເພັງພຽນຢ່າງໜັກ) ບັນຍັດການກຳຈັດເຫດໄດ້ຍ້ອນບໍ່ເຮັດກຳໃໝ່ ດ້ວຍເຫດນີ້ຍ້ອນກຳໝົດໄປ ທຸກຈຶ່ງໝົດໄປ ຍ້ອນທຸກ

ສິ້ນໄປ ເວທະນາຈຶ່ງສິ້ນໄປ ຍ້ອນເວທະນາສິ້ນໄປ ທຸກທັງໝົດຈຶ່ງຈັກເປັນອັນສະຫຼາຍໄປ ການລ່ວງພົ້ນທຸກທັງໝົດ ຍ່ອມມີໄດ້ດ້ວຍຄວາມບໍລິສຸດທີ່ເຮັດໃຫ້ກິເລດໝົດສິ້ນໄປ ເຊິ່ງປະຈັກແຈ້ງດ້ວຍຕົນເອງນີ້ ດ້ວຍປະການດັ່ງນີ້ ຂ້າແດ່ທ່ານຜູ້ຈະເລີນ ໃນເລື້ອງນີ້ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ"

ທ່ານພຣະອານົນຕອບວ່າ "ທ່ານອະໄພ ຄວາມບໍລິສຸດທີ່ເຮັດໃຫ້ກິເລດໝົດສິ້ນໄປ ໓ ປະການນີ້ອັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ຕັດໄວ້ຖືກຕ້ອງແລ້ວ ເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອລ່ວງພົ້ນຄວາມໂສກ ຄວາມຮ່ຳໄຮ ເພື່ອຄວາມສິ້ນທຸກ ແລະໂທມະນັດ ເພື່ອບັນລຸທຳທີ່ຄວນຮູ້ ເພື່ອເຮັດພຣະນິບພານໃຫ້ແຈ້ງ

ຄວາມບໍລິສຸດ ໓ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ມີສິນ ໆລໆ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ທ່ານບໍ່ເຮັດກຳໃໝ່ ແລະຮັບຜົນກຳເກົ່າແລ້ວເຮັດໃຫ້ໝົດໄປໂດຍຄິດວ່າ "ຄວາມບໍລິສຸດເປັນສິ່ງທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ເຮັດໃຫ້ກິເລດໝົດສິ້ນໄປ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ"

໒. ພິກຂຸນັ້ນ ພຽບພ້ອມດ້ວຍສິນ ສະຫງັດຈາກກາມ ໆລໆ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ທ່ານບໍ່ເຮັດກຳໃໝ່ ແລະຮັບຜົນກຳເກົ່າແລ້ວເຮັດໃຫ້ໝົດໄປໂດຍຄິດວ່າ "ຄວາມບໍລິສຸດເປັນສິ່ງທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ເຮັດໃຫ້ກິເລດໝົດສິ້ນໄປ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ"

໓. ພິກຂຸນັ້ນ ພຽບພ້ອມດ້ວຍສິນແນວນີ້ ພຽບພ້ອມດ້ວຍສະມາທິແນວນີ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິ ທີ່ບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ທ່ານບໍ່ເຮັດກຳໃໝ່ ແລະຮັບຜົນກຳເກົ່າແລ້ວເຮັດໃຫ້ໝົດໄປໂດຍຄິດວ່າ "ຄວາມບໍລິສຸດເປັນສິ່ງທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ເຮັດໃຫ້ກິເລດໝົດສິ້ນໄປບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ"

ຄວາມບໍລິສຸດທີ່ເຮັດໃຫ້ກິເລດໝົດສິ້ນໄປ ໓ ປະການນີ້ແລ ອັນພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງໄດ້ຕັດໄວ້ຖືກຕ້ອງແລ້ວ ເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ເພື່ອລ່ວງພົ້ນຄວາມໂສກ ຄວາມຮ່ຳໄຮ ເພື່ອຄວາມສິ້ນສຸດທຸກແລະໂທມະນັດ ເພື່ອບັນລຸທຳທີ່ຄວນຮູ້ ເພື່ອເຮັດພຣະນິບພານໃຫ້ແຈ້ງ

ເມື່ອທ່ານພຣະອານົນກ່າວແນວນີ້ແລ້ວ ເຈົ້າບັນດິດກຸມານລິດສະຫວີໄດ້ກ່າວກັບເຈົ້າອະໄພດັ່ງນີ້ວ່າ “ອະໄພເພື່ອນຮັກ ເປັນຫຍັງ? ທ່ານຈຶ່ງບໍ່ຊື່ນຊົມຄຳທີ່ທ່ານພຣະອານົນກ່າວໄວ້ດີ ໂດຍຄວາມເປັນຄຳສຸພາສິດນໍ”

ເຈົ້າອະໄພຕອບວ່າ “ບັນດິດກຸມານເພື່ອນຮັກ ເປັນຫຍັງ? ເຮົາຈັກບໍ່ຊື່ນຊົມຄຳ ທີ່ທ່ານພຣະອານົນກ່າວໄວ້ດີໂດຍຄວາມເປັນຄຳສຸພາສິດນໍ ຄວາມຄິດຂອງຜູ້ທີ່ບໍ່ຊື່ນຊົມ ຄຳທີ່ທ່ານພຣະອານົນກ່າວໄວ້ດີ ໂດຍຄວາມເປັນຄຳສຸພາສິດ ເພິ່ງເສື່ອມແນ່ນອນ”

**ນິຄັນຖະສູດ ທີ ໔ ຈົບ**

## ໕. ນິເວສະກະສູດ

### ວ່າດ້ວຍການຊັກຊວນໃຫ້ຕັ້ງໝັ້ນໃນຖານະ

[໗໖] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນດັ່ງນີ້ ວ່າ

ອານົນ ທ່ານທັງຫຼາຍ ເພິ່ງອະນຸເຄາະຄົນເຫຼົ່າໃດ ແລະຄົນເຫຼົ່າໃດຈະເປັນມິດ ອຳມາດ ຍາດ ສາໂລຫິດກໍຕາມ ໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍເພິ່ງ ຊັກຊວນຄົນເຫຼົ່ານັ້ນ ໃຫ້ຕັ້ງໝັ້ນໃຫ້ດຳລົງຢູ່ໃນຖານະ ໓ ປະການ

ຖານະ ໓ ປະການ ອັນໃດແດ່ ຄື

໑. ເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ວ່າ “ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດ ສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ”

໔. ເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະທຳ ວ່າ "ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະ ເພາະຕົນ"

໕. ເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວ ໃນພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີ ພຣະພາກເຈົ້ານີ້ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ"

ມະຫາພູຕະ ໔ ຄື ປະຖະວີທາດ (ທາດດິນ) ອາໂປທາດ (ທາດນ້ຳ) ເຕໂຊທາດ (ທາດໄຟ) ແລະ ວາໂຍທາດ (ທາດລົມ) ອາດກາຍເປັນແນວອື່ນໄດ້ ແຕ່ພຣະອະຣິຍະສາວົກຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ບໍ່ເພິ່ງປ່ຽນເປັນແນວອື່ນໄດ້ເລີຍ ໃນເລື້ອງນັ້ນ ເປັນໄປບໍ່ໄດ້ເລີຍ ທີ່ຈະປ່ຽນເປັນແນວອື່ນ ຄື ພຣະອະຣິຍະສາວົກນັ້ນ ຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຈັກຖືກຳເນີດໃນນະຮົກ ສັດເດຍຮັດສານ ຫຼື ແດນເຜດ

ມະຫາພູຕະ ໔ ຄື ປະຖະວີທາດ ອາໂປທາດ ເຕໂຊທາດ ແລະວາໂຍທາດ ອາດກາຍເປັນແນວອື່ນໄດ້ ແຕ່ພຣະອະຣິຍະສາວົກຜູ້ພຽບພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ ແຕ່ພຣະອະຣິຍະສາວົກ ຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງບໍ່ເພິ່ງປ່ຽນເປັນແນວອື່ນໄດ້ເລີຍ ໃນເລື້ອງນັ້ນເປັນໄປບໍ່ໄດ້ເລີຍ ທີ່ຈະປ່ຽນເປັນແນວອື່ນ ຄືພຣະອະຣິຍະສາວົກຜູ້ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະສົງ ຈັກຖືກຳເນີດໃນນະຮົກ ສັດເດຍຮັດສານ ຫຼື ແດນເຜດ

ອານົນ ທ່ານທັງຫຼາຍ ເພິ່ງອະນຸເຄາະຄົນເຫຼົ່າໃດ ແລະຄົນເຫຼົ່າໃດຈະເປັນມິດ ອຳມາດຍາດ ສາໂລຫິດກໍຕາມ ໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍ ເພິ່ງຊັກຊວນຄົນເຫຼົ່ານັ້ນໃຫ້ຕັ້ງໝັ້ນໃຫ້ດຳລົງຢູ່ໃນຖານະ ໕ ປະການນີ້ແລ

**ນິເວສະກະສູດ ທີ ໕ ຈົບ**

# ໙. ປະຖົມພະວະສູດ

## ວ່າດ້ວຍເຫດເກີດແຫ່ງພົບສູດທີ ໑

[໗໗] ຄັ້ງນັ້ນ ທ່ານພຣະອານົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດຮຽກວ່າ ພົບ ພົບ ດ້ວຍເຫດພຽງໃດ ພົບຈຶ່ງມີໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ອານົນ ຖ້າກຳທີ່ອຳນວຍຜົນໃຫ້ໃນກາມທາດ ຈັກບໍ່ມີແລ້ວ ກາມພົບເພິ່ງຜາກົດໄດ້ແດ່ບໍ?"

ພຣະອານົນຂາບທູນວ່າ ບໍ່ເພິ່ງຜາກົດເລີຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ຍ້ອນເຫດນີ້ແລ ກຳ ຈຶ່ງຊື່ວ່າ ເປັນໄຮ່ນາ ວິນຍານ ຈຶ່ງຊື່ວ່າເປັນພືດ ຕັນຫາຈຶ່ງຊື່ວ່າ ເປັນຢາງໜຽວ ວິນຍານດຳລົງໝັ້ນຢູ່ໄດ້ຍ້ອນທາດຢ່າງຫຍາບຂອງສັດທີ່ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງມັດໃຈ ການເກີດໃນພົບໃໝ່ຈຶ່ງມີຕໍ່ໄປອີກດ້ວຍປະການດັ່ງນີ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປອີກວ່າ "ອານົນ ຖ້າກຳທີ່ອຳນວຍຜົນໃຫ້ໃນຮູບທາດຈັກບໍ່ມີແລ້ວ ຮູບພົບເພິ່ງຜາກົດໄດ້ແດ່ບໍ?"

ພຣະອານົນຂາບທູນວ່າ "ບໍ່ເພິ່ງຜາກົດເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຍ້ອນເຫດນີ້ແລ ກຳຈຶ່ງຊື່ວ່າ ເປັນໄຮ່ນາ ວິນຍານຈຶ່ງຊື່ວ່າ ເປັນພືດ ຕັນຫາ ຈຶ່ງຊື່ວ່າ ເປັນຢາງໜຽວ ວິນຍານດຳລົງໝັ້ນຢູ່ໄດ້ຍ້ອນທາດຢ່າງກາງຂອງສັດທີ່ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງມັດໃຈ ການເກີດໃນພົບໃໝ່ຈຶ່ງມີຕໍ່ໄປອີກດ້ວຍປະການດັ່ງນີ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປອີກວ່າ "ອານົນ ຖ້າກຳທີ່ອຳນວຍຜົນໃຫ້ໃນອະຮູບທາດຈັກບໍ່ມີແລ້ວ ອະຮູບພົບເພິ່ງຜາກົດໄດ້ແດ່ບໍ?"

ພຣະອານົນຂາບທູນວ່າ "ບໍ່ເພິ່ງຜາກົດເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຍ້ອນເຫດນີ້ແລ ກຳຈຶ່ງຊື່ວ່າ ເປັນໄຮ່ນາ ວິນຍານຈຶ່ງຊື່ວ່າ ເປັນພືດ ຕັນຫາຈຶ່ງຊື່ວ່າເປັນຢາງໜຽວ ວິນຍານດຳລົງໝັ້ນຢູ່ໄດ້ຍ້ອນ ທາດຢ່າງ

ປະນິດຂອງສັດທີ່ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງມັດໃຈ ການເກີດໃນພົບໃໝ່ຈຶ່ງມີຕໍ່ໄປອີກດ້ວຍປະການດັ່ງນີ້ອານົນ ພົບມີໄດ້ດ້ວຍເຫດດັ່ງກ່າວ ມານີ້ແລ"

**ປະຖົມພະວະສູດທີ ໖ ຈົບ**

## ໗. ທຸຕິຍະພະວະສູດ

## ວ່າດ້ວຍເຫດເກີດແຫ່ງພົບ ສູດ ທີ ໘

[໗໘] ຄັ້ງນັ້ນ ທ່ານພຣະອານົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນກັບພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງຕັດຮຽກວ່າ "ພົບ ພົບ" ດ້ວຍເຫດພຽງທໍ່ໃດ ພົບຈຶ່ງມີໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອານົນ ຖ້າກຳທີ່ອຳນວຍຜົນໃຫ້ໃນກາມທາດຈັກບໍ່ມີແລ້ວ ການພົບເພິ່ງຜາກົດໄດ້ແດ່ບໍ?"

ພຣະອານົນຂາບທູນວ່າ "ບໍ່ເພິ່ງຜາກົດເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຍ້ອນເຫດນີ້ແລ ກຳຈຶ່ງຊື່ວ່າ ເປັນໄຮ່ນາ ວິນຍານຈຶ່ງຊື່ວ່າ ເປັນພືດ ຕັນຫາຈຶ່ງຊື່ວ່າ ເປັນຢາງໜຽວ ເຈຕະນາແນ່ວແນ່ ຄວາມປາຖະໜາດຳລົງໝັ້ນຢູ່ໄດ້ຍ້ອນທາດຢ່າງຫຍາບຂອງສັດທີ່ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງມັດໃຈ ການເກີດໃນພົບໃໝ່ຈຶ່ງມີຕໍ່ໄປອີກດ້ວຍປະການດັ່ງນີ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປອີກວ່າ "ອານົນ ຖ້າກຳທີ່ອຳນວຍຜົນໃຫ້ໃນຮູບທາດຈັກບໍ່ມີແລ້ວ ຮູບພົບເພິ່ງຜາກົດໄດ້ແດ່ບໍ?"

ພຣະອານົນຂາບທູນວ່າ "ບໍ່ເພິ່ງຜາກົດເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຍ້ອນເຫດນີ້ແລ ກຳຈຶ່ງຊື່ວ່າ ເປັນໄຮ່ນາ ວິນຍານຈຶ່ງຊື່ວ່າ ເປັນພືດ ຕັນຫາຈຶ່ງຊື່ວ່າ ເປັນຢາງໜຽວ ເຈຕະນາອັນແນ່ວແນ່ ຄວາມປາຖະໜາດຳລົງໝັ້ນຢູ່ໄດ້ ຍ້ອນທາດຢ່າງກາງຂອງສັດທີ່ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງມັດໃຈ ການເກີດໃນພົບໃໝ່ຈຶ່ງມີຕໍ່ໄປອີກດ້ວຍປະການດັ່ງນີ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມຕໍ່ໄປອີກວ່າ "ອານົນ ຖ້າກຳທີ່ອຳນວຍຜົນໃຫ້ໃນ ອະຮູບທາດຈັກບໍ່ມີແລ້ວ ອະຮູບພົບເພິ່ງຜາກົດໄດ້ແດ່ບໍ?"

ພຣະອານົນຂາບທູນວ່າ "ບໍ່ເພິ່ງຜາກົດເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຍ້ອນເຫດນີ້ແລ ກໍາຈຶ່ງຊື່ວ່າ ເປັນໄຮ່ນາ ວິນຍານຈຶ່ງຊື່ວ່າ ເປັນພືດ ຕັນຫາຈຶ່ງຊື່ວ່າ ເປັນຢາງໜຽວ ເຈຕະນາແນ່ວແນ່ ຄວາມປາຖະໜາດໍາລົງໝັ້ນຢູ່ໄດ້ຍ້ອນທາດຢ່າງປະນີດຂອງສັດທີ່ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງມັດໃຈ ການເກີດໃນພົບໃໝ່ຈຶ່ງມີຕໍ່ໄປອີກດ້ວຍປະການດັ່ງນີ້ອານົນ ພົບມີໄດ້ດ້ວຍເຫດດັ່ງກ່າວມານີ້ແລ"

ທຸຕິຍະພະວະສູດ ທີ ໒ ຈົບ

## ໓. ສີລັບພະຕະສູດ

## ວ່າດ້ວຍຜົນແຫ່ງສິນແລະຂໍ້ວັດປະຕິບັດ

[໗໙] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ "ອານົນ ສິນຂໍ້ວັດປະຕິບັດ ຊີວິດ ພົມມະຈັນ ແລະການບວງສວງ ມີຜົນທຸກຢ່າງແມ່ນບໍ?"

ພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນບັນຫາເລື້ອງນີ້ບໍ່ເພິ່ງຕອບ ໂດຍແງ່ດຽວ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າເປັນແນວນັ້ນ ທ່ານຈົ່ງຈໍາແນກມາ"

ພຣະອານົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນນັ້ນເສບ (ຖືຮັກສາ) ສິນຂໍ້ວັດປະຕິບັດ ຊີວິດ ພົມມະຈັນ ແລະການບວງສວງໃດ ອະກຸສົນທໍາຈະເລີນຍິ່ງຂຶ້ນ ກຸສົນທໍາກັບເສື່ອມໄປ ສິນຂໍ້ວັດປະຕິບັດ ຊີວິດ ພົມມະຈັນ ແລະການບວງຊວງນັ້ນຊື່ວ່າບໍ່ມີຜົນ ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອບຸກຄົນນັ້ນເສບສິນຂໍ້ວັດປະຕິບັດ ຊີວິດ ພົມມະຈັນ ແລະການບວງສວງໃດ ອະກຸສົນທໍາເສື່ອມໄປ ກຸສົນທໍາກັບຈະເລີນຍິ່ງຂຶ້ນ ສິນຂໍ້ວັດປະຕິບັດ ຊີວິດ ພົມມະຈັນ ແລະການບວງສວງນັ້ນຊື່ວ່າ ມີຜົນ"

ທ່ານພຣະອານົນໄດ້ຂາບທູນເລື້ອງນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ລໍາດັບນັ້ນທ່ານພຣະອານົນຄິດວ່າ "ພຣະສາດສະດາຊົງພໍພຣະທະໄທເຮົາ" ຈຶ່ງລຸກຈາກບ່ອນນັ່ງຖວາຍອະພິວາດ ທໍາປະທັກສິນແລ້ວຫຼີກໄປ ເມື່ອພໍທ່ານພຣະອານົນຫຼີກໄປໄດ້ບໍ່ດົນ ພຣະຜູ້ມີພຣະພາກ

ເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ອານົນຍັງເປັນພຣະເສຂະ ແຕ່ຜູ້ທີ່ສະເໝີກັບອານົນທາງປັນຍາບໍ່ແມ່ນຫາໄດ້ງ່າຍ"

**ສີລັບພະຕະສູດທີ ໗ ຈົບ**

## ໘. ຄັນທະຊາຕະສູດ

## ວ່າດ້ວຍກິ່ນຫອມ

[໗໐] ຄັ້ງນັ້ນ ທ່ານພຣະອານົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ກິ່ນຫອມ ໓ ຢ່າງ ລອຍໄປຕາມລົມທໍ່ນັ້ນ ລອຍໄປທວນລົມບໍ່ໄດ້

ກິ່ນຫອມ ໓ ຢ່າງ ອັນໃດແດ່ ຄື

໑. ກິ່ນທີ່ເກີດຈາກຮາກ
໒. ກິ່ນທີ່ເກີດຈາກແກ່ນ
໓. ກິ່ນທີ່ເກີດຈາກດອກ

ກິ່ນຫອມ ໓ ຢ່າງນີ້ແລ ລອຍໄປຕາມລົມທໍ່ນັ້ນ ລອຍໄປທວນລົມບໍ່ໄດ້ ຂ້າແດ່ ພຣະອົງຜູ້ຈະເລີນ ກິ່ນຫອມທີ່ລອຍໄປຕາມລົມກໍໄດ້ ລອຍໄປທວນລົມກໍໄດ້ ລອຍໄປຕາມລົມ ແລະທວນລົມກໍໄດ້ ມີຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ກິ່ນຫອມທີ່ລອຍໄປຕາມລົມກໍໄດ້ ລອຍໄປທວນລົມກໍໄດ້ ລອຍໄປທັງຕາມລົມແລະທວນລົມກໍໄດ້ ມີຢູ່

ທ່ານພຣະອານົນທູນຖາມວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກິ່ນຫອມທີ່ລອຍໄປຕາມລົມກໍໄດ້ ລອຍໄປທວນລົມກໍໄດ້ ລອຍໄປທັງຕາມລົມແລະທວນລົມກໍໄດ້ ເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ໃນໂລກນີ້ສະຕີ ຫຼື ບຸຣຸດໃນເຮືອນ ຫຼື ໃນເຂດໃດເຖິງ ພຣະພຸດທະເຈົ້າເປັນສະຣະນະ ເຖິງພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມ ຜະໝາດ ເປັນຜູ້ມີສິນ ມີທຳງາມ ມີໃຈປາສະຈາກຄວາມຂີ້ຖີ່ ອັນເປັນ

ມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີ ໃນການໃຫ້ທານ ແລະການຈຳແນກທານ ຢູ່ຄອງເຮືອນ

ສະມະນະພາມໃນທິດທັງຫຼາຍ ຕ່າງກ່າວສັນເສີນຄຸນຂອງເຂົາວ່າ "ສະຕີຫຼືບຸຣຸດໃນເຮືອນ ຫຼືໃນເຂດນັ້ນ ເຖິງພຣະພຸດທະເຈົ້າເປັນສະຣະນະ ເຖິງພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກ ການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາ ຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ເປັນຜູ້ມີສິນ ມີທຳງາມ ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການໃຫ້ທານແລະການຈຳແນກທານ ຢູ່ຄອງເຮືອນ"

ແມ່ນພວກເທວະດາ ກໍກ່າວສັນເສີນຄຸນຂອງເຂົາວ່າ "ສະຕີຫຼືບຸຣຸດໃນເຮືອນ ຫຼື ໃນເຂດນັ້ນທີ່ເຖິງພຣະພຸດທະເຈົ້າເປັນສະຣະນະ ຯລຯ ຄວນແກ່ການຂໍ ຍິນດີໃນການໃຫ້ທານແລະການຈຳແນກທານ ຢູ່ຄອງເຮືອນ" ອານົນ ກິ່ນຫອມນີ້ແລ ລອຍໄປຕາມລົມກໍໄດ້ ລອຍໄປທວນລົມກໍໄດ້ ລອຍໄປທັງຕາມລົມ ແລະທວນລົມກໍໄດ້

ກິ່ນດອກໄມ້ລອຍໄປທວນລົມບໍ່ໄດ້
ກິ່ນຈັນ ກິ່ນເກດສະໜາ
ຫຼືກິ່ນກະລຳພັກ ລອຍໄປທວນລົມບໍ່ໄດ້
ສ່ວນກິ່ນຂອງສັດຕະບຸຣຸດລອຍໄປທວນລົມໄດ້
ຍ້ອນສັດຕະບຸຣຸດຊ່າລືໄປທົ່ວທຸກທິດ (ດ້ວຍກິ່ນແຫ່ງຄຸນມີສິນເປັນຕົ້ນ)

**ຄັນທະຊາຕະສູດ ທີ່ ໗ ຈົບ**

## ໑໐. ຈູນນິກາສູດ

## ວ່າດ້ວຍໂລກກະທາດຂະໜາດນ້ອຍ

[໘໑] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຮັບຟັງເລື້ອງນີ້ມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ສາວົກຊື່ວ່າ ອະພິພູຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິຂີ ສະຖິດຢູ່ໃນພົມມະໂລກ ໃຊ້ສຽງປະກາດໃຫ້ພັນໂລກກະທາດຮູ້ເລື້ອງໄດ້[໑]" ສ່ວນພຣະຜູ້ມີພຣະ

ພາກອະຣະຫັນຕະ ສຳມາສຳພຸດທະເຈົ້າ ຊົງສາມາດໃຊ້ພຣະສຸຣະສຽງປະກາດໃຫ້ຮູ້ເລື້ອງໄດ້ໄກ ທໍ່ໃດ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ນັ້ນເປັນພຽງສາວົກ ສ່ວນຕະຖາຄົດທັງຫຼາຍປະມານບໍ່ໄດ້"

ແມ່ນເທື່ອທີ ໔ ທ່ານພຣະອານົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຮັບຟັງເລື້ອງນີ້ ມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ "ອານົນ ສາວົກຊື່ວ່າ ອະພິພູຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິຂີສະຖິດຢູ່ໃນພົມມະໂລກ ໃຊ້ສຽງປະກາດໃຫ້ພັນໂລກກະທາດຮູ້ເລື້ອງໄດ້" ສ່ວນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຊົງສາມາດໃຊ້ພຣະສຸຣະສຽງປະກາດໃຫ້ຮູ້ເລື້ອງໄດ້ໄກທໍ່ໃດ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ນັ້ນ ເປັນພຽງສາວົກ ສ່ວນຕະຖາຄົດທັງຫຼາຍປະມານບໍ່ໄດ້"

ແມ່ນເທື່ອທີ ໕ ທ່ານພຣະອານົນກໍໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຮັບຟັງເລື້ອງນີ້ ມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ວ່າ "ອານົນ ສາວົກຊື່ວ່າ ອະພິພູຂອງພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າ ສິຂີ ສະຖິດຢູ່ໃນ ພົມມະໂລກ ໃຊ້ສຽງປະກາດໃຫ້ພັນໂລກກະທາດຮູ້ເລື້ອງໄດ້" ສ່ວນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຊົງສາມາດໃຊ້ພຣະສຸຣະສຽງປະກາດໃຫ້ຮູ້ເລື້ອງໄດ້ໄກທໍ່ໃດ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທ່ານໄດ້ຟັງພຽງເລື້ອງພັນໂລກກະທາດ ຂະໜາດນ້ອຍທໍ່ນັ້ນ"

ພຣະອານົນຂາບທູນວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນເວລາ ຂ້າແດ່ພຣະສຸຄົດເຈົ້າ ບັດນີ້ເປັນເວລາແຫ່ງເທດສະໜາທີ່ພຣະອົງຈະເພິ່ງຕັດ ພິກຂຸທັງຫຼາຍໄດ້ສະດັບພຣະທຳມະເທດສະໜາຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ອານົນ ພັນໂລກກະທາດທໍ່ໂອກາດທີ່ດວງຈັນ ແລະດວງອາທິດໂຄຈອນສ່ອງທິດທັງຫຼາຍໃຫ້ສະຫວ່າງຮຸ່ງເຮືອງ ໃນພັນໂລກກະທາດນັ້ນ ມີດວງຈັນ ໑,໐໐໐ ດວງ ມີດວງອາທິດ ໑,໐໐໐ ດວງ ມີພູຫຼວງສິເນຣຸ ໑,໐໐໐ ໜ່ວຍ ມີຊົມພູທະວີບ ໑,໐໐໐ ມີອະປະຣະໂຄຍານທະວີບ ໑,໐໐໐

ມີອຸດຕະຣະກຸຣຸທະວີບ ໑,໐໐໐ ມີປຸບພະວິເທຫະທະວີບ ໑,໐໐໐ ມີມະຫາສະມຸດ ໔,໐໐໐ ມີທ້າວມະຫາຣາດ ໔,໐໐໐[๑] ມີເທວະໂລກຊັ້ນຈາຕຸມະຫາຣາດ ໑,໐໐໐ ມີເທວະໂລກຊັ້ນຕາວະຕິງສາ ໑,໐໐໐ ມີເທວະໂລກຊັ້ນຍາມາ ໑,໐໐໐ ມີເທວະໂລກຊັ້ນດຸສິດ ໑,໐໐໐ ມີເທວະໂລກຊັ້ນນິມມານະຣະດີ ໑,໐໐໐ ມີເທວະໂລກຊັ້ນປະຣະນິມມິຕະວະສະວັດດີ ໑,໐໐໐ ມີພົມມະໂລກ ໑,໐໐໐ ນີ້ຮຽກວ່າ ພັນໂລກກະທາດຂະໜາດນ້ອຍ

ໂລກ ໑,໐໐໐ ຄູນດ້ວຍໂລກກະທາດຂະໜາດນ້ອຍນັ້ນ ນີ້ຮຽກວ່າ ພັນໂລກກະທາດຂະໜາດກາງ ໂລກ ໑,໐໐໐ ຄູນດ້ວຍພັນໂລກກະທາດຂະໜາດກາງນັ້ນ ນີ້ຮຽກວ່າ ພັນໂລກກະທາດຂະໜາດໃຫຍ່[๒]

ອານົນ ຕະຖາຄົດ ເມື່ອມຸ້ງໝາຍເພິ່ງໃຊ້ສຽງປະກາດໃຫ້ພັນໂລກກະທາດຂະໜາດໃຫຍ່ຮູ້ເລື້ອງໄດ້ ຫຼື ໃຊ້ສຽງປະກາດໃຫ້ຮູ້ເລື້ອງໄດ້ທໍ່ທີ່ມຸ້ງໝາຍ

ພຣະອານົນທູນຖາມວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ເພິ່ງໃຊ້ພຣະສຸຣະສຽງປະກາດໃຫ້ພັນໂລກກະທາດຂະໜາດໃຫຍ່ຮູ້ເລື້ອງໄດ້ ຫຼື ໃຊ້ພຣະສຸຣະສຽງປະກາດໃຫ້ຮູ້ເລື້ອງໄດ້ທໍ່ທີ່ມຸ້ງໝາຍ ໄດ້ແນວໃດ?”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ອານົນ ພຣະຕະຖາຄົດໃນໂລກນີ້ ເພິ່ງແຜ່ຣັດສະໝີໄປທົ່ວພັນໂລກກະທາດຂະໜາດໃຫຍ່ໄດ້ ເມື່ອໃດ ໝູ່ສັດເພິ່ງຈື່ແສງສະຫວ່າງນັ້ນໄດ້ ເມື່ອນັ້ນພຣະຕະຖາຄົດ ເພິ່ງເປ່ງພຣະສຸຣະສຽງໃຫ້ສັດເຫຼົ່ານັ້ນໄດ້ຍິນ ອານົນ ພຣະຕະຖາຄົດເພິ່ງໃຊ້ພຣະສຸຣະສຽງປະກາດໃຫ້ພັນໂລກກະທາດຂະໜາດໃຫຍ່ໃຫ້ຮູ້ເລື້ອງໄດ້ ຫຼື ໃຊ້ພຣະສຸຣະສຽງປະກາດໃຫ້ຮູ້ເລື້ອງໄດ້ທໍ່ທີ່ມຸ້ງໝາຍແນວນີ້ແລ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນ ຈຶ່ງໄດ້ຂາບທູນຄຳນີ້ວ່າ “ເປັນລາບຂອງຂ້າພຣະອົງນໍ ເປັນໂຊກຂອງຂ້າພຣະອົງນໍທີ່ຂ້າພຣະອົງມີພຣະສາດສະດາ ຜູ້ຊົງມີລິດແນວນີ້ມີອານຸພາບແນວນີ້”

ເມື່ອທ່ານພຣະອານົນຂາບທູນແນວນີ້ແລ້ວ ທ່ານພຣະອຸທາຍີຈຶ່ງໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ “ທ່ານອານົນ ຖ້າພຣະສາດສະດາຂອງທ່ານຊົງມີລິດແນວນີ້ ມີອານຸພາບແນວນີ້ ໃນຂໍ້ນີ້ ທ່ານໄດ້ປະໂຫຍດອັນໃດ?”

ເມື່ອທ່ານພຣະອຸທາຍີກ່າວແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດກັບທ່ານພຣະອຸທາຍີດັ່ງນີ້ວ່າ “ອຸທາຍີ ທ່ານຢ່າໄດ້ກ່າວແນວນັ້ນ ໆ ຖ້າອານົນຍັງບໍ່ໝົດຣາຄະມໍຣະນະພາບໄປແນວນີ້ແລ້ວ ຍ້ອນຈິດທີ່ເຫຼື້ອມໃສນັ້ນ ທ່ານຈະຄອບຄອງຄວາມເປັນເຈົ້າແຫ່ງເທວະດາໃນໝູ່

ເທວະດາ ໆ ຄັ້ງ ຈະຄອບຄອງຄວາມເປັນມະຫາຣາດໃນຊົມພູທະວີບນີ້ ໆ ຄັ້ງ ອຸທາຍິ ແຕ່ອານົນຈັກປະຣິນິບພານ ໃນປັດຈຸບັນໃນຊາດນີ້ແລ"

**ຈູລະນິກາສູດທີ ໑໐ ຈົບ**

**ອານັນທະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

| | |
|---|---|
| ໑. ສັບນະສູດ | ໒. ອາຊີວະກະສູດ |
| ໓. ມະຫານາມະສັກກະສູດ | ໔. ນິຄັນຖະສູດ |
| ໕. ນິເວສະກະສູດ | ໖. ປະຖົມພະວະສູດ |
| ໗. ທຸຕິຍະພະວະສູດ | ໘ ສີລັບພະຕະສູດ |
| ໙. ຄັນທະຊາຕະສູດ | ໑໐. ຈູລະນິກາສູດ |

# ໔. ສະມະນະວັກ

## ໝວດວ່າດ້ວຍສະມະນະ

## ໑. ສະມະນະສູດ

## ວ່າດ້ວຍກິດຂອງສະມະນະ

[໘໒] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກິດທີ່ສະມະນະຄວນເຮັດ ເປັນຂອງສະມະນະ ໓ ປະການນີ້

ກິດທີ່ສະມະນະຄວນເຮັດ ເປັນຂອງສະມະນະ ໓ ປະການ ອັນໃດແດ່ ຄື

໑. ການສະມາທານອະທິສີລະສິກຂາ (ສິກຂາຄືສີນອັນຍິ່ງ)
໒. ການສະມາທານອະທິຈິດຕະສິກຂາ (ສິກຂາຄືຈິດອັນຍິ່ງ)
໓. ການສະມາທານອະທິປັນຍາສິກຂາ (ສິກຂາຄືປັນຍາອັນຍິ່ງ)

ກິດທີ່ສະມະນະຄວນເຮັດ ເປັນຂອງສະມະນະ ໓ ປະການນີ້ແລ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິສີລະສິກຂາ ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິຈິດຕະສິກຂາ ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິປັນຍາສິກຂາ"

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແບບນີ້ແລ

**ສະມະນະສູດ ທີ ໑ ຈົບ**

## ໘. ຄັດທະຣະພະສູດ

## ວ່າດ້ວຍພິກຂຸທີ່ບໍ່ມີໄຕຣສິກຂາປຽບຄືລາໃນຝູງງົວ

[໗໙] ພິກຂຸທັງຫຼາຍ ລາຕິດຕາມຝູງງົວໄປທາງຫຼັງຮ້ອງວ່າ "ແມ່ນໂຕເຮົາກໍເປັນງົວ ແມ່ນໂຕເຮົາກໍເປັນງົວ" ແຕ່ມັນບໍ່ມີສີຄືງົວ ບໍ່ມີສຽງຄືງົວ ບໍ່ມີຮອຍຕີນຄືງົວ ມັນພຽງແຕ່ຕິດຕາມໄປທາງຫຼັງທໍ່ນັ້ນ ຮ້ອງວ່າ "ແມ່ນໂຕເຮົາກໍເປັນງົວ ແມ່ນໂຕເຮົາກໍເປັນງົວ" ແມ່ນສັນໃດ

ພິກຂຸລາງອົງໃນທຳວິໄນນີ້ກໍ ຄື ກັນສັນນັ້ນ ຕິດຕາມໄປທາງຫຼັງໝູ່ພິກຂຸ ປະກາດຕົນວ່າ "ແມ່ນເຮົາກໍເປັນພິກຂຸ ແມ່ນເຮົາກໍເປັນພິກຂຸ" ແຕ່ທ່ານບໍ່ມີຄວາມພໍໃຈໃນການສະມາທານ ອະທິສີລະສິກຂາຄືພິກຂຸອື່ນ ບໍ່ມີຄວາມພໍໃຈໃນການສະມາທານອະທິຈິດຕະສິກຂາຄືພິກຂຸອື່ນ ບໍ່ມີຄວາມພໍໃຈໃນການສະມາທານອະທິປັນຍາສິກຂາຄືພິກຂຸອື່ນ ພິກຂຸນັ້ນ ພຽງແຕ່ຕິດຕາມໄປທາງຫຼັງໝູ່ພິກຂຸ ປະກາດຕົນວ່າ "ແມ່ນເຮົາກໍເປັນພິກຂຸ ແມ່ນເຮົາກໍເປັນພິກຂຸ" ທໍ່ນັ້ນ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແບບນີ້ວ່າ "ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິສີລະສິກຂາ ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານ ອະທິຈິດຕະສິກຂາ ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິປັນຍາສິກຂາ"

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແບບນີ້ແລ

**ຄັດທະຣະພະສູດ ທີ ໘ ຈົບ**

## ໙. ເຂດຕະສູດ

## ວ່າດ້ວຍກິດເບື້ອງຕົ້ນທີ່ຄວນເຮັດໃນນາ

[໗໘] ພິກຂຸທັງຫຼາຍ ຄະຫະບໍດີຊາວນາມີກິດທີ່ຕ້ອງເຮັດໃນເບື້ອງຕົ້ນ ໓ ປະການນີ້

ກິດທີ່ຕ້ອງເຮັດໃນເບື້ອງຕົ້ນ ໓ ປະການ ອັນໃດແດ່ ຄື

ຄະຫະບໍດີຊາວນາໃນໂລກນີ້ໃນເບື້ອງຕົ້ນ

໑. ຕ້ອງໄຖຄາດນາໃຫ້ຮຽບຮ້ອຍ
໒. ຕ້ອງປູກພືດລົງໄປຕາມການທີ່ຄວນ
໓. ຕ້ອງໄຂນ້ຳເຂົ້າແດ່ ລະບາຍນ້ຳອອກແດ່ ຕາມການທີ່ຄວນ

ຄະຫະບໍດີຊາວນາມີກິດທີ່ຕ້ອງເຮັດໃນເບື້ອງຕົ້ນ ໓ ປະການນີ້ແລ ສັນໃດພິກຂຸກໍຄືກັນສັນນັ້ນແລ ມີກິດທີ່ຕ້ອງເຮັດໃນເບື້ອງຕົ້ນ ໓ ປະການນີ້

ກິດທີ່ຕ້ອງເຮັດໃນເບື້ອງຕົ້ນ ໓ ປະການ ອັນໃດແດ່ ຄື

໑. ການສະມາທານອະທິສີລະສິກຂາ
໒. ການສະມາທານອະທິຈິດຕະສິກຂາ
໓. ການສະມາທານອະທິປັນຍາສິກຂາ

ພິກຂຸມີກິດທີ່ຕ້ອງເຮັດໃນເບື້ອງຕົ້ນ ໓ ປະການນີ້ແລ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິສີລະສິກຂາ ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານ ອະທິຈິດຕະສິກຂາ ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິປັນຍາສິກຂາ"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ເຂດຕະສູດທີ ໓ ຈົບ**

# ໔. ວັດຊີປຸດຕະສູດ

## ວ່າດ້ວຍພິກຂຸວັດຊີບຸດ

[໘໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ພິກຂຸວັດຊີບຸດອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ສິກຂາບົດ ໑໕໐ ຖ້ວນນີ້ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບທຸກເຄິ່ງເດືອນ ຂ້າພຣະອົງບໍ່ສາມາດສຶກສາໃນສິກຂາບົດນີ້ໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ກໍທ່ານຈັກສາມາດສຶກສາໃນສິກຂາ ໓ ຄື ອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາໄດ້ຫຼືບໍ່?"

ພິກຂຸວັດຊີບຸດນັ້ນ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງສາມາດສຶກສາໃນສິກຂາ ໓ ຄື ອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາໄດ້"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຖ້າເປັນແນວນັ້ນ ທ່ານຈົ່ງສຶກສາໃນສິກຂາ ໓ ຄື ອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາຢູ່ເທີ້ນ

ເມື່ອໃດ ທ່ານສຶກສາອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາ ເມື່ອນັ້ນທ່ານຜູ້ສຶກສາອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາຢູ່ ກໍຈັກລະຣາຄະ ໂທສະ ແລະໂມຫະໄດ້ ຍ້ອນລະຣາຄະ ໂທສະ ແລະໂມຫະໄດ້ ທ່ານຈັກບໍ່ເຮັດກຳທີ່ເປັນອະກຸສົນ ຈັກບໍ່ປະພຶດສິ່ງທີ່ຊົ່ວຊາມອີກ

ເມື່ອຕໍ່ມາ ພິກຂຸນັ້ນສຶກສາອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາ ເມື່ອທ່ານຜູ້ສຶກສາອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາຢູ່ ກໍລະຣາຄະ ໂທສະ ແລະໂມຫະໄດ້ ຍ້ອນລະຣາຄະ ໂທສະ ແລະໂມຫະໄດ້ແລ້ວ ທ່ານຈຶ່ງບໍ່ເຮັດກຳທີ່ເປັນອະກຸສົນ ບໍ່ປະພຶດສິ່ງທີ່ຊົ່ວຊາມອີກ

**ວັດຊີປຸດຕະສູດ ທີ ໔ ຈົບ**

## ໕. ເສຂະສູດ

## ວ່າດ້ວຍເສຂະບຸກຄົນ

[໘໖] ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ "ເສຂະ ເສຂະ" ບຸກຄົນ ຊື່ວ່າ ເປັນເສຂະດ້ວຍເຫດພຽງເທົ່າໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ທີ່ຮຽກວ່າ "ເສຂະ" ຍ້ອນຍັງຕ້ອງສຶກສາ ສຶກສາອັນໃດ ຄື ສຶກສາອະທິສີລະສິກຂາແດ່ ອະທິຈິດຕະສິກຂາແດ່ ອະທິປັນຍາສິກຂາແດ່

ພິກຂຸ ທີ່ຮຽກວ່າ ເສຂະ ຍ້ອນຍັງຕ້ອງສຶກສາແລ

ຍານໃນຄວາມສິ້ນກິເລດຍ່ອມເກີດຂຶ້ນແກ່ພຣະເສຂະ
ຜູ້ກຳລັງສຶກສາແລະປະຕິບັດຕາມທາງສາຍກົງ¹ກ່ອນ
ລຳດັບຕໍ່ຈາກນັ້ນອະຣະຫັດຕະຜົນຈຶ່ງເກີດ
ຕໍ່ຈາກນັ້ນ ຍານ²ໃນຄວາມສິ້ນໄປແຫ່ງພະອະສັງໂຍດ
ວ່າ "ວິມຸດຕິຂອງເຮົາບໍ່ກຳເຮີບ"
ຍ່ອມເກີດຂຶ້ນແກ່ທ່ານຜູ້ລຸດພົ້ນດ້ວຍອະຣະຫັດຕະຜົນ

**ເສຂະສູດ ທີ ໕ ຈົບ**

## ໖. ປະຖົມສິກຂາສູດ

## ວ່າດ້ວຍໄຕຣສິກຂາສູດທີ ໑

[໘໗] ພິກຂຸທັງຫຼາຍ ສິກຂາບົດ ໑໕໐ ຖ້ວນທີ່ກຸນລະບຸດຜູ້ປາຖະໜາປະໂຫຍດສຶກສາຢູ່ ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບທຸກເຄິ່ງເດືອນ ສິກຂາ ໓ ປະການນີ້ ເປັນທີ່ລວມຂອງສິກຂາບົດ ໑໕໐ ນັ້ນທັງໝົດ

ສິກຂາ ໓ ປະການ ອັນໃດແດ່ ຄື

໑. ອະທິສີລະສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ

ສິກຂາ ໓ ປະການນີ້ແລ ເປັນທີ່ລວມຂອງສິກຂາບົດ ໑໕໐ ນັ້ນທັງໝົດ

ພິກຂຸໃນທຳວິໄນນີ້ ມີປົກກະຕິເຮັດສີນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິພໍປະມານ ມີປົກກະຕິເຮັດປັນຍາພໍປະມານ ພິກຂຸນັ້ນ ລ່ວງລະເມີດສິກຂາບົດເລັກໜ້ອຍແດ່ ອອກຈາກອາບັດແດ່ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນໃນການຕ້ອງອາບັດ ແລະການອອກຈາກອາບັດ ເລັກໜ້ອຍນີ້ເຮົາບໍ່ກ່າວຄວາມເປັນຄົນບໍ່ເໝາະສົມ (ແກ່ມັກຜົນ) ໄວ້ ແຕ່ສິກຂາບົດເຫຼົ່າໃດ ເປັນເບື້ອງຕົ້ນແຫ່ງພົມມະຈັນ ສົມຄວນແກ່ພົມມະຈັນ ພິກຂຸນັ້ນມີສີນປະຈຳໂຕ ແລະມີສີນໝັ້ນຄົງໃນສິກຂາບົດເຫຼົ່ານັ້ນ ສຶກສາໃນສິກຂາບົດທັງຫຼາຍ ຍ້ອນສັງໂຍດ ໓ ປະການສິ້ນໄປ ທ່ານຈຶ່ງເປັນໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ພິກຂຸໃນທຳວິໄນນີ້ ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິພໍປະມານ ມີປົກກະຕິເຮັດປັນຍາພໍປະມານ ພິກຂຸນັ້ນ ລ່ວງລະເມີດສິກຂາບົດເລັກໜ້ອຍແດ່ ອອກຈາກອາບັດແດ່ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນໃນການຕ້ອງອາບັດແລະການອອກຈາກອາບັດເລັກໜ້ອຍນີ້ ເຮົາບໍ່ກ່າວຄວາມເປັນຄົນບໍ່ເໝາະສົມໄວ້ ແຕ່ສິກຂາບົດເຫຼົ່າໃດເປັນເບື້ອງຕົ້ນແຫ່ງພົມມະຈັນ ສົມຄວນແກ່ພົມມະຈັນ ພິກຂຸນັ້ນ ມີສິນປະຈຳໂຕ ແລະມີສິນໝັ້ນຄົງໃນ ສິກຂາບົດເຫຼົ່ານັ້ນ ສະມາທານສຶກສາໃນສິກຂາບົດທັງຫຼາຍ ຍ້ອນສັງໂຍດ ໓ ປະການ ສິ້ນໄປ ແລະຍ້ອນຣາຄະ ໂທສະ ໂມຫະເບົາບາງ ທ່ານຈຶ່ງເປັນ ສະກະທາຄາມີ ມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້

ພິກຂຸໃນທຳວິໄນນີ້ ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິໃຫ້ບໍລິບູນມີປົກກະຕິ ເຮັດປັນຍາພໍປະມານ ພິກຂຸນັ້ນ ລ່ວງລະເມີດສິກຂາບົດເລັກໜ້ອຍແດ່ ອອກຈາກອາບັດແດ່ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນໃນການຕ້ອງອາບັດແລະການອອກຈາກອາບັດເລັກໜ້ອຍນີ້ ເຮົາບໍ່ກ່າວຄວາມເປັນຄົນບໍ່ເໝາະສົມໄວ້ ແຕ່ສິກຂາບົດເຫຼົ່າໃດເປັນເບື້ອງຕົ້ນແຫ່ງພົມມະຈັນ ສົມຄວນແກ່ພົມມະຈັນ ພິກຂຸນັ້ນມີສິນປະຈຳໂຕ ແລະມີສິນໝັ້ນຄົງໃນສິກຂາບົດເຫຼົ່ານັ້ນ ສະມາທານສຶກສາໃນສິກຂາບົດທັງຫຼາຍ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນ ໂອປະປາຕິກະ ປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ພິກຂຸໃນທຳວິໄນນີ້ ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິໃຫ້ບໍລິບູນມີປົກກະຕິ ເຮັດປັນຍາພໍປະມານ ພິກຂຸນັ້ນລ່ວງລະເມີດສິກຂາບົດເລັກໜ້ອຍແດ່ ອອກຈາກອາບັດແດ່ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນໃນການຕ້ອງອາບັດ ແລະການອອກຈາກອາບັດເລັກໜ້ອຍນີ້ ເຮົາບໍ່ ກ່າວຄວາມເປັນຄົນບໍ່ເໝາະສົມໄວ້ ແຕ່ສິກຂາບົດເຫຼົ່າໃດເປັນເບື້ອງຕົ້ນແຫ່ງພົມມະຈັນ ສົມຄວນແກ່ພົມມະຈັນ ພິກຂຸນັ້ນ ມີສິນປະຈຳໂຕແລະມີສິນໝັ້ນຄົງໃນສິກຂາບົດເຫຼົ່ານັ້ນ ສະມາທານສຶກສາໃນສິກຂາບົດທັງຫຼາຍ ທ່ານເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປນຳປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸຜູ້ເຮັດໄດ້ພຽງບາງສ່ວນຍ່ອມໃຫ້ສຳເລັດໄດ້ບາງສ່ວນ ຜູ້ເຮັດໄດ້ບໍລິບູນຍ່ອມໃຫ້ສຳເລັດໄດ້ບໍລິບູນ ດ້ວຍປະການດັ່ງນີ້ແລ ເຮົາກ່າວວ່າສິກຂາບົດທັງຫຼາຍບໍ່ເປັນໝັນເລີຍ

**ປະຖົມສິກຂາສູດທີ ໖ ຈົບ**

# ໗. ທຸຕິຍະສິກຂາສູດ

## ວ່າດ້ວຍໄຕຣສິກຂາ ສູດ ທີ ໔

[໗໗] ພິກຂຸທັງຫຼາຍ ສິກຂາບົດ ໑໕໐ ຖ້ວນທີ່ກຸນລະບຸດທັງຫຼາຍຜູ້ປາຖະໜາປະໂຫຍດສຶກສາຢູ່ ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບທຸກເຄິ່ງເດືອນ ສິກຂາ ໓ ປະການນີ້ເປັນທີ່ລວມຂອງສິກຂາບົດ ໑໕໐ ນັ້ນທັງໝົດ

ສິກຂາ ໓ ປະການ ອັນໃດແດ່ ຄື

໑. ອະທິສີລະສິກຂາ
໔. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ

ສິກຂາ ໓ ປະການນີ້ແລເປັນທີ່ລວມຂອງສິກຂາບົດ ໑໕໐ ນັ້ນທັງໝົດ

ພິກຂຸໃນທຳວິໄນນີ້ ມີປົກກະຕິເຮັດສີນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິພໍປະມານມີປົກກະຕິ ເຮັດປັນຍາພໍປະມານ ພິກຂຸນັ້ນລ່ວງລະເມີດສິກຂາບົດເລັກໜ້ອຍແດ່ ອອກຈາກອາບັດແດ່ ຂໍ້ນັ້ນຍ້ອນເຫດໃດ ຍ້ອນໃນການຕ້ອງອາບັດແລະການອອກຈາກອາບັດເລັກໜ້ອຍນີ້ເຮົາບໍ່ກ່າວຄວາມເປັນຄົນບໍ່ເໝາະສົມໄວ້ ແຕ່ສິກຂາບົດເຫຼົ່າໃດເປັນເບື້ອງຕົ້ນແຫ່ງພົມມະຈັນ ສົມຄວນແກ່ພົມມະຈັນ ພິກຂຸນັ້ນ ມີສີນປະຈຳໂຕແລະມີສີນໝັ້ນຄົງໃນສິກຂາບົດເຫຼົ່ານັ້ນ ສະມາທານສຶກສາໃນສິກຂາບົດທັງຫຼາຍ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປ ທ່ານຈຶ່ງເປັນສັດຕັກຂັດຕຸປະຣະມະໂສດາບັນ ທ່ອງທ່ຽວໄປໃນເທວະດາ ແລະມະນຸດຢ່າງຫຼາຍ ໗ ຄັ້ງແລ້ວເຮັດ ບ່ອນສຸດແຫ່ງທຸກໄດ້ ຍ້ອນສັງໂຍດ ໓ ປະການສິ້ນໄປ ທ່ານຈຶ່ງເປັນໂກລັງໂກລະໂສດາບັນທ່ອງທ່ຽວໄປສູ່ຕະກູນ ໔ ຫຼື ໓ ຕະກູນ ແລ້ວເຮັດບ່ອນສຸດແຫ່ງທຸກໄດ້ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປທ່ານຈຶ່ງເປັນເອກະພິຊີໂສດາບັນ ເກີດເປັນມະນຸດອີກພຽງພົບດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປແລະຍ້ອນຣາຄະ ໂທສະ ໂມຫະເບົາບາງ ທ່ານຈຶ່ງເປັນສະກະທາຄາມີ ມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້

ພິກຂຸໃນທຳວິໄນນີ້ ມີປົກກະຕິເຮັດສີນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິໃຫ້ບໍລິບູນມີປົກກະຕິ ເຮັດປັນຍາພໍປະມານ ພິກຂຸນັ້ນ ລ່ວງລະເມີດສິກຂາບົດເລັກໜ້ອຍແດ່ ອອກຈາກອາບັດແດ່ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນໃນການຕ້ອງອາບັດ ແລະການອອກຈາກອາບັດເລັກໜ້ອຍນີ້ເຮົາບໍ່ກ່າວຄວາມເປັນຄົນບໍ່ເໝາະສົມໄວ້ ແຕ່ສິກຂາບົດເຫຼົ່າໃດເປັນເບື້ອງຕົ້ນແຫ່ງພົມມະຈັນ

ສົມຄວນແກ່ພົມມະຈັນ ພິກຂຸນັ້ນ ມີສີນປະຈຳໂຕແລະມີສີນໝັ້ນຄົງໃນສິກຂາບົດເຫຼົ່ານັ້ນ ຖືປະຕິບັດສຶກສາໃນສິກຂາບົດທັງຫຼາຍ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນອຸດທັງໂສໂຕອະກະນິດຖະຄາມີ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນ ສະສັງຂາຣະປະຣິນິບພາຍີ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນອະສັງຂາຣະປະຣິນິບພາຍີ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນອຸປະຫັດຈະປະຣິນິບພາຍີ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນອັນຕະຣາປະຣິນິບພາຍີ

ອັນໜຶ່ງ ພິກຂຸໃນທຳວິໄນນີ້ ມີປົກກະຕິເຮັດສີນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິໃຫ້ບໍລິບູນ ມີປົກກະຕິເຮັດປັນຍາໃຫ້ບໍລິບູນ ພິກຂຸນັ້ນ ລ່ວງລະເມີດສິກຂາບົດເລັກໜ້ອຍແດ່ ອອກຈາກອາບັດແດ່ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນໃນການຕ້ອງອາບັດ ແລະການອອກຈາກອາບັດເລັກໜ້ອຍນີ້ເຮົາບໍ່ກ່າວຄວາມເປັນຄົນບໍ່ເໝາະສົມໄວ້ ແຕ່ສິກຂາບົດເຫຼົ່າໃດເປັນເບື້ອງຕົ້ນແຫ່ງພົມມະຈັນ ສົມຄວນແກ່ພົມມະຈັນ ພິກຂຸນັ້ນ ມີສີນປະຈຳໂຕ ແລະມີສີນໝັ້ນຄົງໃນສິກຂາບົດເຫຼົ່ານັ້ນ ສະມາທານສຶກສາໃນສິກຂາບົດທັງຫຼາຍ ທ່ານເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປນຳປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸຜູ້ເຮັດໄດ້ພຽງບາງສ່ວນຍ່ອມໃຫ້ສຳເລັດໄດ້ບາງສ່ວນ ຜູ້ເຮັດໄດ້ບໍລິບູນຍ່ອມໃຫ້ສຳເລັດໄດ້ບໍລິບູນ ດ້ວຍປະການດັ່ງນີ້ແລ ເຮົາກ່າວວ່າສິກຂາບົດທັງຫຼາຍ ບໍ່ເປັນໝັນ

**ທຸຕິຍະສິກຂາສູດ ທີ ໗ ຈົບ**

## ໘. ຕະຕິຍະສິກຂາສູດ

## ວ່າດ້ວຍການພໍ່າເພັງໄຕຣສິກຂາ ສູດທີ ໓

[໘໙] ພິກຂຸທັງຫຼາຍ ສິກຂາບົດ ໑໕໐ ຖ້ວນທີ່ກຸນລະບຸດທັງຫຼາຍຜູ້ປາຖະໜາປະໂຫຍດສຶກສາຢູ່ ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບທຸກເຄິ່ງເດືອນ ສິກຂາ ໓ ປະການນີ້ເປັນທີ່ລວມຂອງສິກຂາບົດ ໑໕໐ ນັ້ນທັງໝົດ

ສິກຂາ ໓ ປະການ ອັນໃດແດ່ ຄື

໑. ອະທິສີລະສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ

ສິກຂາ ໓ ປະການນີ້ແລເປັນທີ່ລວມຂອງສິກຂາບົດ ໑໕໐ ນັ້ນທັງໝົດ

ພິກຂຸໃນທຳວິໄນນີ້ ມີປົກກະຕິເຮັດສີນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິໃຫ້ບໍລິບູນ ມີປົກກະຕິ ເຮັດປັນຍາໃຫ້ບໍລິບູນ ພິກຂຸນັ້ນລ່ວງລະເມີດສິກຂາບົດເລັກໜ້ອຍແດ່ ອອກຈາກອາບັດແດ່ ຂໍ້ນັ້ນຍ້ອນເຫດໃດ ຍ້ອນໃນການຕ້ອງອາບັດ ແລະການອອກຈາກອາບັດເລັກໜ້ອຍນີ້ ເຮົາບໍ່ໄດ້ກ່າວຄວາມເປັນຄົນບໍ່ເໝາະສົມໄວ້ ແຕ່ສິກຂາບົດເຫຼົ່າໃດ ເປັນເບື້ອງຕົ້ນແຫ່ງພົມມະຈັນ ສົມຄວນແກ່ພົມມະຈັນ ພິກຂຸນັ້ນມີສີນປະຈຳໂຕ ແລະມີສີນໝັ້ນຄົງໃນສິກຂາບົດເຫຼົ່ານັ້ນ

ສະມາທານສຶກສາໃນສິກຂາບົດທັງຫຼາຍ ທ່ານເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຫຼືເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນອັນຕະຣາປະຣິນິບພາຍີ ຫຼື ເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນອຸປະຫັດຈະປະຣິນິບພາຍີ ຫຼື ເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນອະສັງຂາຣະປະຣິນິບພາຍີ ຫຼືເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນສະສັງຂາຣະປະຣິນິບພາຍີ ຫຼື ເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ທ່ານຈຶ່ງເປັນອຸດທັງໂສໂຕອະກະນິດຖະຄາມີ ຫຼື ເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ

ຍ້ອນສັງໂຍດ ໓ ປະການໝົດສິ້ນໄປ ແລະຍ້ອນຣາຄະ ໂທສະ ໂມຫະເບົາບາງ ທ່ານຈຶ່ງເປັນສະກະທາຄາມີ ມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະເຮັດບ່ອນສຸດ ແຫ່ງທຸກໄດ້ ຫຼື ເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປ ທ່ານຈຶ່ງເປັນເອກະພີຊີໂສດາບັນ ເກີດເປັນມະນຸດອີກພຽງພົບດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ຫຼື ເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປ ທ່ານຈຶ່ງເປັນໂກລັງໂກລະໂສດາບັນ ທ່ອງທ່ຽວໄປສູ່ຕະກູນ ໒ ຫຼື ໓ ຕະກູນ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ຫຼື ເມື່ອຍັງບໍ່ບັນລຸ ຍັງບໍ່ຮູ້ແຈ້ງອະຣະຫັດນັ້ນ ຍ້ອນສັງໂຍດ ໓ ປະການໝົດສິ້ນໄປ ທ່ານຈຶ່ງເປັນສັດຕັກຂັດຕຸປະຣະມະໂສດາບັນ ທ່ອງທ່ຽວໄປໃນເທວະດາ ແລະມະນຸດຢ່າງຫຼາຍ ໗ ຄັ້ງ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້

ພິກຂຸທັງຫຼາຍ ພິກຂຸຜູ້ເຮັດໄດ້ບໍລິບູນ ຍ່ອມໃຫ້ສຳເລັດໄດ້ບໍລິບູນ ຜູ້ເຮັດໄດ້ພຽງບາງສ່ວນຍ່ອມໃຫ້ສຳເລັດໄດ້ບາງສ່ວນ ດ້ວຍປະການດັ່ງນີ້ແລ ເຮົາກ່າວວ່າສິກຂາບົດທັງຫຼາຍບໍ່ເປັນໝັນເລີຍ

**ຕະຕິຍະສິກຂາສູດທີ ໗ ຈົບ**

# ໙. ປະຖົມສິກຂັດຕະຍະສູດ

## ວ່າດ້ວຍໄຕຣສິກຂາສູດທີ ໑

[໘໐] ພິກຂຸທັງຫຼາຍ ສິກຂາ ໓ ປະການນີ້

ສິກຂາ ໓ ປະການ ອັນໃດແດ່ ຄື

໑. ອະທິສີລະສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ

ອະທິສີລະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ຮຽກວ່າ ອະທິສີລະສິກຂາ

ອະທິຈິດຕະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມທັງຫຼາຍ ຯລຯ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ອະທິຈິດຕະສິກຂາ

ອະທິປັນຍາສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ນີ້ຮຽກວ່າ ອະທິປັນຍາສິກຂາ

ພິກຂຸທັງຫຼາຍ ສິກຂາ ໓ ປະການນີ້ແລ

**ປະຖົມສິກຂັດຕະຍະສູດທີ ໙ ຈົບ**

# ໑໐. ທຸຕິຍະສິກຂັດຕະຍະສູດ

## ວ່າດ້ວຍໄຕຣສິກຂາ ສູດ ທີ ໒

[໘໑] ພິກຂຸທັງຫຼາຍ ສິກຂາ ໓ ປະການນີ້

ສິກຂາ ໓ ປະການ ອັນໃດແດ່ ຄື

໑. ອະທິສີລະສິກຂາ
໔. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ

ອະທິສີລະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ຮຽກວ່າ ອະທິສີລະສິກຂາ

ອະທິຈິດຕະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະຫງັດຈາກກາມທັງຫຼາຍ ຯລຯ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ອະທິຈິດຕະສິກຂາ

ອະທິປັນຍາສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ຮຽກວ່າ ອະທິປັນຍາສິກຂາ

ພິກຂຸທັງຫຼາຍ ສິກຂາ ໓ ປະການນີ້ແລ

ພິກຂຸຜູ້ມີຄວາມພຽນ ມີຄວາມເຂັ້ມແຂງ
ມີປັນຍາ ເພ່ງພິນິດ ມີສະຕິ
ຄຸ້ມຄອງອິນຊີ ຄອບງຳທຸກທິດດ້ວຍອັບປະມານະສະມາທິ
ປະພຶດອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາ
ແຕ່ກ່ອນສັນໃດ ພາຍຫຼັງກໍສັນນັ້ນ
ພາຍຫຼັງສັນໃດ ແຕ່ກ່ອນກໍສັນນັ້ນ
ເບື້ອງຕ່ຳສັນໃດ ເບື້ອງເທິງກໍສັນນັ້ນ
ເບື້ອງເທິງສັນໃດ ເບື້ອງຕ່ຳກໍສັນນັ້ນ
ກາງເວັນສັນໃດ ກາງຄືນກໍສັນນັ້ນ
ກາງຄືນສັນໃດ ກາງເວັນກໍສັນນັ້ນ
ພິກຂຸເຊັ່ນນັ້ນ ບັນດິດກ່າວວ່າເປັນນັກສຶກສາ
ເປັນນັກປະຕິບັດ ແລະມີຄວາມປະພຶດບໍລິສຸດ

ພິກຂຸເຊັ່ນນັ້ນ ບັນດິດກ່າວວ່າເປັນຜູ້ຕັດສະຣູ້ຖືກ
ເປັນນັກປາດ ເປັນຜູ້ເຖິງບ່ອນສຸດແຫ່ງການປະຕິບັດໃນໂລກ
ທ່ານຜູ້ປະກອບດ້ວຍວິມຸດຕິອັນເປັນບ່ອນສິ້ນສຸດຕັນຫາ
ຍ່ອມມີຈິດລຸດພົ້ນຈາກສັງຂານທຳຍ້ອນວິນຍານດັບເຢັນ
ຄືຄວາມດັບແຫ່ງປະທີບສັນນັ້ນ

**ທຸຕິຍະສິກຂັດຕະຍະສູດທີ ໑໐ ຈົບ**

# ໑໑. ປັງກະທາສູດ

## ວ່າດ້ວຍເຂດປັງກະທາ

[໘໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງເຂດຂອງແຄວ້ນໂກສົນຊື່ປັງກະທາ ຮູ້ວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເຂດປັງກະທາຂອງຊາວໂກສົນນັ້ນ

ສະໄໝນັ້ນ ພິກຂຸຊື່ກັດສະປະໂຄດ ເປັນເຈົ້າອາວາດຢູ່ທີ່ເຂດປັງກະທາ ໄດ້ຮູ້ຂ່າວວ່າໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫຼົ່າພິກຂຸເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາທີ່ປະກອບດ້ວຍສິກຂາບົດ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫຼົ່າພິກຂຸເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາທີ່ປະກອບດ້ວຍສິກຂາບົດຢູ່ ພິກຂຸ ກັດສະປະໂຄດໄດ້ມີຄວາມຂັດໃຈ ບໍ່ຍິນດີວ່າ "ສະມະນະນີ້ຂັດເກົາກິເລດຢ່າງຍິ່ງ"

ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ເຂດປັງກະທາຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກ ໄປທາງນະຄອນຣາດຊະຄຶ ສະເດັດຈາຣິກໄປໂດຍລຳດັບຈົນເຖິງນະຄອນຣາດຊະຄຶ ປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄຶນັ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າ ສະເດັດຫຼີກໄປບໍ່ດົນ ພິກຂຸກັດສະປະໂຄດໄດ້ມີຄວາມລຳຄານເດືອດຮ້ອນໃຈວ່າ "ບໍ່ແມ່ນລາບຂອງເຮົານໍ ເຮົາບໍ່ມີລາບນໍ ເຮົາໄດ້ຊົ່ວແລ້ວນໍ ເຮົາໄດ້ບໍ່ດີແລ້ວນໍ ທີ່ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫຼົ່າພິກຂຸເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ທີ່ປະກອບດ້ວຍສິກຂາບົດ ໄດ້ມີຄວາມຂັດໃຈ ບໍ່ຍິນດີວ່າ "ສະມະນະນີ້ຂັດເກົາກິເລດຢ່າງຍິ່ງ" ຈະເປັນການ

ດີຫຼາຍແທ້ ຖ້າເຮົາຈະເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວສະແດງໂທດໂດຍຄວາມເປັນໂທດໃນສຳນັກພຣະຜູ້ມີພຣະພາກເຈົ້າ"

ລຳດັບນັ້ນ ພິກຂຸກັດສະປະໂຄດເກັບມ້ຽນເສນາສະນະ ຖືບາດຈີວອນ ຫຼີກໄປທາງນະຄອນຣາດຊະຄຶ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ທີ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເຂດ ປັງກະທາຂອງຊາວໂກສົນໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫຼົ່າພິກຂຸເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາທີ່ປະກອບດ້ວຍສິກຂາບົດ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫຼົ່າພິກຂຸເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາທີ່ປະກອບດ້ວຍສິກຂາບົດຢູ່ ຂ້າພຣະອົງນັ້ນ ໄດ້ມີຄວາມຂັດໃຈ ບໍ່ຍິນດີວ່າ "ສະມະນະນີ້ຂັດເກົາກິເລດຢ່າງຍິ່ງ" ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ເຂດ ປັງກະທາຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນຣາດຊະຄຶ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຫຼີກໄປບໍ່ດົນ ຂ້າພຣະອົງນັ້ນໄດ້ມີຄວາມລຳຄານເດືອດຮ້ອນໃຈວ່າ "ບໍ່ແມ່ນລາບຂອງເຮົາແລ້ວນໍ ເຮົາບໍ່ມີລາບນໍ ເຮົາໄດ້ຊົ່ວແລ້ວນໍ ເຮົາບໍ່ໄດ້ດີແລ້ວນໍ ທີ່ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫຼົ່າພິກຂຸເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາທີ່ປະກອບດ້ວຍສິກຂາບົດ ເຮົາກັບມີຄວາມຂັດໃຈບໍ່ຍິນດີວ່າ "ສະມະນະນີ້ຂັດເກົາກິເລດຢ່າງຍິ່ງ" ຈະເປັນການດີ ຖ້າເຮົາຈະເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວສະແດງໂທດໂດຍຄວາມເປັນໂທດໃນສຳນັກພຣະຜູ້ມີພຣະພາກເຈົ້າ" ໂທດໄດ້ເຖິງໂຕຂ້າພຣະອົງຜູ້ໂງ່ຈ້າ ງົມງວາຍ ບໍ່ສະຫຼາດ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫຼົ່າພິກຂຸເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານ ແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກຖາທີ່ປະກອບດ້ວຍສິກຂາບົດຢູ່ ຂ້າພຣະອົງໄດ້ມີຄວາມຂັດໃຈ ບໍ່ຍິນດີວ່າ "ສະມະນະນີ້ຂັດເກົາກິເລດຢ່າງຍິ່ງ" ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ຊົງຮັບຮູ້ໂທດຂອງຂ້າພຣະອົງນັ້ນໂດຍຄວາມເປັນໂທດ ເພື່ອຄວາມສັງລວມລະວັງຕໍ່ໄປເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ເອົາລະ ກັດສະປະ ໂທດໄດ້ເຖິງໂຕທ່ານຜູ້ໂງ່ຈ້າ ງົມງວາຍ ບໍ່ສະຫຼາດ ເມື່ອເຮົາໃຫ້ເຫຼົ່າພິກຂຸເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດ ຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາທີ່ປະກອບດ້ວຍສິກຂາບົດ ກໍຍ້ອນທ່ານມີຄວາມຂັດໃຈ ບໍ່ຍິນດີວ່າ "ສະມະນະນີ້ຂັດເກົາກິເລດຢ່າງຍິ່ງ" ໄດ້ເຫັນໂທດໂດຍຄວາມເປັນໂທດແລ້ວເຮັດຄືນຕາມທຳ ດັ່ງນັ້ນເຮົາຈຶ່ງຮັບຮູ້ໂທດນັ້ນຂອງທ່ານ ກໍການທີ່ບຸກຄົນ

ເຫັນໂທດໂດຍຄວາມເປັນໂທດແລ້ວ ເຮັດຄືນຕາມທຳ ເຖິງຄວາມສັງລວມລະວັງຕໍ່ໄປ ນີ້ເປັນຄວາມຈະເລີນໃນອະຣິຍະວິໄນ

ຖ້າພິກຂຸຜູ້ເປັນເຖຣະບໍ່ຕ້ອງການຕໍ່ການສຶກສາ ບໍ່ສັນເສີນການເອົາໃຈໃສ່ການສຶກສາ ທ່ານຍ່ອມບໍ່ຊັກຊວນພິກຂຸອື່ນທີ່ບໍ່ຕ້ອງການຕໍ່ການສຶກສາໃຫ້ຕ້ອງການຕໍ່ການສຶກສາ ແລະບໍ່ສັນເສີນຄຸນທີ່ມີຈິງເປັນ ຈິງຂອງພິກຂຸອື່ນທີ່ຕ້ອງການຕໍ່ການສຶກສາຕາມໂອກາດອັນສົມຄວນ ເຮົາບໍ່ສັນເສີນຄຸນຂອງ ພິກຂຸຜູ້ເປັນເຖຣະແນວນີ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພວກພິກຂຸອື່ນເພິ່ງຄົບຫາທ່ານໂດຍເຫັນວ່າ "ພຣະສາດສະດາກໍຍັງຕັດສັນເສີນຄຸນຂອງທ່ານ" ພິກຂຸພວກທີ່ຄົບຫາ ທ່ານເພິ່ງພາກັນເອົາຢ່າງທ່ານ ຂໍ້ນັ້ນ ເພິ່ງເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກແກ່ພິກຂຸພວກທີ່ພາກັນເອົາຢ່າງທ່ານຕະຫຼອດການລະນານ ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ສັນເສີນຄຸນຂອງພິກຂຸຜູ້ເປັນເຖຣະແນວນີ້

ຖ້າພິກຂຸ ຜູ້ເປັນມັດຊິມະ ຯລຯ ແມ່ນຖ້າພິກຂຸຜູ້ເປັນນະວະກະບໍ່ຕ້ອງການຕໍ່ການສຶກສາ ບໍ່ສັນເສີນການເອົາໃຈໃສ່ການສຶກສາ ທ່ານຍ່ອມບໍ່ຊັກຊວນພິກຂຸອື່ນທີ່ບໍ່ຕ້ອງການຕໍ່ການສຶກສາໃຫ້ຕ້ອງການຕໍ່ການສຶກສາ ແລະບໍ່ສັນເສີນຄຸນທີ່ມີຈິງເປັນຈິງຂອງພິກຂຸອື່ນທີ່ຕ້ອງການຕໍ່ການສຶກສາຕາມໂອກາດອັນສົມຄວນ ເຮົາບໍ່ສັນເສີນຄຸນຂອງພິກຂຸຜູ້ເປັນນະວະກະແນວນີ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພິກຂຸອື່ນເພິ່ງຄົບຫາທ່ານໂດຍເຫັນວ່າ "ພຣະສາດສະດາກໍຍັງຕັດສັນເສີນ ຄຸນຂອງທ່ານ" ພິກຂຸພວກທີ່ຄົບຫາທ່ານເພິ່ງພາກັນເອົາຢ່າງທ່ານ ຂໍ້ນັ້ນເພິ່ງເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກແກ່ພິກຂຸພວກທີ່ພາກັນເອົາຢ່າງທ່ານຕະຫຼອດການລະນານ ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ສັນເສີນຄຸນຂອງພິກຂຸຜູ້ເປັນນະວະກະແນວນີ້

ຖ້າພິກຂຸ ຜູ້ເປັນເຖຣະຕ້ອງການຕໍ່ການສຶກສາ ສັນເສີນການເອົາໃຈໃສ່ການສຶກສາ ທ່ານຍ່ອມຊັກຊວນພິກຂຸອື່ນທີ່ບໍ່ຕ້ອງການຕໍ່ການສຶກສາໃຫ້ຕ້ອງການຕໍ່ການສຶກສາ ແລະສັນເສີນຄຸນທີ່ມີຈິງເປັນຈິງຂອງພິກຂຸອື່ນທີ່ຕ້ອງການຕໍ່ການສຶກສາຕາມໂອກາດອັນສົມຄວນ ເຮົາສັນເສີນຄຸນຂອງພິກຂຸຜູ້ເປັນເຖຣະແນວນີ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພວກພິກຂຸອື່ນເພິ່ງຄົບຫາທ່ານໂດຍເຫັນວ່າ "ພຣະສາດສະດາກໍຍັງຕັດສັນເສີນຄຸນຂອງທ່ານ" ພິກຂຸພວກທີ່ຄົບຫາທ່ານເພິ່ງພາກັນ ເອົາຢ່າງທ່ານ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ພິກຂຸພວກທີ່ພາກັນເອົາຢ່າງທ່ານຕະຫຼອດການລະນານ ຍ້ອນເຫດນັ້ນ ເຮົາຈຶ່ງສັນເສີນຄຸນຂອງພິກຂຸຜູ້ເປັນເຖຣະແນວນີ້

ຖ້າພິກຂຸຜູ້ເປັນມັດຊິມະ ຯລຯ ແມ່ນຖ້າພິກຂຸຜູ້ເປັນນະວະກະຕ້ອງການຕໍ່ການສຶກສາ ສັນເສີນ ການເອົາໃຈໃສ່ການສຶກສາ ທ່ານຍ່ອມຊັກຊວນພິກຂຸອື່ນທີ່ບໍ່ຕ້ອງການຕໍ່ການສຶກສາໃຫ້ຕ້ອງການຕໍ່ການສຶກສາ ແລະສັນເສີນຄຸນທີ່ມີຈິງເປັນຈິງຂອງພິກຂຸອື່ນທີ່ຕ້ອງການຕໍ່ການສຶກສາຕາມໂອກາດ ອັນສົມຄວນ ເຮົາສັນເສີນຄຸນຂອງພິກຂຸຜູ້ເປັນນະວະກະແນວນີ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພິກຂຸອື່ນເພິ່ງຄົບຫາທ່ານໂດຍເຫັນວ່າ "ພຣະສາດສະດາກໍຍັງຕັດສັນເສີນຄຸນຂອງທ່ານ"

ພິກຂຸ ພວກທີ່ຄົບຫາທ່ານເພິ່ງພາກັນເອົາຢ່າງທ່ານ ຂໍ້ນັ້ນເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ພິກຂຸ ພວກທີ່ພາກັນເອົາຢ່າງທ່ານຕະຫຼອດການລະນານ ຍ້ອນເຫດນັ້ນ ເຮົາຈຶ່ງສັນເສີນຄຸນຂອງພິກຂຸຜູ້ເປັນນະວະກະແນວນີ້

**ປັງກະທາສູດ ທີ ໑໑ ຈົບ**

**ສະມະນະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື



# ໕. ໂລນະຜະລະວັກ

## ໝວດວ່າດ້ວຍກ້ອນເກືອ

## ໑. ອັດຈາຍິກະສູດ

## ວ່າດ້ວຍກິດຮີບຮ້ອນຂອງຊາວນາແລະຂອງພິກຂຸ

[໙໓] ພິກຂຸທັງຫຼາຍ ກິດທີ່ຄະຫະບໍດີຊາວນາຕ້ອງຮີບຟ້າວເຮັດ ໓ ປະການນີ້

ກິດທີ່ຄະຫະບໍດີຊາວນາຕ້ອງຮີບຟ້າວເຮັດ ໓ ປະການ ອັນໃດແດ່ ຄື

ຄະຫະບໍດີຊາວນາໃນໂລກນີ້

໑. ຕ້ອງເລັ່ງຟ້າວໄຖຄາດນາ ໃຫ້ຮຽບຮ້ອຍ
໒. ຕ້ອງເລັ່ງຟ້າວປູກພືດລົງໄປຕາມການທີ່ຄວນ
໓. ຕ້ອງເລັ່ງຟ້າວໄຂນ້ຳເຂົ້າແດ່ ລະບາຍນ້ຳອອກແດ່

ກິດທີ່ຄະຫະບໍດີຊາວນາຕ້ອງຮີບຟ້າວເຮັດ ໓ ປະການນີ້ແລ

ຄະຫະບໍດີຊາວນານັ້ນ ບໍ່ມີລິດຫຼືອານຸພາບທີ່ຈະບັນດານວ່າ "ມື້ນີ້ແລ ເຂົ້າເປືອກຂອງເຮົາຈົ່ງເກີດ ມື້ອື່ນຈົ່ງອອກຮວງ ມື້ຮືນີ້ຈົ່ງທຸງໄດ້" ແທ້ຈິງແລ້ວ ເຂົ້າເປືອກຂອງຄະຫະບໍດີ ຊາວນານັ້ນ ມີໄລຍະເວລາຂອງລະດູທີ່ຈະເກີດຂຶ້ນ ອອກຮວງ ແລະທຸງໄດ້ ສັນໃດ

ພິກຂຸທັງຫຼາຍ ກິດທີ່ພິກຂຸຕ້ອງຟ້າວເຮັດ ໓ ປະການນີ້ກໍຄືກັນສັນນັ້ນແລ

ກິດທີ່ພິກຂຸຕ້ອງຟ້າວເຮັດ ໓ ປະການ ອັນໃດແດ່ ຄື

໑. ການສະມາທານອະທິສີລະສິກຂາ (ສິກຂາຄືສີນອັນຍິ່ງ)
໒. ການສະມາທານອະທິຈິດຕະສິກຂາ (ສິກຂາຄືຈິດອັນຍິ່ງ)
໓. ການສະມາທານອະທິປັນຍາສິກຂາ (ສິກຂາຄືປັນຍາອັນຍິ່ງ)

ກິດທີ່ພິກຂຸຕ້ອງຟ້າວເຮັດ ໓ ປະການນີ້ແລ

ພິກຂຸນັ້ນ ບໍ່ມີລິດຫຼືອານຸພາບທີ່ຈະບັນດານວ່າ "ມື້ນີ້ແລ ມື້ອື່ນ ຫຼື ມື້ຮືນີ້ຈິດຂອງເຮົາຈົ່ງລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ" ພິກຂຸທັງຫຼາຍ ແທ້ຈິງແລ້ວ ຈິດຂອງພິກຂຸນັ້ນຜູ້ສຶກສາອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາ ມີໄລຍະເວລາທີ່ຈະລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິສີລະສິກຂາ ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິຈິດຕະສິກຂາ ເຮົາຈັກມີຄວາມພໍໃຈຢ່າງຍິ່ງໃນການສະມາທານອະທິປັນຍາສິກຂາ"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ອັດຈາຍິກະສູດ ທີ ໑ ຈົບ**

## ໒. ປະວິເວກະສູດ

### ວ່າດ້ວຍຄວາມສະຫງັດຈາກກິເລດ

[໙໒] ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກ ບັນຍັດຄວາມສະຫງັດຈາກກິເລດໄວ້ ໓ ປະການນີ້

ຄວາມສະຫງັດຈາກກິເລດ ໓ ປະການ ອັນໃດແດ່ ຄື

໑. ຄວາມສະຫງັດຈາກກິເລດຍ້ອນອາໄສ ຈີວອນ
໔. ຄວາມສະຫງັດຈາກກິເລດຍ້ອນອາໄສ ບິນທະບາດ
໓. ຄວາມສະຫງັດຈາກກິເລດຍ້ອນອາໄສ ເສນາສະນະ

ບັນດາຄວາມສະຫງັດຈາກກິເລດທັງ ໓ ປະການນັ້ນ ໃນຄວາມສະຫງັດຈາກກິເລດຍ້ອນອາໄສຈີວອນ ພວກອັນຍະເດຍຣະຖີປະຣິພາຊົກບັນຍັດໄວ້ ຄື ນຸ່ງຫົ່ມຜ້າປ່ານແດ່ ນຸ່ງຫົ່ມຜ້າແກມກັນແດ່ ນຸ່ງຫົ່ມຜ້າຫໍ່ສົບແດ່ ນຸ່ງຫົ່ມຜ້າບັງສຸກຸນແດ່ ນຸ່ງຫົ່ມຜ້າເປືອກໄມ້ແດ່ ນຸ່ງຫົ່ມໜັງເສືອແດ່ ນຸ່ງຫົ່ມໜັງເສືອທີ່ມີເລັບຕິດຢູ່ແດ່ ນຸ່ງຫົ່ມຜ້າຄາກອງແດ່ ນຸ່ງຫົ່ມຜ້າເປືອກປໍກອງແດ່ ນຸ່ງຫົ່ມຜ້າໝາກກອງແດ່ ນຸ່ງຫົ່ມຜ້າກຳພົນເຮັດດ້ວຍຜົມຄົນແດ່ ນຸ່ງຫົ່ມຜ້າກຳພົນເຮັດດ້ວຍຂົນສັດແດ່ ນຸ່ງຫົ່ມຜ້າເຮັດດ້ວຍປີກນົກເຄົ້າແດ່

ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກບັນຍັດເລື້ອງນີ້ ໃນຄວາມສະຫງັດຈາກກິເລດຍ້ອນອາໄສຈີວອນ

ບັນດາຄວາມສະຫງັດຈາກກິເລດທັງ ໓ ນັ້ນ ຄວາມສະຫງັດຈາກກິເລດຍ້ອນອາໄສບິນທະບາດ ທີ່ພວກອັນຍະເດຍຣະຖີປະຣິພາຊົກບັນຍັດໄວ້ ຄື ກິນສົ້ມຜັກເປັນອາຫານແດ່ ກິນເຂົ້າຟ່າງແດ່ ອາຫານແດ່ ກິນໝາກເດືອຍເປັນອາຫານແດ່ ກິນກາກເຂົ້າເປັນອາຫານແດ່ ກິນຢາງເປັນອາຫານແດ່ ກິນຮຳແດ່ ກິນເຂົ້າກົ້ນໝໍ້ແດ່ ກິນກຳຍານແດ່ ກິນຫຍ້າແດ່ ກິນມູນງົວແດ່ ກິນຮາກ ແລະໝາກໄມ້ໃນປ່າແດ່ ກິນໝາກໄມ້ທີ່ຫຼົ່ນລ້ຽງຊີບຢູ່ ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກບັນຍັດເລື້ອງນີ້ແລ ໄວ້ໃນຄວາມສະຫງັດຈາກກິເລດຍ້ອນອາໄສບິນທະບາດ

ບັນດາຄວາມສະຫງັດຈາກກິເລດທັງ ໓ ນັ້ນ ໃນຄວາມສະຫງັດຈາກກິເລດຍ້ອນອາໄສເສນາສະນະ ພວກອັນຍະເດຍຣະຖີປະຣິພາຊົກບັນຍັດໄວ້ ຄື ປ່າ ເຫງົ້າໄມ້ ປ່າຊ້າ ປ່າທຶບ ກາງແຈ້ງ ກອງເຟືອງ ໂຮງລານ ພວກອັນຍະເດຍຣະຖີປະຣິພາຊົກບັນຍັດເລື້ອງນີ້ໄວ້ໃນຄວາມສະຫງັດ ຈາກກິເລດທີ່ເກີດຂຶ້ນຍ້ອນອາໄສເສນາສະນະ ພິກຂຸທັງຫຼາຍ ອັນຍະເດຍຣະຖີປະຣິພາຊົກ ບັນຍັດຄວາມສະຫງັດຈາກກິເລດໄວ້ ໓ ປະການນີ້ແລ

ສ່ວນຄວາມສະຫງັດຈາກກິເລດ ໓ ປະການ ຂອງພິກຂຸໃນທຳວິໄນນີ້

ຄວາມສະຫງັດຈາກກິເລດ ໓ ປະການ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ມີສີນ ລະຄວາມເປັນຄົນທຸສີນ ແລະປາສະຈາກໂທດເຄື່ອງທຸສີນນັ້ນ
໔. ເປັນສຳມາທິດຖິ ລະມິດສາທິດຖິ ແລະປາສະຈາກມິດສາທິດຖິນັ້ນ

໓. ເປັນຂີນາສົບ ລະອາສະວະທັງຫຼາຍ ແລະປາສະຈາກອາສະວະເຫຼົ່ານັ້ນ

ຍ້ອນພິກຂຸເປັນຜູ້ມີສິນ ລະຄວາມເປັນຄົນທຸສິນ ແລະປາສະຈາກຄວາມເປັນຄົນທຸສິນນັ້ນ ເປັນສຳມາທິດຖິ ລະມິດສາທິດຖິແລະປາສະຈາກມິດສາທິດຖິນັ້ນ ແລະເປັນຂີນາສົບ ລະອາສະວະທັງຫຼາຍ ແລະປາສະຈາກອາສະວະເຫຼົ່ານັ້ນ ດັ່ງນັ້ນ ພິກຂຸນີ້ຈຶ່ງຮຽກວ່າ "ຜູ້ເລີດດ້ວຍສິນ ເຖິງທຳທີ່ເປັນສາລະ ບໍລິສຸດ ດຳລົງຢູ່ໃນທຳທີ່ເປັນສາລະ"

ປຽບຄື ນາເຂົ້າສາລີຂອງຄະຫະບໍດີຊາວນາ ສົມບູນແລ້ວ ຄະຫະບໍດີຊາວນາເພິ່ງໃຊ້ຄົນໃຫ້ຟ້າວເກັບກ່ຽວເຂົ້າສາລີນັ້ນ ໃຫ້ຟ້າວຮີບໂຮມໄວ້ ໃຫ້ຟ້າວຂົນເອົາໄປເຂົ້າລານ ໃຫ້ຟ້າວເຮັດເປັນລອມໄວ້ ໃຫ້ຟ້າວນວດ ໃຫ້ຟ້າວເອົາເຟືອງອອກ ໃຫ້ຟ້າວເອົາເຂົ້າລີບອອກ ໃຫ້ຟ້າວຝັດເຂົ້າ ໃຫ້ຟ້າວຂົນໄປ ໃຫ້ຟ້າວຊ້ອມ ໃຫ້ຟ້າວເອົາແກບອອກ ພິກຂຸທັງຫຼາຍ ເມື່ອເປັນແນວນັ້ນ ເຂົ້າເປືອກເຫຼົ່ານັ້ນ ຂອງຄະຫະບໍດີຊາວນານັ້ນ ເພິ່ງເຖິງຄວາມເປັນສ່ວນອັນເລີດ ເປັນເຂົ້າສານສະອາດ ຄົງຢູ່ໃນຄວາມ ເປັນເຂົ້າສານ ສັນໃດ

ພິກຂຸກໍຄືກັນສັນນັ້ນ ຍ້ອນເປັນຜູ້ມີສິນ ລະຄວາມເປັນຄົນທຸສິນ ແລະປາສະຈາກຄວາມເປັນຄົນທຸສິນນັ້ນ ເປັນສຳມາທິດຖິ ລະມິດສາທິດຖິແລະປາສະຈາກມິດສາທິດຖິນັ້ນ ແລະເປັນຂີນາສົບ ລະອາສະວະທັງຫຼາຍ ແລະປາສະຈາກອາສະວະເຫຼົ່ານັ້ນ ດັ່ງນັ້ນ ພິກຂຸນີ້ຈຶ່ງຮຽກວ່າ "ຜູ້ເລີດດ້ວຍສິນ ເຖິງທຳທີ່ເປັນສາລະ ບໍລິສຸດ ດຳລົງຢູ່ໃນທຳທີ່ເປັນສາລະ"

**ປະວິເວກະສູດ ທີ ໘ ຈົບ**

## ໙. ສະຣະທະສູດ

## ວ່າດ້ວຍທຳຈັກຂຸກັບທ້ອງຟ້າໃນສາຣະທະການ

[໗໕] ພິກຂຸທັງຫຼາຍ ເມື່ອທ້ອງຟ້າແຈ່ມໃສ ປາສະຈາກກ້ອນເຟື້ອໝອກໃນສາຣະທະການ ດວງອາທິດສ່ອງແສງໄປທົ່ວທ້ອງຟ້າ ກຳຈັດຄວາມມືດມົວທີ່ຢູ່ໃນອາກາດທັງໝົດ ສ່ອງແສງ ແຜດແສງແລະສ່ອງສະຫວ່າງຢູ່ ສັນໃດ

ຄືກັນສັນນັ້ນ ເມື່ອທຳຈັກຂຸ່ທີ່ປາສະຈາກທຸລີ ປາສະຈາກມົນທິນເກີດແກ່ອະຣິຍະສາວົກ ພ້ອມກັບການເກີດຂຶ້ນແຫ່ງທັດສະນະ ອະຣິຍະສາວົກຍ່ອມລະສັງໂຍດ ໓ ປະການ ຄື ສັກກາຍະທິດຖິ (ຄວາມເຫັນວ່າເປັນໂຕຂອງຕົນ) ວິຈິກິດສາ (ຄວາມລັງເລສົງໄສ) ແລະສີລັບພະຕະປະຣາມາດ (ຄວາມຖືໝັ້ນສິນພົດ)

ລຳດັບຕໍ່ມາ ອະຣິຍະສາວົກອອກຈາກທຳ ໒ ປະການ ຄື ອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງເຂົາ) ແລະ ພະຍາບາດ (ຄວາມຄິດຮ້າຍ) ອະຣິຍະສາວົກນັ້ນສະຫງັດຈາກການແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດແຕ່ວິເວກຢູ່

ພິກຂຸທັງຫຼາຍ ຖ້າອະຣິຍະສາວົກເພິ່ງຕາຍລົງໃນຂະນະນັ້ນ ທ່ານບໍ່ມີສັງໂຍດທີ່ເປັນເຫດໃຫ້ຕ້ອງກັບມາສູ່ໂລກນີ້ອີກ

**ສະຣະທະສູດທີ ໓ ຈົບ**

## ໔. ປະຣິສາສູດ

## ວ່າດ້ວຍບໍລິສັດ

[໗໗] ພິກຂຸທັງຫຼາຍ ບໍລິສັດ ໓ ຈຳພວກນີ້

ບໍລິສັດ ໓ ຈຳພວກ ພວກໃດແດ່ ຄື

໑. ບໍລິສັດທີ່ມີຫົວໜ້າປະເສີດ
໒. ບໍລິສັດທີ່ແຕກແຍກກັນ
໓. ບໍລິສັດທີ່ສາມັກຄີກັນ

ບໍລິສັດທີ່ມີຫົວໜ້າປະເສີດ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ ມີພວກພິກຂຸຜູ້ເປັນເຖຣະ ບໍ່ມັກຫຼາຍ ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໝູ່ຄົນລຸ້ນຫຼັງຕ່າງພາກັນເອົາຢ່າງພິກຂຸຜູ້ເຖຣະເຫຼົ່ານັ້ນ ແມ່ນໝູ່ຄົນລຸ້ນຫຼັງນັ້ນກໍບໍ່ມັກຫຼາຍ ບໍ່ຫຍ່ອນຍານ ໝົດທຸລະໃນໂອກກະມະນະທຳ ເປັນຜູ້ນຳໃນປະວິເວກ ພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ພິກຂຸທັງຫຼາຍ ນີ້ຮຽກວ່າ ບໍລິສັດທີ່ມີຫົວໜ້າປະເສີດ

ບໍລິສັດທີ່ແຕກແຍກກັນ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ມີພວກພິກຂຸຕ່າງໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ພິກຂຸທັງຫຼາຍ ນີ້ຮຽກວ່າ ບໍລິສັດທີ່ແຕກແຍກກັນ

ບໍລິສັດທີ່ສາມັກຄີກັນ ເປັນແນວໃດ?

ຄື ບໍລິສັດໃດໃນທຳວິໄນນີ້ມີພວກພິກຂຸພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄື ນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ພິກຂຸທັງຫຼາຍ ນີ້ຮຽກວ່າ ບໍລິສັດທີ່ສາມັກຄີກັນ

ໃນສະໄໝໃດ ພວກພິກຂຸພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄື ນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ໃນສະໄໝນັ້ນ ພວກພິກຂຸຍ່ອມປະສົບບຸນຫຼວງຫຼາຍ ໃນສະ ໄໝນັ້ນ ພວກພິກຂຸຢູ່ກັນຄືພົມ ຄືຢູ່ກັນດ້ວຍມຸທິຕາເຈໂຕວິມຸດຕິ ຜູ້ມີຄວາມບັນເທີງໃຈຍ່ອມເກີດຄວາມອີ່ມໃຈ ກາຍຂອງຜູ້ມີຄວາມອີ່ມ ໃຈຍ່ອມສະງົບ ຜູ້ມີກາຍສະງົບຍ່ອມສະເຫວີຍສຸກ ຈິດຂອງຜູ້ມີສຸກຍ່ອມຕັ້ງໝັ້ນ

ປຽບຄື ເມື່ອຝົນເມັດໃຫຍ່ຕົກລົງເທິງຈອມພູ ນ້ຳນັ້ນໄຫຼໄປຕາມບ່ອນຫຼຸບ ເຮັດໃຫ້ຮ່ອມພູລຳທານ ແລະຫ້ວຍເຕັມປ່ຽມ ຮ່ອມພູ ລຳທານ ແລະຫ້ວຍເຕັມປ່ຽມແລ້ວເຮັດໃຫ້ໜອງເຕັມໜອງເຕັມແລ້ວເຮັດໃຫ້ບຶງເຕັມ ບຶງເຕັມແລ້ວເຮັດໃຫ້ແມ່ນ້ຳນ້ອຍເຕັມ ແມ່ນ້ຳນ້ອຍ ເຕັມແລ້ວເຮັດໃຫ້ແມ່ນ້ຳໃຫຍ່ເຕັມ ແມ່ນ້ຳໃຫຍ່ເຕັມແລ້ວກໍເຮັດໃຫ້ມະຫາສະມຸດເຕັມ ສັນໃດ

ໃນສະໄໝໃດ ພວກພິກຂຸພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄື ນ້ຳນົມກັບນ້ຳ ເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ໃນສະໄໝນັ້ນ ພວກພິກຂຸຍ່ອມ ປະສົບບຸນຫຼວງຫຼາຍ ໃນສະໄໝນັ້ນ ພວກພິກຂຸຢູ່ກັນຄືພົມ ຄື ຢູ່ກັນດ້ວຍ ມຸທິຕາເຈໂຕວິມຸດຕິ ຜູ້ມີຄວາມບັນເທີງໃຈຍ່ອມເກີດຄວາມອີ່ມໃຈ ກາຍຂອງຜູ້ມີຄວາມອີ່ມໃຈຍ່ອມສະງົບ ຜູ້ມີກາຍສະງົບຍ່ອມສະເຫວີຍສຸກ ຈິດຂອງຜູ້ມີສຸກຍ່ອມຕັ້ງໝັ້ນ ຄືກັນສັນນັ້ນ

ພິກຂຸທັງຫຼາຍ ບໍລິສັດ ໓ ຈຳພວກນີ້ແລ

**ປະຣິສາສູດ ທີ ໔ ຈົບ**

## ໕. ປະຖົມອາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນສູດທີ ໑

[໑໗] ພິກຂຸທັງຫຼາຍ ມ້າອາຊາໄນ⁹ພັນດີຂອງພຣະຣາຊາປະກອບດ້ວຍອົງ ໓ ປະການຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ອົງ ໓ ປະການ ອັນໃດແດ່ ຄື

ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ສົມບູນດ້ວຍສີ
໒. ສົມບູນດ້ວຍກຳລັງ
໓. ສົມບູນດ້ວຍການແລ່ນໄວ

ມ້າອາຊາໄນພັນດີຂອງພຣະຣາຊາປະກອບດ້ວຍອົງ ໓ ປະການນີ້ແລຍ່ອມເປັນມ້າ ຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸກໍຄືກັນສັນນັ້ນ ປະກອບດ້ວຍທຳ ໓ ປະການຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສົມບູນດ້ວຍວັນນະ
໒. ສົມບູນດ້ວຍກຳລັງ
໓. ສົມບູນດ້ວຍເຊົາ

ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສີນ ສັງລວມດ້ວຍຄວາມສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳທັງຫຼາຍ ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍເຊົາເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ" ພິກຂຸຜູ້ສົມບູນດ້ວຍເຊົາເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນ ອັນປະເສີດຂອງໂລກ

**ປະຖົມອາຊານີຍະສູດທີ ໕ ຈົບ**

## ໖. ທຸຕິຍະອາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນສູດທີ ໒

[໙໗] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາປະກອບດ້ວຍອົງ ໓ ປະການ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້

ອົງ ໓ ປະການ ອັນໃດແດ່ ຄື

ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ສົມບູນດ້ວຍສີ
໒. ສົມບູນດ້ວຍກຳລັງ
໓. ສົມບູນດ້ວຍການແລ່ນໄວ

ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໓ ປະການນີ້ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸກໍຄືກັນສັນນັ້ນແລ ປະກອບດ້ວຍທຳ ໓ ປະການ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ฯລฯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສົມບູນດ້ວຍວັນນະ
໒. ສົມບູນດ້ວຍກຳລັງ
໓. ສົມບູນດ້ວຍເຊົາ

ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຜາຣົບຄວາມພຽນຢູ່ ຯລຯ ບໍ່ຖີ້ເບົາໃນກຸສົນທຳ ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍເຊົາເປັນແນວໃດ

ຄື ພິກຂຸໃນທຳວິໄນນີ້ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ຈຶ່ງເປັນໂອປະປາຕິກະປະຣິນິບພານໃນພົບນັ້ນ ບໍ່ຫວນກັບຈາກໂລກນັ້ນແນ່ນອນ ພິກຂຸຜູ້ສົມບູນດ້ວຍເຊົາເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ທຸຕິຍະອາຊານີຍະສູດທີ ໒ ຈົບ**

## ໓. ຕະຕິຍະອາຊານີຍະສູດ

## ວ່າດ້ວຍອົງປະກອບຂອງມ້າອາຊາໄນສູດທີ ໓

[໙໙] ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາປະກອບດ້ວຍອົງ ໓ ປະການຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າ ເປັນຣາດຊະພາຫະນະໂດຍແທ້

ອົງ ໓ ປະການ ອັນໃດແດ່ ຄື

ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ສົມບູນດ້ວຍສີ
໒. ສົມບູນດ້ວຍກຳລັງ
໓. ສົມບູນດ້ວຍການແລ່ນໄວ

ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໓ ປະການນີ້ແລ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າ ເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸກໍຄືກັນສັນນັ້ນແລ ປະກອບດ້ວຍທຳ ໓ ປະການ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົາ ນຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສົມບູນດ້ວຍວັນນະ
໒. ສົມບູນດ້ວຍກຳລັງ
໓. ສົມບູນດ້ວຍເຊົາ

ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸຜູ້ສົມບູນດ້ວຍວັນນະ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຜາຣົບຄວາມພຽນຢູ່ ຯລຯ ບໍ່ຖືເບົາໃນກຸສົນທຳ ພິກຂຸຜູ້ສົມບູນດ້ວຍກຳລັງ ເປັນແນວນີ້ແລ

ພິກຂຸຜູ້ສົມບູນດ້ວຍເຊົາເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ພິກຂຸຜູ້ສົມບູນດ້ວຍເຊົາເປັນແນວນີ້ແລ

ພິກຂຸປະກອບດ້ວຍທຳ ໓ ປະການນີ້ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ຕະຕິຍະອາຊານີຍະສູດ ທີ ໗ ຈົບ**

## ໘. ໂປຕະຖະກະສູດ

## ວ່າດ້ວຍບຸກຄົນທີ່ປຽບຄືຜ້າເປືອກໄມ້

[໑໐໐] ພິກຂຸທັງຫຼາຍ ຜ້າເປືອກໄມ້ແມ່ນຍັງໃໝ່ແຕ່ກໍມີສີບໍ່ງາມ ມີສຳຜັດບໍ່ສະບາຍ ແລະມີລາຄາຖືກ ຜ້າເປືອກໄມ້ແມ່ນກາງເກົ່າກາງໃໝ່ກໍມີສີບໍ່ງາມ ມີສຳຜັດບໍ່ສະບາຍ ແລະມີລາຄາຖືກ

ຜ້າເປືອກໄມ້ທີ່ເກົ່າມີສີບໍ່ງາມ ມີສຳຜັດບໍ່ສະບາຍ ແລະມີລາຄາຖືກ ຄົນທັງຫຼາຍ ຍ່ອມເຮັດຜ້າເປືອກໄມ້ທີ່ເກົ່າໃຫ້ເປັນຜ້າເຊັດໝໍ້ເຂົ້າ ຫຼື ຖິ້ມໄວ້ທີ່ກອງຂີ້ເຫຍື່ອ ສັນໃດ

ພິກຂຸທັງຫຼາຍ ຄືກັນສັນນັ້ນ ຖ້າພິກຂຸຜູ້ເປັນນະວະກະ ແຕ່ເປັນຜູ້ທຸສີນ ມີທຳຊົ່ວຊາມ ເຮົາກ່າວແນວນີ້ ຍ້ອນພິກຂຸນັ້ນ ມີຊື່ສຽງບໍ່ດີ ເຮົາຮຽກບຸກຄົນແນວນີ້ວ່າເປັນຄືຜ້າເປືອກໄມ້ທີ່ມີສີບໍ່ງາມ ກໍຄົນເຫຼົ່າໃດຄົບຫາໃກ້ຊິດພາກັນເອົາຢ່າງທ່ານ ການຄົບຫາເປັນຕົ້ນນັ້ນ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກແກ່ຄົນເຫຼົ່ານັ້ນຕະຫຼອດການລະນານ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນມີການຕິດຕໍ່ກໍ່ໃຫ້ເກີດທຸກ ເຮົາຮຽກບຸກຄົນແນວນີ້ວ່າເປັນ ຄືຜ້າເປືອກໄມ້ທີ່ມີສຳຜັດບໍ່ສະບາຍ ກໍພິກຂຸນັ້ນຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຂອງຄົນເຫຼົ່າໃດ ການຮັບຂອງທ່ານນັ້ນບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍແກ່ຄົນເຫຼົ່ານັ້ນ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນເປັນຄົນມີຄ່າໜ້ອຍ ເຮົາຮຽກບຸກຄົນແນວນີ້ວ່າເປັນຄືຜ້າເປືອກໄມ້ທີ່ມີລາຄາຖືກ

ຖ້າພິກຂຸຜູ້ເປັນມັດຊິມະ ຯລຯ ຖ້າພິກຂຸແມ່ນຜູ້ເປັນເຖຣະ ແຕ່ເປັນຜູ້ທຸສີນ ມີທຳຊົ່ວຊາມ ເຮົາກ່າວແນວນີ້ ຍ້ອນພິກຂຸນັ້ນມີຊື່ສຽງບໍ່ດີ ເຮົາຮຽກບຸກຄົນແນວນີ້ວ່າ ເປັນຄືຜ້າເປືອກໄມ້ທີ່ມີສີບໍ່ງາມ ກໍຄົນເຫຼົ່າໃດຄົບຫາໃກ້ຊິດພາກັນເອົາຢ່າງທ່ານ ການຄົບຫາເປັນຕົ້ນນັ້ນຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກແກ່ຄົນເຫຼົ່ານັ້ນຕະຫຼອດການລະນານ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນ ມີການຕິດຕໍ່ກໍ່ໃຫ້ເກີດທຸກ ເຮົາຮຽກບຸກຄົນແນວນີ້ວ່າ ເປັນຄືຜ້າເປືອກໄມ້ທີ່ມີສຳຜັດບໍ່ສະບາຍ ກໍພິກຂຸນັ້ນຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຂອງຄົນເຫຼົ່າໃດ ການຮັບຂອງທ່ານນັ້ນບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍແກ່ຄົນເຫຼົ່ານັ້ນ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນເປັນຜູ້ມີຄ່າໜ້ອຍ ເຮົາຮຽກບຸກຄົນແນວນີ້ວ່າເປັນຄືຜ້າເປືອກໄມ້ທີ່ມີລາຄາຖືກ

ອັນໜຶ່ງ ພິກຂຸຜູ້ເປັນເຖຣະແນວນີ້ຈະຕ້ອງກ່າວໃນທ່າມກາງສົງ ພວກພິກຂຸໄດ້ກ່າວກັບທ່ານແນວນີ້ວ່າ “ຈະມີປະໂຫຍດອັນໃດ ດ້ວຍຄຳທີ່ຄົນພານບໍ່ສະຫຼາດກ່າວອອກໄປ ແມ່ນໂຕທ່ານກໍເຂົ້າໃຈຄຳທີ່ຄວນກ່າວ” ທ່ານໂກດ ບໍ່ພໍໃຈ ເປັ່ງວາຈາທີ່ເປັນເຫດໃຫ້ສົງ ຍົກວັດຕົນຄືຜ້າເປືອກໄມ້ທີ່ເຂົາຖິ້ມທີ່ກອງຂີ້ເຫຍື່ອ

ຜ້າແຄວ້ນກາສີທີ່ຍັງໃໝ່ ມີສີສວຍ ມີສຳຜັດສະບາຍ ແລະມີລາຄາແພງ ຜ້າແຄວ້ນກາສີແມ່ນກາງເກົ່າກາງໃໝ່ແຕ່ກໍມີສີສວຍ ມີສຳຜັດສະບາຍ ແລະມີລາຄາແພງ ຜ້າແຄວ້ນກາສີແມ່ນເກົ່າ ແຕ່ກໍມີສີສວຍ ມີສຳຜັດສະບາຍ ແລະມີລາຄາແພງ ຄົນທັງຫຼາຍຍ່ອມເຮັດຜ້າແຄວ້ນກາສີແມ່ນທີ່ເກົ່າໃຫ້ເປັນຜ້າຫໍ່ແກ້ວ ຫຼື ເອົາໃສ່ໄວ້ໃນຫີບຂອງຫອມ ສັນໃດ

ພິກຂຸທັງຫຼາຍ ຄືກັນສັນນັ້ນແລ ພິກຂຸຜູ້ເປັນນະວະກະ ແຕ່ມີສີນ ມີທຳງາມ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນມີຊື່ສຽງດີ ເຮົາຮຽກບຸກຄົນແນວນີ້ວ່າເປັນຄືຜ້າແຄວ້ນກາສີທີ່ມີສີສວຍ ກໍຄົນເຫຼົ່າໃດຄົບຫາໃກ້ຊິດພາກັນເອົາຢ່າງທ່ານ ການຄົບຫາເປັນຕົ້ນນັ້ນ ຍ່ອມເປັນໄປເພື່ອເກື້ອກູນ

ເພື່ອສຸກແກ່ຄົນເຫຼົ່ານັ້ນຕະຫຼອດການລະນານ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນມີການຕິດຕໍ່ກໍ່ໃຫ້ເກີດສຸກ ເຮົາຮຽກບຸກຄົນແນວນີ້ວ່າ ເປັນຄືຜ້າແຄວ້ນກາສີທີ່ມີສຳຜັດສະບາຍ ກໍພິກຂຸນັ້ນຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຂອງຄົນເຫຼົ່າໃດ ການຮັບຂອງທ່ານນັ້ນຍ່ອມມີຜົນຫຼາຍ ມີອານິສົງຫຼາຍແກ່ຄົນເຫຼົ່ານັ້ນ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນເປັນຜູ້ມີຄ່າຫຼາຍ ເຮົາຮຽກບຸກຄົນແນວນີ້ວ່າເປັນ ຄືຜ້າແຄວ້ນກາສີທີ່ມີລາຄາແພງ

ຖ້າພິກຂຸຜູ້ເປັນມັດຊິມະ ໗ລ໗ ຖ້າພິກຂຸແມ່ນຜູ້ເປັນເຖຣະ ແຕ່ມີສີນ ມີທຳງາມ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນມີຊື່ສຽງດີ ເຮົາຮຽກບຸກຄົນແນວນີ້ວ່າເປັນຄືຜ້າແຄວ້ນກາສີທີ່ມີສີສວຍ ກໍຄົນເຫຼົ່າໃດຄົບຫາໃກ້ຊິດພາກັນເອົາຢ່າງທ່ານ ການຄົບຫາເປັນຕົ້ນນັ້ນ ຍ່ອມເປັນໄປເພື່ອເກື້ອກູນເພື່ອສຸກແກ່ຄົນເຫຼົ່ານັ້ນຕະຫຼອດການລະນານ ເຮົາກ່າວແນວນີ້ຍ້ອນ ພິກຂຸນັ້ນມີການຕິດຕໍ່ກໍ່ໃຫ້ເກີດສຸກ ເຮົາຮຽກບຸກຄົນແນວນີ້ວ່າເປັນຄືຜ້າແຄວ້ນກາສີທີ່ມີສຳຜັດສະບາຍ ກໍພິກຂຸນັ້ນຮັບຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານຂອງຄົນເຫຼົ່າໃດ ການຮັບຂອງທ່ານນັ້ນ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍແກ່ຄົນເຫຼົ່ານັ້ນ ເຮົາກ່າວແນວນີ້ຍ້ອນພິກຂຸນັ້ນເປັນຜູ້ມີຄ່າຫຼາຍ ເຮົາຮຽກບຸກຄົນແນວນີ້ວ່າເປັນຄືຜ້າ ແຄວ້ນກາສີທີ່ມີລາຄາແພງ

ອັນໜຶ່ງ ພິກຂຸຜູ້ເປັນເຖຣະແນວນີ້ ຈະຕ້ອງກ່າວໃນທ່າມກາງສົງ ພິກຂຸທັງຫຼາຍໄດ້ກ່າວກັບທ່ານແນວນີ້ວ່າ "ຂໍໃຫ້ທ່ານທັງຫຼາຍ ຈົ່ງສະງົບເທີ້ນ ພິກຂຸທີ່ເປັນເຖຣະຈະກ່າວທຳແລະວິໄນ"

ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ "ເຮົາຈັກເປັນຄືຜ້າແຄວ້ນກາສີ ຈັກບໍ່ເປັນຄືຜ້າເປືອກໄມ້"

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ໂປຕະຖະກະສູດທີ ໙ ຈົບ**

## ໑. ໂລນະຜະລະສູດ

## ວ່າດ້ວຍຜົນກຳກັບກ້ອນເກືອ

[໑໐໑] ພິກຂຸທັງຫຼາຍ ຜູ້ໃດເພິ່ງກ່າວແນວນີ້ວ່າ "ບຸກຄົນນີ້ເຮັດກຳໄວ້ແນວໃດ ໆ ເຂົາຕ້ອງສະເຫວີຍກຳນັ້ນແນວນັ້ນ ໆ" ເມື່ອເປັນແນວນັ້ນ ການຢູ່ປະພຶດພົມມະຈັນຍ່ອມມີບໍ່ໄດ້ໂອກາດທີ່ຈະເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງ ຍ່ອມບໍ່ຜາກົດ ສ່ວນຜູ້ໃດເພິ່ງກ່າວແນວນີ້ວ່າ "ບຸກຄົນນີ້ເຮັດກຳທີ່ຕ້ອງສະເຫວີຍຜົນໄວ້ແນວໃດ ໆ ເຂົາຕ້ອງສະເຫວີຍຜົນຂອງກຳນັ້ນ ແນວນັ້ນ ໆ" ເມື່ອເປັນແນວນັ້ນ ການຢູ່ປະພຶດພົມມະຈັນຍ່ອມມີໄດ້ ໂອກາດທີ່ຈະເຮັດບ່ອນສຸດແຫ່ງທຸກໂດຍ

ຖືກຕ້ອງຍ່ອມຜາກົດ ບຸກຄົນລາງຄົນໃນໂລກນີ້ເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳກໍນຳເຂົາໄປສູ່ນະຣົກໄດ້ ສ່ວນບຸກຄົນລາງຄົນໃນໂລກນີ້ເຮັດບາບກຳພຽງເລັກໜ້ອຍ ເຊັ່ນນັ້ນບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໘ (ຊາດໜ້າ) ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ

ບຸກຄົນທີ່ເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນ ກໍນຳເຂົາໄປສູ່ນະຣົກໄດ້ ຄື ບຸກຄົນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຈະເລີນກາຍ ບໍ່ຈະເລີນສິນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ມີຄຸນໜ້ອຍ ມີອັດຕະພາບໜ້ອຍ ມັກຢູ່ເປັນທຸກຍ້ອນຜົນກຳເລັກໜ້ອຍ ບຸກຄົນແນວນີ້ເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຣົກໄດ້

ບຸກຄົນທີ່ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໘ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ ຄືບຸກຄົນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຈະເລີນກາຍ ຈະເລີນສິນ ຈະເລີນຈິດ ຈະເລີນປັນຍາແລ້ວມີຄຸນບໍ່ໜ້ອຍ ມີອັດຕະພາບໃຫຍ່ ເປັນອັບປະມານະວິຫາຣີ ບຸກຄົນແນວນີ້ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນແລ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໘ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ

ພິກຂຸທັງຫຼາຍ ປຽບຄືບຸຣຸດໃສ່ກ້ອນເກືອລົງໃນໂອໃບນ້ອຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ? ນ້ຳໃນໂອນ້ອຍທີ່ມີຣົດເຄັມ ດື່ມກິນບໍ່ໄດ້ຍ້ອນມີເກືອແມ່ນບໍ?

"ເປັນແນວນັ້ນ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນໃນໂອນ້ຳມີນ້ຳໜ້ອຍ ນ້ຳນັ້ນຈຶ່ງເຄັມ ດື່ມກິນບໍ່ໄດ້ຍ້ອນກ້ອນເກືອນັ້ນ ຂ້ານ້ອຍ"

"ແລ້ວຖ້າບຸກຄົນໃສ່ກ້ອນເກືອນີ້ລົງໃນແມ່ນ້ຳຄົງຄາ ທ່ານທັງຫຼາຍເຂົ້າໃຈເລື້ອງນີ້ແນວໃດແມ່ນ້ຳຄົງຄາຈັກເຄັມໄປນຳ ດື່ມກິນບໍ່ໄດ້ ຍ້ອນກ້ອນເກືອນັ້ນແມ່ນບໍ?"

"ບໍ່ແມ່ນແນວນັ້ນ ຂ້ານ້ອຍ"

"ຂໍ້ນັ້ນ ຍ້ອນເຫດໃດ?"

"ຍ້ອນໃນແມ່ນ້ຳຄົງຄານັ້ນ ເປັນແມ່ນ້ຳໃຫຍ່ ນ້ຳນັ້ນຈຶ່ງບໍ່ເຄັມ ດື່ມກິນໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ກໍສັນນັ້ນຄື ກັນເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຣົກໄດ້ ສ່ວນບຸກຄົນ ລາງຄົນໃນ

ໂລກນີ້ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໘ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ"

ບຸກຄົນທີ່ເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຮົກໄດ້ ຄື ບຸກຄົນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຈະເລີນກາຍ ບໍ່ຈະເລີນສິນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ມີຄຸນໜ້ອຍ ມີອັດຕະພາບນ້ອຍ ມັກຢູ່ເປັນທຸກຍ້ອນຜົນກຳເລັກໜ້ອຍ ບຸກຄົນແນວນີ້ເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຮົກໄດ້

ບຸກຄົນທີ່ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໘ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ ຄືບຸກຄົນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຈະເລີນກາຍ ຈະເລີນສິນ ຈະເລີນຈິດ ຈະເລີນປັນຍາແລ້ວມີຄຸນບໍ່ໜ້ອຍ ມີອັດຕະພາບໃຫຍ່ ເປັນອັບປະມານະວິຫາຣີ ບຸກຄົນແນວນີ້ ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໘ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ (໑)

ບຸກຄົນລາງຄົນໃນໂລກນີ້ ຖືກຄຸມຂັງຍ້ອນຊັບເຄິ່ງກະຫາປະນະແດ່ ຖືກຄຸມຂັງຍ້ອນ ຊັບໜຶ່ງກະຫາປະນະແດ່ ຖືກຄຸມຂັງຍ້ອນຊັບຮ້ອຍກະຫາປະນະແດ່ ສ່ວນບຸກຄົນລາງຄົນໃນໂລກນີ້ບໍ່ຖືກຄຸມຂັງຍ້ອນຊັບເຄິ່ງກະຫາປະນະແດ່ ບໍ່ຖືກຄຸມຂັງຍ້ອນຊັບໜຶ່ງກະຫາປະນະແດ່ ບໍ່ຖືກຄຸມຂັງຍ້ອນຊັບຕັ້ງຮ້ອຍກະຫາປະນະແດ່

ບຸກຄົນທີ່ຖືກຄຸມຂັງຍ້ອນຊັບເຄິ່ງກະຫາປະນະແດ່ ຖືກຄຸມຂັງຍ້ອນຊັບໜຶ່ງ ກະຫາປະນະແດ່ ຖືກຄຸມຂັງຍ້ອນຊັບຮ້ອຍກະຫາປະນະແດ່ ຄື ບຸກຄົນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂັດສົນ ມີສົມບັດໜ້ອຍ ມີໂພຄະໜ້ອຍ ບຸກຄົນແນວນີ້ຍ່ອມຖືກຄຸມຂັງ ຍ້ອນຊັບເຄິ່ງກະຫາປະນະແດ່ ຖືກຄຸມຂັງຍ້ອນຊັບໜຶ່ງກະຫາປະນະແດ່ ຖືກຄຸມຂັງຍ້ອນຊັບຮ້ອຍກະຫາປະນະແດ່

ບຸກຄົນທີ່ບໍ່ຖືກຄຸມຂັງຍ້ອນຊັບເຄິ່ງກະຫາປະນະແດ່ ບໍ່ຖືກຄຸມຂັງຍ້ອນຊັບໜຶ່ງກະຫາປະນະແດ່ ບໍ່ຖືກຄຸມຂັງຍ້ອນຊັບຕັ້ງຮ້ອຍກະຫາປະນະແດ່ ຄືບຸກຄົນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ບຸກຄົນແບບນີ້ຍ່ອມບໍ່ຖືກຄຸມຂັງຍ້ອນຊັບເຄິ່ງກະຫາປະນະແດ່ ບໍ່ຖືກຄຸມຂັງຍ້ອນຊັບໜຶ່ງກະຫາປະນະແດ່ ບໍ່ຖືກຄຸມຂັງຍ້ອນຊັບຕັ້ງຮ້ອຍກະຫາປະນະແດ່ ສັນໃດ

ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຮົກໄດ້ ສ່ວນບຸກຄົນລາງຄົນໃນໂລກນີ້ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໒ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ

ບຸກຄົນທີ່ເຮັດບາບກຳພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຮົກໄດ້ ຄືບຸກຄົນແບບໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຈະເລີນກາຍ ບໍ່ຈະເລີນສິນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາມີຄຸນໜ້ອຍ ມີອັດຕະພາບນ້ອຍ ມັກຢູ່ເປັນທຸກຍ້ອນຜົນກຳເລັກໜ້ອຍ ບຸກຄົນເຊັ່ນນີ້ແລເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຮົກໄດ້

ບຸກຄົນທີ່ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໒ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ ຄືບຸກຄົນແບບໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຈະເລີນກາຍ ຈະເລີນສິນ ຈະເລີນຈິດ ຈະເລີນປັນຍາແລ້ວມີ ຄຸນບໍ່ໜ້ອຍ ມີອັດຕະພາບໃຫຍ່ ເປັນອັປປະມານະວິຫາຣີ ບຸກຄົນແບບນີ້ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໒ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ (໒)

ພິກຂຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ຈະເລີນກາຍ ຈະເລີນສິນ ຈະເລີນຈິດ ຈະເລີນປັນຍາແລ້ວ ມີຄຸນບໍ່ໜ້ອຍ ມີອັດຕະພາບໃຫຍ່ ເປັນອັປປະມານະວິຫາຣີ ບຸກຄົນແບບນີ້ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໒ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ

ເຈົ້າຂອງແກະ ຫຼື ຄົນຂ້າແກະລາງຄົນສາມາດທີ່ຈະຂ້າ ຄຸມຂັງ ຫຼືເຜົາຄົນລັກແກະ ຫຼືເຮັດຕາມທີ່ຕົນປາຖະໜາ ແຕ່ລາງຄົນບໍ່ສາມາດທີ່ຈະຂ້າ ຄຸມຂັງ ຫຼື ເຜົາຄົນລັກແກະ ຫຼືເຮັດຕາມທີ່ຕົນປາຖະໜາໄດ້

ເຈົ້າຂອງແກະ ຫຼື ຄົນຂ້າແກະທີ່ສາມາດທີ່ຈະຂ້າ ຄຸມຂັງ ຫຼືເຜົາຄົນລັກແກະ ຫຼື ເຮັດຕາມທີ່ຕົນປາຖະໜາໄດ້ ຄືເຈົ້າຂອງແກະຫຼືຄົນຂ້າແກະຢ່າງໃດ?

ຄື ເຈົ້າຂອງແກະຫຼືຄົນຂ້າແກະລາງຄົນໃນໂລກນີ້ຂັດສົນ ມີສົມບັດນ້ອຍ ມີໂພຄະນ້ອຍ ເຈົ້າຂອງແກະຫຼືຄົນຂ້າແກະແນວນີ້ສາມາດທີ່ຈະຂ້າ ຄຸມຂັງ ຫຼືເຜົາຄົນລັກແກະ ຫຼືເຮັດຕາມທີ່ຕົນປາຖະໜາໄດ້

ເຈົ້າຂອງແກະ ຫຼື ຄົນຂ້າແກະທີ່ບໍ່ສາມາດທີ່ຈະຂ້າ ຄຸມຂັງ ຫຼືເຜົາຄົນລັກແກະ ຫຼື ເຮັດຕາມທີ່ຕົນປາຖະໜາໄດ້ ຄືເຈົ້າຂອງແກະຫຼືຄົນຂ້າແກະຢ່າງໃດ?

ຄື ເຈົ້າຂອງແກະ ຫຼືຄົນຂ້າແກະລາງຄົນໃນໂລກນີ້ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ເປັນພຣະຣາຊາ ຫຼືມະຫາອຳມາດຂອງພຣະຣາຊາ ເຈົ້າຂອງແກະຫຼືຄົນຂ້າແກະແນວນີ້ບໍ່ສາມາດທີ່ຈະຂ້າຄຸມຂັງ ຫຼືເຜົາຄົນລັກແກະ ຫຼືເຮັດຕາມທີ່ຕົນປາຖະໜາໄດ້ ແທ້ຈິງແລ້ວ ຄົນທີ່ປະນົມມືຍ່ອມຂໍເຈົ້າຂອງແກະ ຫຼືຄົນຂ້າແກະໄດ້ວ່າ “ຂໍທ່ານຈົ່ງໃຫ້ແກະ ຫຼືຊັບທີ່ມີມູນຄ່າທໍ່ກັບແກະແກ່ເຮົາດ້ວຍເທີ້ນ” ສັນໃດ

ບຸກຄົນລາງຄົນໃນໂລກນີ້ກໍ ຄືກັນສັນນັ້ນ ເຮັດບາບກຳແມ່ນພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນກໍນຳເຂົາໄປສູ່ນະຮົກໄດ້ ສ່ວນບຸກຄົນລາງຄົນໃນໂລກນີ້ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໔ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ

ບຸກຄົນທີ່ເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຮົກໄດ້ ຄືບຸກຄົນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຈະເລີນກາຍ ບໍ່ຈະເລີນສິນ ບໍ່ຈະເລີນຈິດ ບໍ່ຈະເລີນປັນຍາ ມີຄຸນໜ້ອຍ ມີອັດຕະພາບນ້ອຍ ມັກຢູ່ເປັນທຸກຍ້ອນຜົນກຳເລັກໜ້ອຍ ບຸກຄົນເຊັ່ນນີ້ເຮັດບາບກຳແມ່ນພຽງເລັກໜ້ອຍ ບາບກຳນັ້ນກໍນຳເຂົາໄປສູ່ນະຮົກໄດ້

ບຸກຄົນທີ່ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໔ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ ຄືບຸກຄົນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຈະເລີນກາຍ ຈະເລີນສິນ ຈະເລີນຈິດ ຈະເລີນປັນຍາແລ້ວ ມີຄຸນບໍ່ໜ້ອຍ ມີອັດຕະພາບໃຫຍ່ ເປັນອັບປະມານະວິຫາຣີ ບຸກຄົນແນວນີ້ເຮັດບາບກຳພຽງເລັກໜ້ອຍເຊັ່ນນັ້ນ ບາບກຳນັ້ນໃຫ້ຜົນໃນປັດຈຸບັນທໍ່ນັ້ນ ບໍ່ໃຫ້ຜົນແມ່ນແຕ່ໜ້ອຍໃນອັດຕະພາບທີ ໔ ບໍ່ຈຳເປັນຕ້ອງເວົ້າເຖິງຜົນຫຼາຍ (໓)

ພິກຂຸທັງຫຼາຍ ຜູ້ໃດເພິ່ງກ່າວແນວນີ້ວ່າ “ບຸກຄົນນີ້ເຮັດກຳໄວ້ແນວໃດ ໆ ເຂົາຈະຕ້ອງສະເຫວີຍກຳນັ້ນແນວນັ້ນ ໆ” ເມື່ອເປັນແນວນັ້ນ ການຢູ່ປະພຶດພົມມະຈັນຍ່ອມມີບໍ່ໄດ້ ໂອກາດທີ່

ຈະເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງຍ່ອມບໍ່ພາກົດ ສ່ວນຜູ້ໃດເພິ່ງກ່າວແນວນີ້ວ່າ "ບຸກຄົນນີ້ເຮັດກຳທີ່ຕ້ອງສະເຫວີຍຜົນໄວ້ແນວໃດ ໆ ເຂົາຕ້ອງສະເຫວີຍຜົນຂອງກຳນັ້ນແນວນັ້ນ ໆ" ເມື່ອເປັນແນວນັ້ນ ການຢູ່ປະພຶດພົມມະຈັນຍ່ອມມີໄດ້ ໂອກາດທີ່ຈະເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງຍ່ອມພາກົດ

**ໂລນະຜະລະສູດທີ ໙ ຈົບ**

## ໑໐. ປັງສຸໂທວະກະສູດ

## ວ່າດ້ວຍຄົນລ້າງຝຸ່ນລ້າງຄຳ

[໑໐໘] ພິກຂຸທັງຫຼາຍ ຄຳມີສິ່ງທີ່ເຮັດໃຫ້ເສົ້າໝອງແນວຫຍາບ ຄື ດິນຮ່ອນ ຊາຍ ກ້ອນຫີນ ແລະກະເບື້ອງ ຄົນລ້າງຝຸ່ນຫຼືລູກມືຂອງຄົນລ້າງຝຸ່ນ ຮ່ອນຄຳນັ້ນໃນຮາງນ້ຳແລ້ວ ລ້າງຊ້ຳຫຼາຍ ໆ ເທື່ອ ເມື່ອສິ່ງທີ່ເຮັດໃຫ້ເສົ້າໝອງທີ່ຫຍາບນັ້ນຖືກເຮັດໃຫ້ໝົດໄປ ສິ້ນໄປແລ້ວ ຄຳຍັງຄົງມີສິ່ງທີ່ເຮັດໃຫ້ເສົ້າໝອງປານກາງ ຄື ກ້ອນຫີນ ແນວລະອຽດ ຊາຍແນວຫຍາບ ຄົນລ້າງຝຸ່ນຫຼືລູກມືຂອງຄົນລ້າງຝຸ່ນ ລ້າງຄຳນັ້ນຊ້ຳຫຼາຍ ໆ ເທື່ອ ເມື່ອສິ່ງທີ່ເຮັດໃຫ້ເສົ້າໝອງແນວກາງນັ້ນຖືກເຮັດໃຫ້ໝົດໄປ ສິ້ນໄປແລ້ວ ຄຳຍັງມີສິ່ງທີ່ເຮັດໃຫ້ເສົ້າໝອງແນວລະອຽດ ຄື ຊາຍແນວລະອຽດແລະເກັດກະລຳພັກ ຄົນລ້າງຝຸ່ນຫຼືລູກມືຂອງຄົນລ້າງຝຸ່ນ ລ້າງຄຳນັ້ນຊ້ຳຫຼາຍ ໆ ເທື່ອ ເມື່ອສິ່ງທີ່ເຮັດໃຫ້ເສົ້າໝອງແນວລະອຽດນັ້ນ ຖືກເຮັດໃຫ້ໝົດໄປ ສິ້ນໄປແລ້ວ ກໍຍັງຄົງເຫຼືອຊື່ຄຳຢູ່ອີກ ຊ່າງຄຳຫຼືລູກມືຂອງຊ່າງຄຳ ໃສ່ຄຳລົງໃນເບົ້າຫຼອມ ເປົ່າຄຳນັ້ນ ເປົ່າແລ້ວເປົ່າອີກ ເປົ່າຈົນໄດ້ທີ່ ຄຳນັ້ນກໍຍັງບໍ່ຕິດແຈບແນບເປັນກ້ອນດຽວກັນ ຍັງບໍ່ບໍ່ເຊົາແຂງກະດ້າງ ບໍ່ອ່ອນ ໃຊ້ການບໍ່ໄດ້ບໍ່ຜຸດຜ່ອງ ແຕກງ່າຍແລະໃຊ້ງານໄດ້ບໍ່ດີ ຊ່າງຄຳຫຼືລູກມືຂອງຊ່າງຄຳເປົ່າຄຳນັ້ນ ເປົ່າແລ້ວເປົ່າອີກ ເປົ່າຈົນໄດ້ທີ່ເມື່ອໃດ ເມື່ອນັ້ນ ຄຳນັ້ນຖືກເປົ່າ ຖືກເປົ່າແລ້ວເປົ່າອີກ ຖືກເປົ່າຈົນໄດ້ທີ່ ຕິດແຈບແນບເປັນກ້ອນດຽວກັນ ໝົດຄວາມກະດ້າງ ເປັນຂອງອ່ອນ ໃຊ້ການໄດ້ ຜຸດຜ່ອງ ບໍ່ແຕກງ່າຍ ໃຊ້ງານໄດ້ດີ ເຂົາມຸ້ງໝາຍຈະເຮັດເຄື່ອງປະດັບຊະນິດໃດ ໆ ຄື ແຜ່ນຄຳ ຕຸ້ມຫູ ສ້ອຍຄໍຫຼືມາໄລຄຳ ເຄື່ອງປະດັບຊະນິດນັ້ນ ຍ່ອມອຳນວຍປະໂຫຍດໃຫ້ເຂົາໄດ້ ສັນໃດ

ຄືກັນສັນນັ້ນ ອຸປະກິເລດຢ່າງຫຍາບ ຄື ກາຍທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍກາຍ) ວະຈີທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍວາຈາ) ມະໂນທຸດຈະຣິດ (ຄວາມປະພຶດຊົ່ວດ້ວຍໃຈ) ຂອງພິກຂຸຜູ້ພ່ຳເພັງອະທິຈິດຍັງມີຢູ່ ພິກຂຸຜູ້ມີຄວາມຄິດ ເປັນຄົນສະຫຼາດ ລະບັນເທົາອຸປະກິເລດແນວຫຍາບນັ້ນ ເຮັດໃຫ້ໝົດໄປ ໃຫ້ເຖິງຄວາມບໍ່ມີ ເມື່ອລະໄດ້ເດັດຂາດເຮັດໃຫ້ໝົດໄປແລ້ວອຸປະກິເລດແນວກາງ ຄື ກາມວິຕົກ (ຄວາມນຶກໃນທາງກາມ) ພະຍາບາດວິຕົກ (ຄວາມນຶກໃນ

ທາງພະຍາບາດ) ວິຫິງສາວິຕົກ (ຄວາມນຶກໃນຄວາມບຽດບຽນ) ຂອງພິກຂຸຜູ້ພໍ່າເພັງອະທິຈິດຍັງມີຢູ່ ພິກຂຸຜູ້ມີຄວາມຄິດ ເປັນຄົນສະຫຼາດ ລະບັນເທົາອຸປະກິເລດແນວກາງນັ້ນ ເຮັດໃຫ້ໝົດໄປໃຫ້ເຖິງຄວາມບໍ່ມີ ເມື່ອລະໄດ້ເດັດຂາດ ເຮັດໃຫ້ໝົດໄປແລ້ວ ອຸປະກິເລດແນວລະອຽດ ຄືຄວາມນຶກຄິດເຖິງຊາດ ຄວາມນຶກຄິດເຖິງຊົນນະບົດ ແລະຄວາມນຶກຄິດທີ່ປະກອບດ້ວຍຄວາມບໍ່ດູໝິ່ນ ຂອງພິກຂຸຜູ້ພໍ່າເພັງອະທິຈິດຍັງມີຢູ່ ພິກຂຸຜູ້ມີຄວາມຄິດ ເປັນຄົນສະຫຼາດ ລະບັນເທົາອຸປະກິເລດແນວລະອຽດນັ້ນ ເຮັດໃຫ້ໝົດໄປ ໃຫ້ເຖິງຄວາມບໍ່ມີ ເມື່ອລະໄດ້ເດັດຂາດ ເຮັດໃຫ້ໝົດໄປແລ້ວ ກໍຍັງມີທໍາວິຕົກເຫຼືອຢູ່ ສະມາທິນັ້ນຍັງບໍ່ສະງົບ ບໍ່ປະນີດ ບໍ່ໄດ້ຄວາມສະງົບລະງັບຍັງບໍ່ບັນລຸພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ຍັງມີການຂົ່ມຫ້າມກິເລດດ້ວຍທໍາເຄື່ອງປຸງແຕ່ງຢູ່

ພິກຂຸທັງຫຼາຍ ມີສະໄໝ°ທີ່ຈິດຕັ້ງໝັ້ນຢູ່ພາຍໃນ ສະງົບນິດຢູ່ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນຕັ້ງໝັ້ນຢູ່ ສະມາທິນັ້ນເປັນທໍາສະງົບ ປະນີດ ໄດ້ຄວາມສະງົບລະງັບ ເຖິງພາວະທີ່ຈິດ ເປັນໜຶ່ງຜຸດຂຶ້ນ ບໍ່ມີການຂົ່ມຫ້າມກິເລດດ້ວຍທໍາເຄື່ອງປຸງແຕ່ງ ແລະພິກຂຸນັ້ນຈະນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງ ເຊິ່ງທໍາທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງໃດ ໆ ເມື່ອມີເຫດແຫ່ງສະຕິ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ “ເຮົາເພິ່ງສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາກໍາແພງ ແລະພູໄປໄດ້ບໍ່ຕິດຂັດຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືມຸດລົງໃນແຜ່ນດິນຄືໄປໃນນໍ້າກໍໄດ້ ຍ່າງເທິງນໍ້າໂດຍທີ່ນໍ້າບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄໍາດວງຈັນແລະດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອໍານາດທາງກາຍໄປຈົນເຖິງພົມມະໂລກກໍໄດ້” ເມື່ອມີເຫດແຫ່ງສະຕິ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ “ເຮົາເພິ່ງໄດ້ຍິນສຽງ ໒ ຊະນິດ ຄືສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດ” ເມື່ອມີເຫດແຫ່ງສະຕິ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ “ເຮົາເພິ່ງກໍານົດຮູ້ຈິດຂອງສັດແລະບຸກຄົນອື່ນໄດ້ດ້ວຍຈິດຂອງຕົນຄືຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼືປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າມີໂທສະ ຫຼືປາສະຈາກໂທສະກໍຮູ້ວ່າປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າມີໂມຫະ ຫຼືປາສະຈາກໂມຫະກໍຮູ້ວ່າປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າຫົດຫູ່ ຫຼືຟຸ້ງຊ່ານກໍຮູ້ວ່າຟຸ້ງຊ່ານ ຈິດເປັນມະຫັກຄະຕະ°ກໍຮູ້ວ່າເປັນມະຫັກຄະຕະ ບໍເປັນມະຫັກຄະຕະກໍຮູ້ວ່າບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າມີຈິດອື່ນຍິ່ງກວ່າ ບໍມີຈິດອື່ນຍິ່ງກວ່າກໍຮູ້ວ່າບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ວ່າເປັນສະ

ມາທິ ບໍເປັນສະມາທິກໍຮູ້ວ່າບໍ່ເປັນສະມາທິ ຈິດລຸດພົ້ນກໍຮູ້ວ່າລຸດພົ້ນ ບໍລຸດພົ້ນກໍຮູ້ວ່າບໍ່ລຸດພົ້ນ" ເມື່ອມີເຫດແຫ່ງສະຕິ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດ ແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດ ແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບ ຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບຫຼວງຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບ ຫຼວງຫຼາຍແດ່ ວ່າ "ໃນພົບນັ້ນ ເຮົາມີຊື່ແບວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກ ທຸກ ແລະມີອາຍຸແບວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ ແບວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກ ທຸກ ແລະມີອາຍຸແບວນັ້ນ ໆ ຈຸຕິຈາກ ພົບນັ້ນຈຶ່ງມາເກີດໃນພົບນີ້ ເຮົາເພິ່ງຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະ ຊີວະປະຫວັດແບວນີ້" ເມື່ອມີເຫດແຫ່ງສະຕິ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກ ແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເຫັນໝູ່ສັດຜູ້ກໍາລັງຈຸຕິ (ເຄື່ອນ) ກໍາລັງເກີດ ທັງຊັ້ນຕໍ່າແລະ ຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ເພິ່ງຮູ້ແຈ້ງ ເຖິງໝູ່ສັດຜູ້ເປັນໄປຕາມກໍາວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນ ທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ຊັກຊວນຜູ້ອື່ນໃຫ້ເຮັດກໍາຕາມຄວາມເຫັນ ຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ແຕ່ໝູ່ສັດ ທີ່ ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະມີ ຄວາມເຫັນຖືກ ຊັກຊວນຜູ້ອື່ນໃຫ້ເຮັດກໍາຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປ ເກີດ ໃນສຸກຄະຕິໂລກສະຫວັນ ເຮົາເພິ່ງເຫັນໝູ່ສັດຜູ້ກໍາລັງຈຸຕິ ກໍາລັງເກີດ ທັງຊັ້ນຕໍ່າແລະຊັ້ນ ສູງ ງາມ ແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ເພິ່ງຮູ້ແຈ້ງເຖິງ ໝູ່ສັດຜູ້ເປັນໄປຕາມກໍາແບວນີ້ແລ" ເມື່ອມີເຫດແຫ່ງສະຕິ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມ ທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

ຖ້າພິກຂຸນັ້ນຫວັງວ່າ "ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ເມື່ອມີເຫດແຫ່ງສະຕິ ທ່ານ ຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທໍານັ້ນ ໆ

**ປັງສຸໂທວະກະສູດທີ ໑໐ ຈົບ**

# ๑๑. ນິມິດຕະສູດ

## ວ່າດ້ວຍນິມິດ

[๑๐๓] ພິກຂຸທັງຫຼາຍ ພິກຂຸຜູ້ພ່ຳເພັງອະທິຈິດ[1] ເພິ່ງມະນະສິການນິມິດ ๓ ປະການຕາມສົມຄວນແກ່ເວລາ ຄື

๑. ເພິ່ງມະນະສິການ ສະມາທິ ນິມິດຕາມສົມຄວນແກ່ເວລາ
໒. ເພິ່ງມະນະສິການ ປັກຄະຫະ ນິມິດຕາມສົມຄວນແກ່ເວລາ
๓. ເພິ່ງມະນະສິການ ອຸເປກຂາ ນິມິດຕາມສົມຄວນແກ່ເວລາ

ຖ້າພິກຂຸຜູ້ພ່ຳເພັງອະທິຈິດ ເພິ່ງມະນະສິການສະເພາະສະມາທິນິມິດແນວດຽວ ເປັນໄປໄດ້ທີ່ຈິດ ນັ້ນຈະເພິ່ງເປັນໄປເພື່ອຄວາມຂີ້ຄ້ານ ຖ້າພິກຂຸຜູ້ພ່ຳເພັງອະທິຈິດເພິ່ງມະນະສິການສະເພາະ ປັກຄະຫະນິມິດແນວດຽວ ເປັນໄດ້ທີ່ຈິດນັ້ນ ຈະເພິ່ງເປັນໄປເພື່ອຄວາມຟຸ້ງຊ່ານ ຖ້າພິກຂຸຜູ້ພ່ຳເພັງອະທິຈິດ ເພິ່ງມະນະສິການສະເພາະອຸເປກຂານິມິດແນວດຽວ ເປັນໄປໄດ້ທີ່ຈິດນັ້ນຈະບໍ່ຕັ້ງໝັ້ນດ້ວຍດີເພື່ອຄວາມໝົດສິ້ນອາສະວະ ແຕ່ເມື່ອໃດທີ່ພິກຂຸຜູ້ພ່ຳເພັງອະທິຈິດມະນະສິການສະມາທິນິມິດຕາມສົມຄວນແກ່ເວລາ ມະນະສິການປັກຄະຫະນິມິດຕາມສົມຄວນແກ່ເວລາ ແລະມະນະສິການ ອຸເປກຂານິມິດຕາມສົມຄວນແກ່ເວລາ ເມື່ອນັ້ນ ຈິດນັ້ນຍ່ອມອ່ອນ ເໝາະແກ່ການໃຊ້ງານ ຜຸດຜ່ອງ ແລະບໍ່ເສຍຫາຍ ຕັ້ງໝັ້ນດ້ວຍດີເພື່ອຄວາມສິ້ນອາສະວະ

ປຽບຄືຊ່າງຄຳ ຫຼື ລູກມືຂອງຊ່າງຄຳກະກຽມເບົ້າ ເອົາຄີມຄີບຄຳໃສ່ລົງທີ່ປາກເບົ້າ ແລ້ວສູບລົມຕາມສົມຄວນແກ່ເວລາ ເອົານ້ຳປະພົມຕາມສົມຄວນແກ່ເວລາ ເພ່ງເບິ່ງຕາມສົມຄວນແກ່ເວລາ ຖ້າຊ່າງຄຳຫຼືລູກມືຂອງຊ່າງຄຳເພິ່ງສູບລົມຄຳນັ້ນແນວດຽວ ເປັນໄປໄດ້ທີ່ຄຳນັ້ນເພິ່ງໄໝ້ ຖ້າຊ່າງຄຳຫຼືລູກມືຂອງຊ່າງຄຳເພິ່ງເອົານ້ຳປະພົມຄຳນັ້ນແນວດຽວ ເປັນໄປໄດ້ທີ່ຄຳນັ້ນເພິ່ງເຢັນ ຖ້າຊ່າງຄຳຫຼືລູກມືຂອງຊ່າງຄຳເພິ່ງເພ່ງເບິ່ງ ຄຳນັ້ນແນວດຽວ ເປັນໄປໄດ້ທີ່ຄຳນັ້ນບໍ່ສຸກທົ່ວເຖິງ ແຕ່ເມື່ອໃດ ຊ່າງຄຳຫຼືລູກມືຂອງຊ່າງຄຳສູບລົມຄຳນັ້ນຕາມສົມຄວນແກ່ເວລາ ເອົານ້ຳປະພົມຕາມສົມຄວນແກ່ເວລາ ເພ່ງເບິ່ງຕາມສົມຄວນແກ່ເວລາ ຄຳນັ້ນຍ່ອມອ່ອນ ໃຊ້ການໄດ້ ຜຸດຜ່ອງແລະບໍ່ແຕກງ່າຍ ໃຊ້ງານ ໄດ້ດີ ແລະຊ່າງຄຳຫຼືລູກມືຂອງຊ່າງຄຳມຸ້ງໝາຍຈະເຮັດເຄື່ອງປະດັບຊະນິດໃດ ໆ ຄື ແຜ່ນຄຳ ຕຸ້ມຫູ ສ້ອຍຄໍ ຫຼື ມາໄລຄຳ ຄຳນັ້ນ ຍ່ອມອຳນວຍປະໂຫຍດໃຫ້ເຂົາໄດ້ແມ່ນສັນໃດ

ພິກຂຸຜູ້ພ່ຳເພັງອະທິຈິດກໍຄືກັນສັນນັ້ນ ເພິ່ງມະນະສິການນິມິດ ๓ ປະການຕາມສົມຄວນແກ່ເວລາ ຄື

๗. เพิ่งมะนะสิกาน สะมาทิ นิมิดตามสมควนแก่เวลา
๘. เพิ่งมะนะสิกาน ปักคะหะ นิมิดตามสมควนแก่เวลา
๙. เพิ่งมะนะสิกาน อุเปกขา นิมิดตามสมควนแก่เวลา

ถ้าพิกขุผู้พ่ำเพ็งอะทิจิดเพิ่งมะนะสิกานสะเพาะสะมาทินิมิดแนวดຽว เป็นไปได้ที่จิดนั้น จะเพิ่งเป็นไปเพื่อความขี้ค้าน ถ้าพิกขุผู้พ่ำเพ็งอะทิจิดเพิ่งมะนะสิกานสะเพาะปักคะหะนิมิดแนวดຽว เป็นไปได้ที่จิดนั้นจะเพิ่งเป็นไปเพื่อความฟุ้งຊ่าน ถ้าพิกขุผู้พ่ำเพ็งอะทิจิดเพิ่งมะนะสิกานสะเพาะอุเปกขานิมิดแนวดຽว เป็นไปได้ที่จิดนั้นจะบ่ตั้งหมั้นด้วยดีเพื่อความสิ้นอาสะวะ แต่เมื่อใดที่พิกขุผู้พ่ำเพ็งอะทิจิดมะนะสิกานสะมาทินิมิดตามสมควนแก่เวลา มะนะสิกานปักคะหะนิมิดตามสมควนแก่เวลา และมะนะสิกานอุเปกขานิมิดตามสมควนแก่เวลา เมื่อนั้น จิดนั้นย่อมอ่อน เหมาะแก่การใຊ้งานผุดผ่อง และบ่เสยหาย ตั้งหมั้นด้วยดีเพื่อความสิ้นอาสะวะ และพิกขุนั้นย่อมน้อมจิดไปเพื่อเຮัดให้แจ้งทำที่ควนเຮัดให้แจ้งด้วยปันยายิ่งใด ๆ เมื่อมีเหดแห่งสะติ ท่านย่อมบันลุ ความเป็นผู้เหมาะสมที่จะປະจักแจ้งในทำนั้น ๆ

ถ้าพิกขุนั้นหวังว่า “เຮົາเพิ่งสะแดงລິດได้หลายแนว ๆลๆ เพิ่งเຮัดให้แจ้ง ๆลๆ เຂົ້າเຖິງอยู่ในปัດจุบัน” เมื่อมีเหดแห่งสะติ ท่านย่อมบันลุความเป็นผู้เหมาะสมที่จะປະจักแจ้งในทำนั้น ๆ

**นิมิดตะสูด ที่ ๑๑ จົບ**

**โลนะผะละวັກที่ ๕ จົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

๑. อัดจายิกะสูด
๒. ปะวิเวกะสูด
๓. สะระหะสูด
๔. ปะริสาสูด
๕. ปะถົມอาຊานิยะสูด
๖. ทุติยะอาຊานิยะสูด
๗. ตะติยะอาຊานิยะสูด
๘. โปตะถะกะสูด
๙. โลนะผะละสูด
๑๐. ປັງสุโทวะกะสูด
๑๑. นิมิดตะสูด

**ทุติยะปັນนาດ จົບບໍລິບູນ**

# ໓. ຕະຕິຍະປັນນາດ

## ໑. ສຳໂພທະວັກ

### ໝວດວ່າດ້ວຍການຕັດສະຮູ້

### ໑. ປຸບເພວະສຳໂພທະສູດ

### ວ່າດ້ວຍຄວາມດຳຣິກ່ອນຕັດສະຮູ້

[໑໐໔] ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນພຣະໂພທິສັດຍັງບໍ່ໄດ້ຕັດສະຮູ້ ໄດ້ມີຄວາມຄິດດັ່ງນີ້ວ່າ "ໃນໂລກ ອັນໃດນໍ? ເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກ" ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ສະພາບທີ່ສຸກໂສມະນັດອາໄສໂລກເກີດຂຶ້ນນີ້ເປັນຄຸນໃນໂລກ ສະພາບທີ່ບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ເປັນໂທດໃນໂລກ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະ ເປັນເຄື່ອງສະບັດອອກໄປໃນໂລກ"

ພິກຂຸທັງຫຼາຍ ຕາບໃດ ເຮົາຍັງບໍ່ຮູ້ຄຸນຂອງໂລກໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໄປໂດຍຄວາມເປັນເຄື່ອງສະບັດອອກໄປຕາມຄວາມເປັນຈິງ ຕາບນັ້ນ ເຮົາຈະຍັງບໍ່ປະຕິຍານຕົນວ່າເປັນຜູ້ຕັດສະຮູ້ອະນຸດຕະຣະສຳມາສຳໂພທິຍານໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດທັງຫຼາຍ

ແຕ່ເມື່ອໃດ ເຮົາຮູ້ຄຸນຂອງໂລກໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໄປໂດຍຄວາມເປັນເຄື່ອງສະບັດອອກໄປ ເມື່ອນັ້ນເຮົາຈຶ່ງປະຕິຍານຕົນວ່າເປັນຜູ້ຕັດສະຮູ້ອະນຸດຕະຣະສຳມາສຳໂພທິຍານໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດທັງຫຼາຍ

ກໍແລ ຍານທັດສະນະ໌ເກີດຂຶ້ນແລ້ວແກ່ເຮົາວ່າ "ວິມຸດຕິຂອງເຮົາບໍ່ກຳເຣິບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ"

**ປຸບເພວະສຳໂພທະສູດ ທີ ໑ ຈົບ**

# ໘. ປະຖົມອັດສາທະສູດ

## ວ່າດ້ວຍຄຸນຂອງໂລກສູດທີ ໑

[໑໐໕] ພິກຂຸທັງຫຼາຍ ເຮົາໄດ້ທ່ຽວສະແຫວງຫາຄຸນຂອງໂລກ ໄດ້ພົບຄຸນໃນໂລກແລ້ວ ຄຸນໃນໂລກມີປະມານທໍ່ໃດ ເຮົາເຫັນຄຸນປະມານທໍ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາໂທດຂອງໂລກ ໄດ້ພົບໂທດໃນໂລກແລ້ວ ໂທດໃນໂລກມີປະມານທໍ່ໃດ ເຮົາເຫັນໂທດປະມານທໍ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາເຄື່ອງກໍາຈັດໂລກອອກໄປໄດ້ ພົບເຄື່ອງກໍາຈັດໂລກອອກໄປ ເຄື່ອງສະບັດອອກໄປໃນໂລກມີປະມານທໍ່ໃດ ເຮົາເຫັນເຄື່ອງກໍາຈັດໂລກອອກໄປປະມານທໍ່ນັ້ນດີແລ້ວດ້ວຍປັນຍາ

ຕາບໃດ ເຮົາຍັງບໍ່ຮູ້ຄຸນຂອງໂລກໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະ ເຄື່ອງສະບັດອອກໄປໂດຍຄວາມເປັນເຄື່ອງສະບັດອອກໄປຕາມຄວາມເປັນຈິງ ຕາບນັ້ນ ເຮົາຈະຍັງບໍ່ປະຕິຍານຕົນວ່າເປັນຜູ້ຕັດສະຮູ້ອະນຸດຕະຣະສໍາມາສໍາໂພທິຍານໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດທັງຫຼາຍ

ແຕ່ເມື່ອໃດ ເຮົາຮູ້ຄຸນຂອງໂລກໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະ ເຄື່ອງ ສະບັດອອກໄປໂດຍຄວາມເປັນເຄື່ອງສະບັດອອກໄປຕາມຄວາມເປັນຈິງ ເມື່ອນັ້ນ ເຮົາຈຶ່ງປະຕິຍານຕົນວ່າ ເປັນຜູ້ຕັດສະຮູ້ອະນຸດຕະຣະສໍາມາສໍາໂພທິຍານໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດທັງຫຼາຍ

ກໍແລ ຍານທັດສະນະເກີດຂຶ້ນແກ່ເຮົາວ່າ "ວິມຸດຕິຂອງເຮົາບໍ່ກໍາເຣີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ"

**ປະຖົມອັດສາທະສູດ ທີ ໘ ຈົບ**

# ໙. ທຸຕິຍະອັດສາທະສູດ

## ວ່າດ້ວຍຄຸນຂອງໂລກ ສູດ ທີ ໘

[໑໐໖] ພິກຂຸທັງຫຼາຍ ກໍຖ້າຄຸນໃນໂລກນີ້ຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງ ຕິດໃຈໃນໂລກ ແຕ່ຍ້ອນຄຸນໃນໂລກມີຢູ່ ສັດທັງຫຼາຍ ຈຶ່ງຕິດໃຈໃນໂລກ

ຖ້າໂທດໃນໂລກຈັກບໍ່ມີແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງເບື່ອໜ່າຍໃນໂລກ ແຕ່ຍ້ອນໂທດໃນໂລກມີຢູ່ ສັດທັງຫຼາ ຈຶ່ງເບື່ອໜ່າຍໃນໂລກໄດ້

ກໍຖ້າເຄື່ອງສະບັດອອກໄປໃນໂລກຈັກບໍ່ມີແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງສະບັດອອກໄປຈາກໂລກ ແຕ່ຍ້ອນເຄື່ອງສະບັດອອກໄປໃນໂລກມີຢູ່ ສັດທັງຫຼາຍ ຈຶ່ງສະບັດອອກໄປຈາກໂລກ

ຕາບໃດ ສັດທັງຫຼາຍ ຍັງບໍ່ຮູ້ຄຸນຂອງໂລກໂດຍຄວາມເປັນຄຸນ ໂທດຂອງໂລກໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໄປໂດຍຄວາມເປັນເຄື່ອງສະບັດອອກໄປຕາມຄວາມເປັນຈິງ ຕາບນັ້ນ ສັດທັງຫຼາຍ ຈະອອກໄປ ລຸດໄປ ພົ້ນໄປຈາກໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ຈາກໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດທັງຫຼາຍ ມີໃຈປາສະຈາກຂີດຄັ່ນຢູ່ບໍ່ໄດ້ເລີຍ

ແຕ່ເມື່ອໃດ ສັດທັງຫຼາຍ ຮູ້ຄຸນຂອງໂລກໂດຍຄວາມເປັນຄຸນ ໂທດຂອງໂລກໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໄປໂດຍຄວາມເປັນເຄື່ອງສະບັດອອກໄປຕາມຄວາມເປັນຈິງ ເມື່ອນັ້ນ ສັດທັງຫຼາຍຍ່ອມອອກໄປ ລຸດໄປ ພົ້ນໄປຈາກໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ຈາກໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດທັງຫຼາຍ ມີໃຈປາສະຈາກຂີດຄັ່ນຢູ່ໄດ້

**ທຸຕິຍະອັດສາທະສູດທີ ໓ ຈົບ**

## ໔. ສະມະນະພາມມະນະສູດ

## ວ່າດ້ວຍຜູ້ຄວນຍ້ອງຍໍວ່າເປັນສະມະນະແລະພາມ

[໑໐໗] ພິກຂຸທັງຫຼາຍ ສະມະນະຫຼືພາມຜູ້ບໍ່ຮູ້ຄຸນຂອງໂລກໂດຍຄວາມເປັນຄຸນ ໂທດຂອງໂລກໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໄປໂດຍຄວາມເປັນເຄື່ອງກຳຈັດ ອອກໄປຕາມຄວາມເປັນຈິງ ເຮົາບໍ່ຍ້ອງຍໍວ່າເປັນສະມະນະໃນໝູ່ສະມະນະ ຫຼື ເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນບໍ່ຊື່ວ່າ ເຮັດໃຫ້ແຈ້ງຄຸນຂອງຄວາມເປັນສະມະນະ ແລະຄຸນຂອງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ແຕ່ສະມະນະຫຼືພາມຜູ້ຮູ້ຄຸນຂອງໂລກໂດຍຄວາມເປັນຄຸນຂອງໂລກ ໂທດຂອງໂລກໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໄປໂດຍຄວາມເປັນເຄື່ອງສະບັດອອກໄປຕາມຄວາມເປັນຈິງ ເຮົາຍ້ອງຍໍວ່າເປັນສະມະນະໃນໝູ່ສະມະນະ ຫຼື ເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນ

ຊື່ວ່າເຮັດໃຫ້ແຈ້ງຄຸນຂອງຄວາມເປັນສະມະນະ ແລະຄຸນຂອງຄວາມເປັນພາມ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ສະມະນະພາມມະນະສູດທີ ๔ ຈົບ**

## ๕. ຣຸນນະສູດ

## ວ່າດ້ວຍການຂັບຮ້ອງຄືການຮ້ອງໄຫ້ໃນອະຣິຍະວິໄນ

[໑໐໗] ພິກຂຸທັງຫຼາຍ ການຂັບຮ້ອງ ຄື ການຮ້ອງໄຫ້ໃນອະຣິຍະວິໄນ ການຟ້ອນລຳຄື ຄວາມເປັນບ້າໃນອະຣິຍະວິໄນ ການຫົວຈົນເຫັນແຂ້ວຫຼາຍເກີນໄປ ຄື ຄວາມເປັນເດັກໃນອະຣິຍະວິໄນ

ຍ້ອນເຫດນັ້ນແລ ທ່ານທັງຫຼາຍ ຈົ່ງລະໂດຍເດັດຂາດໃນການຂັບຮ້ອງ ແລະການຟ້ອນລຳ ເມື່ອທ່ານທັງຫຼາຍມີຄວາມເບີກບານໃນທຳ ພຽງສ່ຳຍິ້ມແຍ້ມກໍພຽງພໍແລ້ວ

**ຣຸນນະສູດ ທີ ๕ ຈົບ**

## ๖. ອະຕິດຕິສູດ

## ວ່າດ້ວຍສິ່ງທີ່ເສບບໍ່ຮູ້ຈັກອິ່ມ

[໑໐໘] ພິກຂຸທັງຫຼາຍ ຄວາມອິ່ມໃນການເສບສິ່ງ ๓ ປະການ ຍ່ອມບໍ່ມີ

ຄວາມອິ່ມໃນການເສບສິ່ງ ๓ ປະການ ອັນໃດແດ່ ຄື

໑. ຄວາມອິ່ມໃນການນອນຫຼັບ
๔. ຄວາມອິ່ມໃນການເສບເຄື່ອງດື່ມຄືສຸຣາແລະເມໄຮ
๓. ຄວາມອິ່ມໃນການເສບເມຖຸນທຳ

ພິກຂຸທັງຫຼາຍ ຄວາມອິ່ມໃນການເສບສິ່ງ ๓ ປະການນີ້ແລຍ່ອມບໍ່ມີ

**ອະຕິດຕິສູດທີ ๖ ຈົບ**

# ๗. ອະຣັກຂິຕະສູດ

## ວ່າດ້ວຍຜູ້ບໍ່ຖືຮັກສາຈິດ

[໑໑໐] ຄັ້ງນັ້ນ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍ ອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອະນາຖະບິນທິກະຄະຫະບໍດີດັ່ງນີ້ ວ່າ

ຄະຫະບໍດີ ເມື່ອບຸກຄົນບໍ່ຖືຮັກສາຈິດ ຊື່ວ່າ ບໍ່ຖືຮັກສາກາຍຍະກຳ ວະຈີກຳ ແລະມະໂນກຳ ເຂົາຜູ້ບໍ່ຖືຮັກສາກາຍຍະກຳ ວະຈີກຳ ແລະມະໂນກຳ ຍ່ອມມີກາຍຍະກຳ ວະຈີກຳ ແລະມະໂນກຳປຽກຊຸ່ມ ເຂົາຜູ້ມີກາຍຍະກຳ ວະຈີກຳ ແລະມະໂນກຳປຽກຊຸ່ມ ຍ່ອມມີກາຍຍະກຳ ວະຈີກຳ ແລະມະໂນກຳເສຍຫາຍ ເຂົາຜູ້ມີກາຍຍະກຳ ວະຈີກຳ ແລະມະໂນກຳ ເສຍຫາຍ ຍ່ອມມີການຕາຍທີ່ບໍ່ດີ ກາລະກິຣິຍາ (ການຕາຍ) ກໍບໍ່ງາມ

ເມື່ອເຮືອນຍອດມຸງໄວ້ບໍ່ດີ ຍອດເຮືອນ ໄມ້ກອນ ແລະຝາເຮືອນຊື່ວ່າບໍ່ໄດ້ຮັບການຖືຮັກສາ ຍອດເຮືອນ ໄມ້ກອນ ແລະຝາເຮືອນຊື່ວ່າຖືກຝົນຮົ່ວຫົດ ຍອດເຮືອນ ໄມ້ກອນແລະຝາເຮືອນກໍຜຸພັງ ແມ່ນສັນໃດ

ເມື່ອບຸກຄົນບໍ່ຖືຮັກສາຈິດ ໆລໆ ຍ່ອມມີການຕາຍທີ່ບໍ່ດີ ກາລະກິຣິຍາກໍບໍ່ງາມ ກໍຄືກັນສັນນັ້ນ

ເມື່ອບຸກຄົນຖືຮັກສາຈິດ ຊື່ວ່າ ຖືຮັກສາກາຍຍະກຳ ວະຈີກຳ ແລະມະໂນກຳ ເຂົາຜູ້ຖືຮັກສາກາຍຍະກຳ ວະຈີກຳ ແລະມະໂນກຳ ຍ່ອມມີກາຍຍະກຳ ວະຈີກຳ ແລະມະໂນກຳທີ່ບໍ່ປຽກຊຸ່ມ ເຂົາຜູ້ມີກາຍຍະກຳ ວະຈີກຳ ແລະມະໂນກຳທີ່ບໍ່ປຽກຊຸ່ມ ຍ່ອມມີກາຍຍະກຳ ວະຈີກຳ ແລະມະໂນກຳທີ່ບໍ່ເສຍຫາຍ ເຂົາຜູ້ມີກາຍຍະກຳ ວະຈີກຳ ແລະມະໂນກຳບໍ່ເສຍຫາຍ ຍ່ອມມີການຕາຍທີ່ດີ ກາລະກິຣິຍາກໍງາມ

ເມື່ອເຮືອນຍອດມຸງໄວ້ດີ ຍອດເຮືອນ ໄມ້ກອນ ແລະຝາເຮືອນຊື່ວ່າໄດ້ຮັບການຖືຮັກສາ ຍອດເຮືອນ ໄມ້ກອນ ແລະຝາເຮືອນຊື່ວ່າບໍ່ຖືກຝົນຮົ່ວຫົດ ຍອດເຮືອນ ໄມ້ກອນ ຝາເຮືອນກໍບໍ່ຜຸພັງ ແມ່ນສັນໃດ

ຄະຫະບໍດີ ເມື່ອບຸກຄົນຖືຮັກສາຈິດ ໆລໆ ຍ່ອມມີການຕາຍທີ່ດີ ກາລະກິຣິຍາກໍງາມ ກໍຄືກັນສັນນັ້ນ

**ອະຣັກຂິຕະສູດ ທີ ๗ ຈົບ**

# ๙. ພະຍາປັນນະສູດ

## ວ່າດ້ວຍຈິດເຖິງຄວາມຜິດປົກກະຕິ

[໑໑໑] ຄັ້ງນັ້ນ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອະນາຖະບິນທິກະຄະຫະບໍດີດັ່ງນີ້ ວ່າ

ຄະຫະບໍດີ ເມື່ອຈິດເຖິງຄວາມຜິດປົກກະຕິ ແມ່ນກາຍຍະກໍາ ວະຈີກໍາ ແລະມະໂນກໍາກໍເຖິງຄວາມຜິດປົກກະຕິ ເຂົາຜູ້ມີກາຍຍະກໍາ ວະຈີກໍາ ແລະມະໂນກໍາເຖິງຄວາມຜິດປົກກະຕິຍ່ອມມີການຕາຍທີ່ບໍ່ດີ ກາລະກິຣິຍາກໍບໍ່ງາມ

ເມື່ອເຮືອນຍອດມຸງໄວ້ບໍ່ດີ ຍອດເຮືອນ ໄມ້ກອນ ແລະຝາເຮືອນຍ່ອມເຖິງຄວາມຜິດປົກກະຕິແມ່ນສັນໃດ ເມື່ອຈິດເຖິງຄວາມຜິດປົກກະຕິ ຯລຯ ຍ່ອມມີການຕາຍທີ່ບໍ່ດີ ກາລະກິຣິຍາກໍບໍ່ງາມ ຄືກັນສັນນັ້ນ

ເມື່ອຈິດບໍ່ເຖິງຄວາມຜິດປົກກະຕິ ແມ່ນກາຍຍະກໍາ ວະຈີກໍາ ແລະມະໂນກໍາກໍບໍ່ເຖິງຄວາມຜິດປົກກະຕິ ເຂົາຜູ້ມີກາຍຍະກໍາ ວະຈີກໍາ ແລະມະໂນກໍາບໍ່ເຖິງຄວາມຜິດປົກກະຕິ ຍ່ອມມີການຕາຍທີ່ດີ ກາລະກິຣິຍາກໍງາມ

ເມື່ອເຮືອນຍອດມຸງໄວ້ດີ ແມ່ນຍອດເຮືອນ ໄມ້ກອນ ຝາເຮືອນກໍບໍ່ເຖິງຄວາມຜິດປົກກະຕິແມ່ນສັນໃດ

ຄະຫະບໍດີ ເມື່ອຈິດບໍ່ເຖິງຄວາມຜິດປົກກະຕິ ຯລຯ ຍ່ອມມີການຕາຍທີ່ດີ ກາລະກິຣິຍາກໍງາມ ຄືກັນສັນນັ້ນ

**ພະຍາປັນນະສູດ ທີ ๙ ຈົບ**

# ໑໐. ປະຖົມນິທານະສູດ

## ວ່າດ້ວຍເຫດໃຫ້ເກີດກໍາສູດທີ ໑

[໑໑໒] ພິກຂຸທັງຫຼາຍ ເຫດໃຫ້ເກີດກໍາ (ຊົ່ວ) ໓ ປະການນີ້

ເຫດໃຫ້ເກີດກຳ (ຊົ່ວ) ໓ ປະການ ອັນໃດແດ່ ຄື

໑. ໂລພະ (ຄວາມຢາກໄດ້)
໒. ໂທສະ (ຄວາມຄິດປະທຸດສະຮ້າຍ)
໓. ໂມຫະ (ຄວາມຫຼົງ)

ກຳໃດທີ່ບຸກຄົນເຮັດດ້ວຍໂລພະ ເກີດຈາກໂລພະ ມີໂລພະເປັນເຫດ ມີໂລພະເປັນແດນເກີດ ກຳນັ້ນກໄກເປັນອະກຸສົນ ກຳນັ້ນມີໂທດ ກຳນັ້ນມີຜົນເປັນທຸກ ກຳນັ້ນເປັນໄປເພື່ອຄວາມເກີດກຳອີກ ກຳນັ້ນບໍ່ເປັນໄປເພື່ອຄວາມດັບກຳ

ກຳໃດທີ່ບຸກຄົນເຮັດດ້ວຍໂທສະ ເກີດຈາກໂທສະ ມີໂທສະເປັນເຫດ ມີໂທສະເປັນແດນເກີດ ກຳນັ້ນເປັນອະກຸສົນ ກຳນັ້ນມີໂທດ ກຳນັ້ນມີຜົນເປັນທຸກ ກຳນັ້ນເປັນໄປເພື່ອຄວາມເກີດກຳອີກ ກຳນັ້ນບໍ່ເປັນໄປເພື່ອຄວາມດັບກຳ

ກຳໃດທີ່ບຸກຄົນເຮັດດ້ວຍໂມຫະ ເກີດຈາກໂມຫະ ມີໂມຫະເປັນເຫດ ມີໂມຫະເປັນແດນເກີດ ກຳນັ້ນເປັນອະກຸສົນ ກຳນັ້ນມີໂທດ ກຳນັ້ນມີຜົນເປັນທຸກ ກຳນັ້ນເປັນໄປເພື່ອຄວາມເກີດກຳອີກ ກຳນັ້ນບໍ່ເປັນໄປເພື່ອຄວາມດັບກຳ

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ(ຊົ່ວ) ໓ ປະການນີ້ແລ

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ(ດີ) ໓ ປະການນີ້

ເຫດໃຫ້ເກີດກຳ(ດີ) ໓ ປະການ ອັນໃດແດ່ ຄື

໑. ອະໂລພະ (ຄວາມບໍ່ຍາກໄດ້)
໒. ອະໂທສະ (ຄວາມບໍ່ຄິດປະທຸດສະຮ້າຍ)
໓. ອະໂມຫະ (ຄວາມບໍ່ຫຼົງ)

ກຳໃດທີ່ບຸກຄົນເຮັດດ້ວຍອະໂລພະ ເກີດຈາກອະໂລພະ ມີອະໂລພະເປັນເຫດ ມີອະໂລພະເປັນແດນເກີດ ກຳນັ້ນເປັນກຸສົນ ກຳນັ້ນບໍ່ມີໂທດ ກຳນັ້ນມີຜົນເປັນສຸກ ກຳນັ້ນເປັນໄປເພື່ອຄວາມດັບກຳ ກຳນັ້ນ ບໍ່ເປັນໄປເພື່ອຄວາມເກີດກຳອີກ

ກຳໃດທີ່ບຸກຄົນເຮັດດ້ວຍອະໂທສະ ເກີດຈາກອະໂທສະ ມີອະໂທສະເປັນເຫດ ມີອະໂທສະເປັນແດນເກີດ ກຳນັ້ນເປັນກຸສົນ ກຳນັ້ນບໍ່ມີໂທດ ກຳນັ້ນມີຜົນເປັນສຸກ ກຳນັ້ນເປັນໄປເພື່ອຄວາມດັບກຳ ກຳນັ້ນບໍ່ເປັນໄປເພື່ອຄວາມເກີດກຳອີກ

ກຳໃດທີ່ບຸກຄົນເຮັດດ້ວຍອະໂມຫະ ເກີດຈາກອະໂມຫະ ມີອະໂມຫະເປັນເຫດ ມີອະໂມຫະເປັນແດນເກີດ ກຳນັ້ນເປັນກຸສົນ ກຳນັ້ນບໍ່ມີໂທດ ກຳນັ້ນມີຜົນເປັນສຸກ ກຳນັ້ນເປັນໄປເພື່ອຄວາມດັບກຳ ກຳນັ້ນບໍ່ເປັນໄປເພື່ອຄວາມເກີດກຳອີກ

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ(ດີ) ໓ ປະການນີ້ແລ

**ປະຖົມນິທານະສູດທີ ໗ ຈົບ**

## ໑໐. ທຸຕິຍະນິທານະສູດ

## ວ່າດ້ວຍເຫດໃຫ້ເກີດກຳສູດທີ ໘

[໑໑໓] ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ(ຊົ່ວ) ໓ ປະການນີ້

ເຫດໃຫ້ເກີດກຳ(ຊົ່ວ) ໓ ປະການ ອັນໃດແດ່ ຄື

໑. ສັນທະ ເກີດຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນ ອະດີດ
໒. ສັນທະ ເກີດຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນ ອະນາຄົດ
໓. ສັນທະ ເກີດຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນ ປັດຈຸບັນ

ສັນທະເກີດເພຣາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະດີດ ເປັນແນວໃດ?

ຄື ບຸກຄົນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະດີດ ຮິ່ນຕອງ ພິຈາລະນາດ້ວຍໃຈ ເມື່ອເຂົາອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະດີດ ຮິ່ນຕອງ ພິຈາລະນາດ້ວຍໃຈ ຍ່ອມເກີດສັນທະ ເຂົາຜູ້ເກີດສັນທະ ຍ່ອມຖືກທຳເຫຼົ່ານັ້ນຮ້ອຍຮັດ ເຮົາຮຽກຄວາມກຳໜັດແຫ່ງໃຈນັ້ນວ່າເປັນສັງໂຍດ ສັນທະເກີດເພຣາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະດີດ ເປັນແນວນີ້ແລ

ສັນທະເກີດເພຣາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະນາຄົດ ເປັນແນວໃດ?

ຄື ບຸກຄົນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະນາຄົດ ຮິ່ນຕອງ ພິຈາລະນາດ້ວຍໃຈ ເມື່ອເຂົາອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະນາຄົດ ຮິ່ນຕອງ ພິຈາລະນາດ້ວຍໃຈ ຍ່ອມເກີດສັນທະ ເຂົາຜູ້ເກີດສັນທະ ຍ່ອມຖືກທຳເຫຼົ່ານັ້ນຮ້ອຍຮັດ ເຮົາຮຽກຄວາມກຳໜັດແຫ່ງໃຈນັ້ນວ່າເປັນສັງໂຍດ ສັນທະເກີດເພຣາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະນາຄົດ ເປັນແນວນີ້ແລ

ສັນທະເກີດເພຣາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນປັດຈຸບັນ ເປັນແນວໃດ?

ຄື ບຸກຄົນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນປັດຈຸບັນ ຮຳເພີງ ພິຈາລະນາດ້ວຍໃຈ ເມື່ອເຂົາອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນປັດຈຸບັນ ຮຳເພີງ ພິຈາລະນາດ້ວຍໃຈ ຍ່ອມເກີດສັນທະ ເຂົາຜູ້ເກີດສັນທະ ຍ່ອມຖືກທຳເຫຼົ່ານັ້ນຮ້ອຍຮັດ ເຮົາຮຽກຄວາມ ກຳໜັດແຫ່ງໃຈນັ້ນວ່າເປັນສັງໂຍດ ສັນທະເກີດເພຣາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນປັດຈຸບັນ ເປັນແນວນີ້ແລ

ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ (ຊົ່ວ) ໓ ປະການນີ້ແລ
ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ (ດີ) ໓ ປະການນີ້
ເຫດໃຫ້ເກີດກຳ(ດີ) ໓ ປະການ ອັນໃດແດ່ ຄື

໑. ສັນທະ ບໍ່ເກີດຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນ ອະດີດ
໒. ສັນທະ ບໍ່ເກີດຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນ ອະນາຄົດ
໓. ສັນທະ ບໍ່ເກີດຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນ ປັດຈຸບັນ

ສັນທະບໍ່ເກີດເພຣາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະດີດ ເປັນແນວໃດ?
ຄື ບຸກຄົນຮູ້ແຈ້ງຜົນທີ່ຈະເກີດຕໍ່ໄປແຫ່ງທຳອັນເປັນເຫດແຫ່ງສັນທະຣາຄະໃນອະດີດ ເມື່ອຮູ້ແລ້ວຈຶ່ງລະເວັ້ນຜົນນັ້ນສາແລ້ວຮູ້ແຈ້ງດ້ວຍໃຈ ເຫັນແຈ້ງດ້ວຍປັນຍາ ສັນທະບໍ່ເກີດຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະດີດ ເປັນແນວນີ້ແລ

ສັນທະບໍ່ເກີດເພາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະນາຄົດ ເປັນແນວໃດ?
ຄື ບຸກຄົນຮູ້ແຈ້ງຜົນທີ່ຈະເກີດຕ່ອໄປແຫ່ງທຳ ອັນເປັນເຫດແຫ່ງສັນທະຣາຄະ ໃນອະນາຄົດ ເມື່ອຮູ້ແລ້ວຈຶ່ງລະເວັ້ນຜົນນັ້ນສາແລ້ວຮູ້ແຈ້ງດ້ວຍໃຈ ເຫັນແຈ້ງດ້ວຍປັນຍາ ສັນທະບໍ່ເກີດ ຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນອະນາຄົດ ເປັນແນວນີ້ແລ

ສັນທະບໍ່ເກີດເພາະອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນປັດຈຸບັນ ເປັນແນວໃດ?
ຄື ບຸກຄົນຮູ້ແຈ້ງຜົນທີ່ຈະເກີດຕໍ່ໄປແຫ່ງທຳອັນເປັນເຫດແຫ່ງສັນທະຣາຄະໃນປັດຈຸບັນ ເມື່ອຮູ້ແລ້ວ ຈຶ່ງລະເວັ້ນຜົນນັ້ນສາແລ້ວຮູ້ແຈ້ງດ້ວຍໃຈ ເຫັນແຈ້ງດ້ວຍປັນຍາ ສັນທະບໍ່ເກີດຍ້ອນອາໄສທຳອັນເປັນເຫດແຫ່ງສັນທະຣາຄະໃນປັດຈຸບັນ ເປັນແນວນີ້ແລ
ພິກຂຸທັງຫຼາຍ ເຫດໃຫ້ເກີດກຳ (ດີ) ໓ ປະການນີ້ແລ

**ທຸຕິຍະນິທານະສູດ ທີ ໑໐ ຈົບ**

**ສຳໂພທະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື



# ໔. ອາປາຍິກະວັກ

## ໝວດວ່າດ້ວຍບຸກຄົນຜູ້ຕ້ອງໄປສູ່ອະບາຍພູມ

## ໑. ອາປາຍິກະສູດ

## ວ່າດ້ວຍບຸກຄົນຜູ້ຕ້ອງໄປສູ່ອະບາຍພູມ

[໑໑໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ບໍ່ລະບາບກຳ ໓ ປະການນີ້ຕ້ອງໄປອະບາຍພູມ ຕ້ອງໄປນະຮົກ

ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນທີ່ບໍ່ແມ່ນພົມມະຈາຣີ ແຕ່ປະຕິຍານຕົນວ່າເປັນພົມມະຈາຣີ
໔. ບຸກຄົນທີ່ຕາມກຳຈັດທ່ານຜູ້ປະພຶດພົມມະຈັນບໍລິສຸດ ດ້ວຍກຳທີ່ບໍ່ມີມູນອັນເປັນປໍລະປັກຕໍ່ພົມມະຈັນ
໓. ບຸກຄົນທີ່ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ໂທດໃນກາມບໍ່ມີ" ແລ້ວເຖິງຄວາມເປັນເຫຍື່ອໃນກາມທັງຫຼາຍ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ແລ ບໍ່ລະບາບກຳ ໓ ປະການນີ້ຕ້ອງໄປ ອະບາຍຍະພູມ ຕ້ອງໄປນະຮົກ

**ອາປາຍິກະສູດ ທີ ໑ ຈົບ**

## ໔. ທຸນລະພະສູດ

## ວ່າດ້ວຍບຸກຄົນຫາໄດ້ຍາກ

[໑໑໕] ພິກຂຸທັງຫຼາຍ ຄວາມຜາກົດຂອງບຸກຄົນ ໓ ຈຳພວກຫາໄດ້ຍາກໃນໂລກ

ຄວາມຜາກົດຂອງບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ
໒. ບຸກຄົນຜູ້ສະແດງທຳວິໄນທີ່ຕະຖາຄົດປະກາດໄວ້
໓. ກະຕັນຍູກະຕະເວທີບຸກຄົນ

ພິກຂຸທັງຫຼາຍ ຄວາມຜາກົດຂອງບຸກຄົນ ໓ ຈຳພວກນີ້ແລ ຫາໄດ້ຍາກໃນໂລກ

**ທຸນລະພະສູດທີ ໒ ຈົບ**

## ໓. ອັບປະເມີຍຍະສູດ

## ວ່າດ້ວຍບຸກຄົນທີ່ປະມານບໍ່ໄດ້

[໑໑໔] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກໃດແດ່ ຄື

໑. ສຸບປະເມີຍຍະບຸກຄົນ (ບຸກຄົນທີ່ປະມານໄດ້ງ່າຍ)
໒. ທຸບປະເມີຍຍະບຸກຄົນ (ບຸກຄົນທີ່ປະມານໄດ້ຍາກ)
໓. ອັບປະເມີຍຍະບຸກຄົນ (ບຸກຄົນທີ່ປະມານບໍ່ໄດ້)

ສຸບປະເມີຍຍະບຸກຄົນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຟຸ້ງຊ່ານ ຖືໂຕ ໂລເລ ປາກບໍ່ຂອບ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ນີ້ຮຽກວ່າ ສຸບປະເມີຍຍະບຸກຄົນ

ທຸບປະເມີຍຍະບຸກຄົນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ຟຸ້ງຊ່ານ ບໍ່ຖືໂຕ ບໍ່ໂລເລ ບໍ່ປາກບໍ່ຂອບ ບໍ່ເວົ້າພ່ຳເພື້ອ ມີສະຕິໝັ້ນຄົງ ມີສຳປະຊັນຍະ ມີຈິດຕັ້ງໝັ້ນ ມີຈິດແນ່ວແນ່ ສັງລວມອິນຊີ ພິກຂຸທັງຫຼາຍ ນີ້ຮຽກວ່າ ທຸບປະເມີຍຍະບຸກຄົນ

ອັບປະເມີຍຍະບຸກຄົນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນພຣະອະຣະຫັນຕະຂີນາສົບ ນີ້ຮຽກວ່າ ອັບປະເມີຍຍະບຸກຄົນ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ ມີຜາກົດຢູ່ໃນໂລກ

**ອັບປະເມີຍຍະສູດທີ ໓ ຈົບ**

## ໔. ອາເນນຊະສູດ

## ວ່າດ້ວຍທຳອັນບໍ່ຫວັ່ນໄຫວ

[໑໑໗] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກ ພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ ບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດບໍ່ມີບ່ອນສຸດ" ຢູ່ ຍ້ອນລ່ວງຣູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ເຂົາພໍໃຈຊານນັ້ນ ຕິດໃຈຊານນັ້ນແລະເຖິງຄວາມດີໃຈກັບຊານນັ້ນ ເຂົາດຳລົງຢູ່ໃນຊານນັ້ນ ນ້ອມໃຈໄປໃນຊານນັ້ນ ມັກຢູ່ກັບຊານນັ້ນສ່ວນຫຼາຍບໍ່ເສື່ອມ ຫຼັງຈາກຕາຍແລ້ວເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາພວກທີ່ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະ ພວກເທວະດາທີ່ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະ ມີອາຍຸປະມານ ໒໐,໐໐໐ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນອາກາສານັນຈາຍະຕະນະນັ້ນຈົນສິ້ນສຸດອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຮົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນອາກາສານັນຈາຍະຕະນະນັ້ນຈົນສິ້ນສຸດອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບພານໃນພົບນັ້ນແລ ນີ້ແລ ເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນ ລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິ (ການຕາຍ) ແລະອຸບັດ (ການເກີດ) ຍັງມີຢູ່

໒. ບຸກຄົນລາງຄົນໃນໂລກນີ້ ລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານບໍ່ມີບ່ອນສຸດ" ຢູ່ ເຂົາພໍໃຈຊານນັ້ນ ຕິດໃຈຊານນັ້ນ ແລະເຖິງຄວາມດີໃຈກັບຊານນັ້ນ ເຂົາດຳລົງຢູ່ໃນຊານນັ້ນ ນ້ອມໃຈໄປໃນຊານນັ້ນ ມັກຢູ່ກັບຊານນັ້ນສ່ວນຫຼາຍບໍ່ເສື່ອມ ຫຼັງຈາກຕາຍແລ້ວເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາພວກທີ່ເຂົ້າເຖິງຊັ້ນວິນຍານັນຈາຍະຕະນະ ເທວະດາພວກທີ່ເຂົ້າເຖິງຊັ້ນວິນຍານັນຈາຍະຕະນະມີອາຍຸປະມານ ໔໐,໐໐໐ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນວິນຍານັນຈາຍະຕະນະ

ນັ້ນຈົນສິ້ນສຸດອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຮົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນວິນຍານັນຈາຍະຕະນະນັ້ນຈົນສິ້ນສຸດອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບພານໃນພົບນັ້ນແລ ນີ້ແລ ເປັນຄວາມແປກກັນເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

໔. ບຸກຄົນລາງຄົນໃນໂລກນີ້ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ເຂົາພໍໃຈຊານນັ້ນ ຕິດໃຈຊານນັ້ນ ແລະເຖິງຄວາມດີໃຈກັບຊານນັ້ນ ເຂົາດຳລົງຢູ່ໃນຊານນັ້ນ ນ້ອມໃຈໄປໃນຊານນັ້ນ ມັກຢູ່ກັບຊານນັ້ນສ່ວນຫຼາຍ ບໍ່ເສື່ອມ ຫຼັງຈາກຕາຍແລ້ວເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາພວກທີ່ເຂົ້າເຖິງຊັ້ນອາກິນຈັນຍາຍະຕະນະ ເທວະດາທັງຫຼາຍພວກທີ່ເຂົ້າເຖິງຊັ້ນອາກິນຈັນຍາຍະຕະນະ ມີອາຍຸປະມານ ໖໐,໐໐໐ ກັບ ຄົນທີ່ເປັນປຸຖຸຊົນດຳລົງຢູ່ໃນຊັ້ນອາກິນຈັນຍາຍະຕະນະນັ້ນຈົນສິ້ນສຸດອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວໄປສູ່ນະຮົກແດ່ ໄປສູ່ກຳເນີດສັດເດຍຣັດສານແດ່ ໄປສູ່ແດນເຜດແດ່ ສ່ວນສາວົກຂອງພຣະຜູ້ມີພຣະພາກເຈົ້າດຳລົງຢູ່ໃນຊັ້ນອາກິນຈັນຍາຍະຕະນະນັ້ນຈົນສິ້ນສຸດອາຍຸ ໃຫ້ໄລຍະເວລາທີ່ເປັນກຳນົດອາຍຸຂອງເທວະດາເຫຼົ່ານັ້ນໝົດໄປແລ້ວປະຣິນິບພານໃນພົບນັ້ນແລ ນີ້ແລ ເປັນຄວາມແປກກັນເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ ເມື່ອຄະຕິແລະອຸບັດຍັງມີຢູ່

ພິກຂຸທັງຫຼາຍ ບຸກຄົນ ໔ ຈຳພວກນີ້ແລມີຜາກົດຢູ່ໃນໂລກ

**ອາເນນຊະສູດ ທີ ໔ ຈົບ**

# ໕. ວິປັດຕິສຳປະທາສູດ

## ວ່າດ້ວຍວິບັດ ແລະສຳປະທາ

[໑໑໗] ພິກຂຸທັງຫຼາຍ ວິບັດ ໔ ປະການນີ້

ວິບັດ ໔ ປະການ ອັນໃດແດ່ ຄື

໑. ສີລະວິບັດ (ຄວາມວິບັດແຫ່ງສີນ)
໒. ຈິດຕະວິບັດ (ຄວາມວິບັດແຫ່ງຈິດ)

๓. ທິດຖິວິບັດ (ຄວາມວິບັດແຫ່ງທິດຖິ)

ສີລະວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ນີ້ຮຽກວ່າ ສີລະວິບັດ

ຈິດຕະວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນມິດສາທິດຖິ (ເຫັນຜິດ) ມີຈິດພະຍາບາດ ນີ້ຮຽກວ່າ ຈິດຕະວິບັດ

ທິດຖິວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊັ່ນສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີ ແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ" ນີ້ຮຽກວ່າ ທິດຖິວິບັດ

ຍ້ອນສີລະວິບັດເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນຈິດຕະວິບັດເປັນເຫດ ສັດທັງຫຼາຍ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຫຼື ຍ້ອນທິດຖິວິບັດເປັນເຫດ ສັດທັງຫຼາຍ ຫຼັງຈາກຕາຍແລ້ວຈຶ່ງໄປເກີດ ອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ວິບັດ ๓ ປະການນີ້ແລ

ສຳປະທາ ๓ ປະການນີ້

ສຳປະທາ ๓ ປະການ ອັນໃດແດ່ ຄື

໑. ສີລະສຳປະທາ (ຄວາມເຖິງພ້ອມດ້ວຍສິນ)
໒. ຈິດຕະສຳປະທາ (ຄວາມເຖິງພ້ອມດ້ວຍຈິດ)
๓. ທິດຖິສຳປະທາ (ຄວາມເຖິງພ້ອມດ້ວຍທິດຖິ)

ສີລະສຳປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເວັ້ນຂາດຈາກການຂ້າສັດ ການລັກຊັບ ການປະພຶດຜິດໃນກາມ ການເວົ້າຕົວະ ການເວົ້າສັບສໍ່ ການເວົ້າຄໍາຫຍາບ ແລະການເວົ້າບໍ່ມີສາຣະ ນີ້ຮຽກວ່າ ສີລະສໍາປະທາ

ຈິດຕະສໍາປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ເພ່ງເລັງຍາກໄດ້ຂອງເຂົາ ບໍ່ມີຈິດພະຍາບາດ ນີ້ຮຽກວ່າ ຈິດຕະສໍາປະທາ

ທິດຖິສໍາປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນສໍາມາທິດຖິ (ເຫັນຖືກ) ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊັ່ນສວງມີຜົນ ຜົນວິບາກແຫ່ງກໍາທີ່ເຮັດໄວ້ດີແລະຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ" ນີ້ຮຽກວ່າ ທິດຖິສໍາປະທາ

ຍ້ອນສີລະສໍາປະທາເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນຈິດຕະສໍາປະທາເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ຫຼືຍ້ອນທິດຖິສໍາປະທາເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ສໍາປະທາ ໓ ປະການນີ້ແລ

**ວິປັດຕິສໍາປະທາສູດ ທີ ໕ ຈົບ**

## ໖. ອະປັນນະກະສູດ

## ວ່າດ້ວຍຂໍ້ປະຕິບັດບໍ່ຜິດ

[໑໑໗] ພິກຂຸທັງຫຼາຍ ວິບັດ ໓ ປະການນີ້

ວິບັດ ໓ ປະການ ອັນໃດແດ່ ຄື

໑. ສີລະວິບັດ (ຄວາມວິບັດແຫ່ງສີນ)

໒. ຈິດຕະວິບັດ (ຄວາມວິບັດແຫ່ງຈິດ)
໓. ທິດຖິວິບັດ (ຄວາມວິບັດແຫ່ງທິດຖິ)

ສີລະວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ຯລຯ ເວົ້າບໍ່ມີສາຣະ ນີ້ຮຽກວ່າ ສີລະວິບັດ

ຈິດຕະວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເພ່ງເລັງຢາກໄດ້ຂອງເຂົາ ມີຈິດພະຍາບາດ ນີ້ຮຽກວ່າ ຈິດຕະວິບັດ

ທິດຖິວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ “ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ຯລຯ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າ ດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ” ນີ້ຮຽກວ່າ ທິດຖິວິບັດ

ຍ້ອນສີລະວິບັດເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ຍ້ອນຈິດຕະວິບັດເປັນເຫດ ຯລຯ ຫຼື ຍ້ອນທິດຖິວິບັດເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ຍ້ອນສີນວິບັດເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ປຽບຄື ແກ້ວມະນີທີ່ກທ່ຽມຖືກໂຍນຂຶ້ນສູງກໍກັບລົງມາຕັ້ງຢູ່ດ້ວຍດີຕາມປົກກະຕິສັນນັ້ນ

ພິກຂຸທັງຫຼາຍ ວິບັດ ໓ ປະການນີ້ແລ

ສໍາປະທາ ໓ ປະການນີ້

ສໍາປະທາ ໓ ປະການ ອັນໃດແດ່ ຄື

໑. ສີລະສໍາປະທາ (ຄວາມເຖິງພ້ອມດ້ວຍສີນ)
໒. ຈິດຕະສໍາປະທາ (ຄວາມເຖິງພ້ອມດ້ວຍຈິດ)
໓. ທິດຖິສໍາປະທາ (ຄວາມເຖິງພ້ອມດ້ວຍທິດຖິ)

ສີລະສຳປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເວັ້ນຂາດຈາກການຂ້າສັດ ຯລຯ ການເວົ້າບໍ່ມີສາຣະ ນີ້ຮຽກວ່າ ສີລະສຳປະທາ

ຈິດຕະສຳປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ບໍ່ມີຈິດພະຍາບາດ ນີ້ຮຽກວ່າ ຈິດຕະສຳປະທາ

ທິດຖິສຳປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນສຳມາທິດຖິ ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ຯລຯ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ" ນີ້ຮຽກວ່າ ທິດຖິສຳປະທາ

ຍ້ອນສີລະສຳປະທາເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ຍ້ອນຈິດຕະສຳປະທາເປັນເຫດ ຯລຯ ຫຼື ຍ້ອນທິດຖິສຳປະທາເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ຍ້ອນສີລະສຳປະທາເປັນເຫດ ສັດທັງຫຼາຍຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ ປຽບຄື ແກ້ວມະນີທີ່ກຫ່ຽມຖືກໂຍນຂຶ້ນສູງກໍກັບລົງມາຕັ້ງຢູ່ດ້ວຍດີຕາມປົກກະຕິສັນນັ້ນ

ພິກຂຸທັງຫຼາຍ ສຳປະທາ ໓ ປະການນີ້ແລ

**ອະປັນນະກະສູດທີ ໖ ຈົບ**

## ໗. ກຳມັນຕະສູດ

## ວ່າດ້ວຍຄວາມວິບັດແຫ່ງການງານ

[໑໘໐] ພິກຂຸທັງຫຼາຍ ວິບັດ ໓ ປະການນີ້

ວິບັດ ໓ ປະການ ອັນໃດແດ່ ຄື

໑. ກຳມັນຕະວິບັດ (ຄວາມວິບັດແຫ່ງການງານ)
໒. ອາຊີວະວິບັດ (ຄວາມວິບັດແຫ່ງອາຊີບ)
໓. ທິດຖິວິບັດ (ຄວາມວິບັດແຫ່ງທິດຖິ)

ກຳມັນຕະວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ໆລໆ ເວົ້າບໍ່ມີສາຣະ ນີ້ຮຽກວ່າ ກຳມັນຕະວິບັດ

ອາຊີວະວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ມີອາຊີບຜິດ ລ້ຽງຊີບດ້ວຍມິດສາອາຊີວະ (ລ້ຽງຊີບຜິດ) ນີ້ຮຽກວ່າ ອາຊີວະວິບັດ

ທິດຖິວິບັດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ “ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ໆລໆ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ” ນີ້ຮຽກວ່າ ທິດຖິວິບັດ

ພິກຂຸທັງຫຼາຍ ວິບັດ ໓ ປະການນີ້ແລ

ສຳປະທາ ໓ ປະການນີ້

ສຳປະທາ ໓ ປະການ ອັນໃດແດ່ ຄື

໑. ກຳມັນຕະສຳປະທາ (ຄວາມເຖິງພ້ອມດ້ວຍການງານ)
໒. ອາຊີວະສຳປະທາ (ຄວາມເຖິງພ້ອມດ້ວຍອາຊີບ)
໓. ທິດຖິສຳປະທາ (ຄວາມເຖິງພ້ອມດ້ວຍທິດຖິ)

ກຳມັນຕະສຳປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເວັ້ນຂາດຈາກການຂ້າສັດ ໆລໆ ການເວົ້າບໍ່ມີສາຣະ ນີ້ຮຽກວ່າ ກຳມັນຕະສຳປະທາ

ອາຊີວະສຳປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີອາຊີບຖືກຕ້ອງຕາມທຳ ລ້ຽງຊີບດ້ວຍສຳມາອາຊີວະ (ລ້ຽງຊີວິດຖືກຕ້ອງຕາມທຳ) ນີ້ຮຽກວ່າ ອາຊີວະສຳປະທາ

ທິດຖິສຳປະທາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນສຳມາທິດຖິ ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ຯລຯ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ" ນີ້ຮຽກວ່າ ທິດຖິສຳປະທາ

ພິກຂຸທັງຫຼາຍ ສຳປະທາ ໓ ປະການນີ້ແລ

**ກຳມັນຕະສູດທີ ໗ ຈົບ**

## ໘. ປະຖົມໂສເຈີຍຍະສູດ

## ວ່າດ້ວຍຄວາມສະອາດສູດ ທີ ໑

[໑໔໑] ພິກຂຸທັງຫຼາຍ ຄວາມສະອາດ ໓ ປະການນີ້

ຄວາມສະອາດ ໓ ປະການ ອັນໃດແດ່ ຄື

໑. ຄວາມສະອາດກາຍ

໔. ຄວາມສະອາດວາຈາ

໓. ຄວາມສະອາດໃຈ

ຄວາມສະອາດກາຍ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເວັ້ນຂາດຈາກການຂ້າສັດ ການລັກຊັບ ການປະພຶດຜິດໃນກາມ ນີ້ຮຽກວ່າ ຄວາມສະອາດກາຍ

ຄວາມສະອາດວາຈາ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເວັ້ນຂາດຈາກການເວົ້າຕົວະ ການເວົ້າສັບສໍ່ ການເວົ້າຄຳຫຍາບ ການເວົ້າບໍ່ມີສາຣະ ນີ້ຮຽກວ່າ ຄວາມສະອາດວາຈາ

ຄວາມສະອາດໃຈ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ເປັນຜູ້ໂລບຫຼາຍ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ນີ້ຮຽກວ່າ ຄວາມສະອາດໃຈ

ພິກຂຸທັງຫຼາຍ ຄວາມສະອາດ ໓ ປະການນີ້ແລ

**ປະຖົມໂສເຈີຍະສູດທີ ໗ ຈົບ**

# ໘. ທຸຕິຍະໂສເຈີຍະສູດ

## ວ່າດ້ວຍຄວາມສະອາດສູດທີ ໒

[໑໒໒] ພິກຂຸທັງຫຼາຍ ຄວາມສະອາດ ໓ ປະການນີ້

ຄວາມສະອາດ ໓ ປະການ ອັນໃດແດ່ ຄື

໑. ຄວາມສະອາດກາຍ
໒. ຄວາມສະອາດວາຈາ
໓. ຄວາມສະອາດໃຈ

ຄວາມສະອາດກາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເວັ້ນຂາດຈາກການຂ້າສັດ ການລັກຊັບ ການປະພຶດບໍ່ປະເສີດນີ້ ຮຽກວ່າ ຄວາມສະອາດກາຍ

ຄວາມສະອາດວາຈາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເວັ້ນຂາດຈາກການເວົ້າຕົວະ ການເວົ້າສັບສໍ່ ການເວົ້າຄຳຫຍາບ ການເວົ້າບໍ່ມີສາຣະ ນີ້ຮຽກວ່າ ຄວາມສະອາດວາຈາ

ຄວາມສະອາດໃຈ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຮູ້ແຈ້ງກາມສັນທະ (ຄວາມພໍໃຈໃນກາມ) ທີ່ມີໃນພາຍໃນວ່າ "ກາມສັນທະມີໃນພາຍໃນຂອງເຮົາ" ຫຼື ຮູ້ແຈ້ງກາມສັນທະທີ່ບໍ່ມີໃນພາຍໃນວ່າ "ກາມສັນທະບໍ່ມີໃນພາຍໃນຂອງເຮົາ" ຮູ້ແຈ້ງເຖິງການເກີດຂຶ້ນແຫ່ງກາມສັນທະທີ່ຍັງບໍ່ເກີດຂຶ້ນ ຮູ້ແຈ້ງເຖິງການລະກາມສັນທະທີ່ເກີດຂຶ້ນແລ້ວ ແລະຮູ້ແຈ້ງເຖິງການບໍ່ເກີດຂຶ້ນຕໍ່ໄປຂອງກາມສັນທະທີ່ລະໄດ້ແລ້ວ ຮູ້ແຈ້ງພະຍາບາດ (ຄວາມຄິດຮ້າຍ) ທີ່ມີໃນພາຍໃນວ່າ "ພະຍາບາດມີໃນພາຍໃນຂອງເຮົາ" ຫຼື ຮູ້ແຈ້ງ ພະຍາບາດທີ່ບໍ່ມີໃນພາຍໃນກໍຮູ້ແຈ້ງວ່າ "ພະຍາບາດບໍ່ມີໃນພາຍໃນຂອງເຮົາ" ຮູ້ແຈ້ງເຖິງການເກີດຂຶ້ນແຫ່ງພະຍາບາດທີ່ຍັງບໍ່ເກີດຂຶ້ນ ຮູ້ແຈ້ງເຖິງການລະພະຍາບາດທີ່ເກີດຂຶ້ນແລ້ວ ແລະຮູ້ແຈ້ງເຖິງການບໍ່ເກີດຂຶ້ນຕໍ່ໄປແຫ່ງພະຍາບາດທີ່ລະໄດ້ແລ້ວ ຮູ້ແຈ້ງຖີນະມິດທະ

(ຄວາມຫົດຫູ່ແລະງ່ວມເຫງົາ) ທີ່ມີໃນພາຍໃນວ່າ "ຖີນະມິດທະມີໃນພາຍໃນຂອງເຮົາ" ຫຼືຮູ້ແຈ້ງຖີນະມິດທະບໍ່ມີໃນພາຍໃນວ່າ "ຖີນະມິດທະບໍ່ມີໃນພາຍໃນຂອງເຮົາ" ຮູ້ແຈ້ງເຖິງການເກີດຂຶ້ນແຫ່ງຖີນະມິດທະທີ່ຍັງບໍ່ເກີດຂຶ້ນ ຮູ້ແຈ້ງເຖິງການລະຖີນະມິດທະທີ່ເກີດຂຶ້ນແລ້ວ ແລະຮູ້ແຈ້ງເຖິງການບໍ່ເກີດຂຶ້ນຕໍ່ໄປແຫ່ງຖີນະມິດທະທີ່ລະໄດ້ແລ້ວ ຮູ້ແຈ້ງອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) ທີ່ມີໃນພາຍໃນວ່າ "ອຸດທັດຈະກຸກກຸດຈະ ມີໃນພາຍໃນຂອງເຮົາ" ຫຼືຮູ້ແຈ້ງອຸດທັດຈະກຸກກຸດຈະທີ່ບໍ່ມີໃນພາຍໃນວ່າ "ອຸດທັດຈະກຸກກຸດຈະບໍ່ມີໃນພາຍໃນ" ຮູ້ແຈ້ງເຖິງການເກີດຂຶ້ນແຫ່ງອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດຂຶ້ນ ຮູ້ແຈ້ງເຖິງການລະອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວ ແລະຮູ້ແຈ້ງເຖິງການບໍ່ເກີດຂຶ້ນຕໍ່ໄປແຫ່ງ ອຸດທັດຈະກຸກກຸດຈະທີ່ລະໄດ້ແລ້ວ ຮູ້ແຈ້ງວິຈິກິດສາ (ຄວາມລັງເລສົງໄສ) ມີໃນພາຍໃນວ່າ "ວິຈິກິດສາມີໃນພາຍໃນຂອງເຮົາ" ຫຼື ຮູ້ແຈ້ງວິຈິກິດສາທີ່ບໍ່ມີໃນພາຍໃນວ່າ "ວິຈິກິດສາບໍ່ມີໃນພາຍໃນຂອງເຮົາ" ຮູ້ແຈ້ງເຖິງການເກີດຂຶ້ນແຫ່ງວິຈິກິດສາທີ່ຍັງບໍ່ເກີດຂຶ້ນ ຮູ້ແຈ້ງເຖິງການລະວິຈິກິດສາທີ່ເກີດຂຶ້ນແລ້ວ ແລະຮູ້ແຈ້ງເຖິງການບໍ່ເກີດຂຶ້ນຕໍ່ໄປແຫ່ງວິຈິກິດສາທີ່ລະໄດ້ແລ້ວ ນີ້ຮຽກວ່າ ຄວາມສະອາດໃຈ

ພິກຂຸທັງຫຼາຍ ຄວາມສະອາດ ໓ ປະການນີ້ແລ

ຜູ້ມີກາຍສະອາດ ມີວາຈາສະອາດ
ມີໃຈສະອາດ ບໍ່ມີອາສະວະ
ເປັນຜູ້ສະອາດ ເຖິງພ້ອມດ້ວຍຄວາມສະອາດ
ບັນດິດທັງຫຼາຍຮຽກວ່າເປັນຜູ້ລ້າງບາບໄດ້ແລ້ວ

**ທຸຕິຍະໂສເຈີຍຍະສູດທີ ໙ ຈົບ**

## ໑໐. ໂມເນີຍຍະສູດ

## ວ່າດ້ວຍຄວາມເປັນມຸນີ

[໑໒໓] ພິກຂຸທັງຫຼາຍ ຄວາມເປັນມຸນີ ໓ ປະການນີ້

ຄວາມເປັນມຸນີ ໓ ປະການ ອັນໃດແດ່ ຄື

໑. ຄວາມເປັນມຸນີທາງ ກາຍ
໒. ຄວາມເປັນມຸນີທາງ ວາຈາ
໓. ຄວາມເປັນມຸນີທາງ ໃຈ

ຄວາມເປັນມຸນີທາງກາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເວັ້ນຂາດຈາກການຂ້າສັດ ການລັກຊັບ ການປະພຶດບໍ່ປະເສີດ ນີ້ຮຽກວ່າ ຄວາມເປັນມຸນີທາງກາຍ

ຄວາມເປັນມຸນີທາງວາຈາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເວັ້ນຂາດຈາກການເວົ້າຕົວະ ການເວົ້າສັບສໍ່ ການເວົ້າ ຄຳຫຍາບ ການເວົ້າບໍ່ມີສາຣະ ນີ້ຮຽກວ່າ ຄວາມເປັນມຸນີທາງວາຈາ

ຄວາມເປັນມຸນີທາງໃຈ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ຮຽກວ່າ ຄວາມເປັນມຸນີທາງໃຈ

ພິກຂຸທັງຫຼາຍ ຄວາມເປັນມຸນີ ໓ ປະການນີ້ແລ

ຜູ້ທີ່ເປັນມຸນີທາງກາຍ ເປັນມຸນີທາງວາຈາ
ເປັນມຸນີທາງໃຈ ບໍ່ມີອາສະວະ
ເປັນມຸນີ ເຖິງພ້ອມດ້ວຍຄວາມເປັນມຸນີ
ບັນດິດທັງຫຼາຍຮຽກວ່າເປັນຜູ້ລະໄດ້ທຸກຢ່າງ

**ໂມເນີຍຍະສູດທີ ໑໐ ຈົບ**

**ອາປາຍິກະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

# ໓. ກຸສິນາຣະວັກ

## ໝວດວ່າດ້ວຍນະຄອນກຸສິນາຣາ

## ໑. ກຸສິນາຣະສູດ

## ວ່າດ້ວຍພຣະທຳມະເທດສະໜາທີ່ນະຄອນກຸສິນາຣາ

[໑໘໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າຊື່ພະລິຫະຣະນະ ເຂດນະຄອນກຸສິນາຣາໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ

ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເຂົ້າໄປອາໄສໝູ່ບ້ານ ຫຼື ເຂດແຫ່ງໃດແຫ່ງໜຶ່ງຢູ່ ຄະຫະບໍດີ ຫຼື ບຸດຂອງຄະຫະບໍດີເຂົ້າໄປຫາພິກຂຸນັ້ນ ນິມົນສັນໃນມື້ອື່ນເຊົ້າ ພິກຂຸເມື່ອປະສົງກໍຮັບນິມົນ ພິກຂຸນັ້ນ ພໍລ່ວງຣາຕີນັ້ນໄປ ເວລາເຊົ້າ ຄອງອັນຕະຣະວາສົກ ຖືບາດຈີວອນເຂົ້າໄປສູ່ນິເວດຂອງຄະຫະບໍດີ ຫຼື ບຸດຂອງຄະຫະບໍດີ ນັ່ງເທິງອາສະນະທີ່ເຂົາປູໄວ້ ຄະຫະບໍດີຫຼືບຸດຂອງຄະຫະບໍດີນັ້ນ ຖວາຍອາຫານໃຫ້ພິກຂຸນັ້ນ ອີ່ມໜຳດ້ວຍຂອງຫຍໍ້າຂອງສັນທີ່ປະນີດດ້ວຍມືຂອງຕົນເອງ

ພິກຂຸນັ້ນມີຄວາມຄິດແນວນີ້ວ່າ “ດີແທ້ ຄະຫະບໍດີ ຫຼື ບຸດຂອງຄະຫະບໍດີນີ້ຖວາຍອາຫານ ໃຫ້ເຮົາອີ່ມໜຳດ້ວຍຂອງຫຍໍ້າຂອງສັນທີ່ປະນີດດ້ວຍມືຕົນເອງ” ທ່ານຍັງມີຄວາມຄິດແນວນີ້ອີກວ່າ “ໂອນໍ ຄະຫະບໍດີ ຫຼື ບຸດຂອງຄະຫະບໍດີນີ້ ເພິ່ງຖວາຍອາຫານໃຫ້ເຮົາອີ່ມໜຳດ້ວຍຂອງຫຍໍ້າຂອງສັນ ທີ່ປະນີດແນວນີ້ດ້ວຍມືຕົນເອງແມ່ນຕໍ່ ໆ ໄປ” ທ່ານຕິດໃຈ ລຸ້ມຫຼົງໝົກມຸ້ນ ແນມບໍ່ເຫັນໂທດ ບໍ່ມີປັນຍາເປັນເຄື່ອງສະບັດອອກ ສັນບິນທະບາດນັ້ນ ທ່ານນຶກເຖິງການວິຕົກ (ຄວາມນຶກໃນທາງການ) ແດ່ ນຶກເຖິງພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ) ແດ່ ນຶກເຖິງວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ) ແດ່

ພິກຂຸທັງຫຼາຍ ບິນທະບາດທີ່ຖວາຍແກ່ພິກຂຸແນວນີ້ ເຮົາບໍ່ກ່າວວ່າມີຜົນຫຼາຍ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພິກຂຸເປັນຜູ້ຜະໝາດຢູ່

ສ່ວນພິກຂຸໃນທຳວິໄນນີ້ ເຂົ້າໄປອາໄສເຮືອນ ຫຼື ເຂດແຫ່ງໃດແຫ່ງໜຶ່ງຢູ່ ຄະຫະບໍດີຫຼືບຸດຂອງຄະຫະບໍດີເຂົ້າໄປຫາພິກຂຸນັ້ນ ນິມົນສັນໃນມື້ອື່ນເຊົ້າ ພິກຂຸເມື່ອປະສົງກໍຮັບນິມົນ ພິກຂຸ

ນັ້ນພໍລ່ວງຣາຕີນັ້ນໄປ ເວລາເຊົ້າ ຄອງອັນຕະຣະວາສົກ ຖືບາດຈີວອນເຂົ້າໄປສູ່ນິເວດຂອງຄະຫະບໍດີຫຼືບຸດຂອງຄະຫະບໍດີນັ້ນ ນັ່ງເທິງອາສະນະທີ່ເຂົາປູໄວ້ ຄະຫະບໍດີຫຼືບຸດຂອງຄະຫະບໍດີນັ້ນຖວາຍອາຫານໃຫ້ພິກຂຸນັ້ນ ອີ່ມໜຳດ້ວຍຂອງຫຍໍ້າຂອງສັນທີ່ປະນິດດ້ວຍມືຕົນເອງ

ພິກຂຸນັ້ນ ບໍ່ມີຄວາມຄິດແນວນີ້ວ່າ "ດີແທ້ ຄະຫະບໍດີຫຼືບຸດຂອງຄະຫະບໍດີນີ້ຖວາຍອາຫານໃຫ້ເຮົາອີ່ມໜຳດ້ວຍຂອງຫຍໍ້າຂອງສັນທີ່ປະນິດດ້ວຍມືຕົນເອງ" ແລະທ່ານບໍ່ມີຄວາມຄິດແນວນີ້ວ່າ "ໂອນໍ ຄະຫະບໍດີ ຫຼື ບຸດຂອງຄະຫະບໍດີນີ້ ເພິ່ງຖວາຍອາຫານໃຫ້ເຮົາອີ່ມໜຳດ້ວຍຂອງຫຍໍ້າຂອງສັນ ທີ່ປະນິດດ້ວຍມືຕົນເອງແມ່ນຕໍ່ ໆ ໄປ" ທ່ານບໍ່ຕິດໃຈ ບໍ່ມົວເມົາບໍ່ໝົກມຸ້ນ ແນມເຫັນໂທດ ມີປັນຍາເປັນເຄື່ອງສະບັດອອກສັນບິນທະບາດນັ້ນ ທ່ານນຶກເຖິງເນກຂຳມະວິຕົກ (ຄວາມນຶກປອດຈາກກາມ) ແດ່ ນຶກເຖິງອະພະຍາບາດວິຕົກ (ຄວາມນຶກປອດຈາກພະຍາບາດ)ແດ່ ນຶກເຖິງອະວິຫິງສາວິຕົກ (ຄວາມນຶກປອດຈາກການບຽດບຽນ) ແດ່ ພິກຂຸທັງຫຼາຍ ບິນທະບາດທີ່ຖວາຍແກ່ພິກຂຸແນວນີ້ເຮົາຮຽກວ່າມີຜົນຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພິກຂຸເປັນຜູ້ບໍ່ຜະໝາດຢູ່

**ກຸສິນາຣະສູດ ທີ ໑ ຈົບ**

## ໔. ພັນທະນະສູດ

## ວ່າດ້ວຍເຫດແຫ່ງຄວາມໝາງໃຈ

[໑໘໕] ພິກຂຸທັງຫຼາຍ ໃນທິດໃດ ພິກຂຸທັງຫຼາຍ ເກີດຄວາມໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ທິດນັ້ນແມ່ນພຽງຄິດກໍບໍ່ເປັນບ່ອນສຸກສະບາຍແກ່ເຮົາ ບໍ່ຈຳເປັນຕ້ອງເວົ້າເຖິງການໄປ ໃນເລື້ອງນີ້ ເຮົາສັນນິດຖານໄດ້ວ່າ ທ່ານເຫຼົ່ານັ້ນໄດ້ລະທຳ ໓ ປະການ ຄຸກຄີຢູ່ກັບທຳ ໓ ປະການຢ່າງແນ່ນອນ

ທ່ານເຫຼົ່ານັ້ນໄດ້ລະທຳ ໓ ປະການ ອັນໃດແດ່ ຄື

໑. ເນກຂຳມະວິຕົກ (ຄວາມນຶກປອດຈາກກາມ)
໔. ອະພະຍາບາດວິຕົກ (ຄວາມນຶກປອດຈາກພະຍາບາດ)
໓. ອະວິຫິງສາວິຕົກ (ຄວາມນຶກປອດຈາກການບຽດບຽນ)

ທ່ານເຫຼົ່ານັ້ນໄດ້ລະທຳ ໓ ປະການນີ້

ທ່ານເຫຼົ່ານັ້ນ ຄຸກຄີຢູ່ກັບທຳ ໓ ປະການ ອັນໃດແດ່ ຄື

໑. ກາມວິຕົກ (ຄວາມນຶກໃນທາງກາມ)
໒. ພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ)
໓. ວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ)

ທ່ານເຫຼົ່ານັ້ນຄຸກຄີຢູ່ກັບທຳ ໓ ປະການນີ້

ພິກຂຸທັງຫຼາຍ ໃນທິດໃດ ພິກຂຸທັງຫຼາຍເກີດຄວາມໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ ທິດນັ້ນ ແມ່ນພຽງຄິດກໍບໍ່ເປັນບ່ອນສຸກສະບາຍແກ່ເຮົາ ບໍ່ຈຳເປັນຕ້ອງເວົ້າເຖິງການໄປ ໃນເລື້ອງນີ້ເຮົາສັນນິດຖານໄດ້ວ່າ ທ່ານເຫຼົ່ານັ້ນໄດ້ລະທຳ ໓ ປະການຄຸກຄີຢູ່ກັບທຳ ໓ ປະການຢ່າງແນ່ນອນ

ໃນທິດໃດ ພິກຂຸທັງຫຼາຍພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄືນ້ຳນົມກັບນ້ຳເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ທິດນັ້ນ ແມ່ນໄປຍາມກໍເປັນບ່ອນສຸກສະບາຍແກ່ເຮົາ ບໍ່ຈຳເປັນຕ້ອງເວົ້າເຖິງການຄິດ ໃນເລື້ອງນີ້ເຮົາສັນນິດຖານໄດ້ວ່າ ທ່ານເຫຼົ່ານັ້ນ ໄດ້ລະທຳ ໓ ປະການ ຄຸກຄີຢູ່ກັບທຳ ໓ ປະການຢ່າງແນ່ນອນ

ທ່ານເຫຼົ່ານັ້ນໄດ້ລະທຳ ໓ ປະການ ອັນໃດແດ່ ຄື

໑. ກາມວິຕົກ
໒. ພະຍາບາດວິຕົກ
໓. ວິຫິງສາວິຕົກ

ທ່ານເຫຼົ່ານັ້ນຄຸກຄີຢູ່ກັບທຳ ໓ ປະການ ອັນໃດແດ່ ຄື

໑. ເນກຂຳມະວິຕົກ
໒. ອະພະຍາບາດວິຕົກ
໓. ອະວິຫິງສາວິຕົກ

ທ່ານເຫຼົ່ານັ້ນຄຸກຄີຢູ່ກັບທຳ ໓ ປະການນີ້

ໃນທິດໃດ ພິກຂຸທັງຫຼາຍ ພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄືນ້ຳນົມກັບນ້ຳເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່ ທິດນັ້ນ ແມ່ນໄປຍາມກໍເປັນບ່ອນສຸກສະບາຍແກ່ເຮົາ ບໍ່ຈຳເປັນຕ້ອງເວົ້າເຖິງການຄິດ ໃນເລື້ອງນີ້ເຮົາສັນນິດຖານໄດ້ວ່າ ທ່ານເຫຼົ່ານັ້ນ ໄດ້ລະທຳ ໓ ປະການນີ້ຄຸກຄີຢູ່ກັບທຳ ໓ ປະການນີ້ຢ່າງແນ່ນອນ

**ພັນທະນະສູດ ທີ ໒ ຈົບ**

## ໓. ໂຄຕະມະກະເຈຕິຍະສູດ

### ວ່າດ້ວຍພຣະທຳມະເທດສະໜາທີ່ໂຄຕະມະກະເຈດີ

[໑໒໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໂຄຕະມະກະເຈດີ ເຂດນະຄອນເວສາລີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ເຮົາຮູ້ຍິ່ງແລ້ວ໌ຈຶ່ງສະແດງທຳ ບໍ່ຮູ້ຍິ່ງແລ້ວ ບໍ່ສະແດງທຳ ເຮົາສະແດງທຳມີເຫດ ບໍ່ແມ່ນສະແດງທຳບໍ່ມີເຫດ ເຮົາສະແດງທຳມີປາຕິຫານ ບໍ່ແມ່ນສະແດງທຳບໍ່ມີປາຕິຫານ ເມື່ອເຮົານັ້ນ ຮູ້ຍິ່ງແລ້ວ ຈຶ່ງສະແດງທຳ ບໍ່ຮູ້ຍິ່ງແລ້ວ ບໍ່ສະແດງທຳ ສະແດງທຳມີເຫດ ບໍ່ແມ່ນສະແດງທຳບໍ່ມີເຫດ ສະແດງທຳມີປາຕິຫານ ບໍ່ແມ່ນສະແດງທຳບໍ່ມີປາຕິຫານ ທ່ານທັງຫຼາຍຄວນເຮັດຕາມຄຳສັ່ງສອນ ຄວນເຮັດຕາມຄຳພ່ຳສອນ ກໍແລ ທ່ານທັງຫຼາຍຄວນທີ່ຈະຍິນດີຄວນທີ່ຈະຊົມຊື່ນ ຄວນທີ່ຈະໂສມະນັດວ່າ "ພຣະຜູ້ມີພຣະພາກເຈົ້າ ເປັນຜູ້ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງເປັນຜູ້ປະຕິບັດດີແລ້ວ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນ ມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດໄວຍາກອນພາສິດນີ້ຢູ່ ພັນໂລກກະທາດໄດ້ຫວັ່ນໄຫວສັ່ນສະເທືອນແລ້ວ

**ໂຄຕະມະກະເຈຕິຍະສູດທີ ໓ ຈົບ**

## ໔. ພະຣັນຖຸກາລາມະສູດ

### ວ່າດ້ວຍພະຣັນຖຸດາບົດກາລາມະໂຄດ

[໑໒໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ສະເດັດຈາຣິກໄປໃນແຄວ້ນໂກສົນ ສະເດັດເຖິງນະຄອນກະບິລະພັດ ເຈົ້າມະຫານາມສາກະຍະໄດ້ຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າສະເດັດເຖິງ ເມືອງກະບິລະພັດ ໂດຍລຳດັບແລ້ວ" ຄັ້ງນັ້ນ ເຈົ້າມະຫານາມສາກະຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບເຈົ້າມະຫານາມສາກະຍະ ດັ່ງນີ້ ວ່າ

ມະຫານາມ ໄປເທີ້ນ ທ່ານຈົ່ງພິຈາລະນາເບິ່ງສະຖານທີ່ພັກໃນເມືອງກະບິນລະພັດທີ່ເຮົາຈະຢູ່ໄດ້ຈັກຄືນໜຶ່ງໃນມື້ນີ້ ເຈົ້າມະຫານາມສາກະຍະທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປເມືອງກະບິນລະພັດ ທ່ຽວໄປຈົນທົ່ວເມືອງກະບິນລະພັດ ບໍ່ເຫັນສະຖານທີ່ພັກທີ່ພຣະຜູ້ມີພຣະພາກເຈົ້າພໍຈະປະທັບໄດ້ ຈັກຄືນໜຶ່ງ

ລຳດັບນັ້ນ ເຈົ້າມະຫານາມສາກະຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເມືອງກະບິນລະພັດບໍ່ມີສະຖານທີ່ພັກທີ່ພຣະຜູ້ມີພຣະພາກເຈົ້າພໍຈະປະທັບໄດ້ຈັກຄືນໜຶ່ງໃນມື້ນີ້ ພະຣັນຖຸດາບົດກາລາມະໂຄດນີ້ ເປັນເພື່ອນພົມມະຈາຣີເກົ່າຂອງພຣະຜູ້ມີພຣະພາກເຈົ້າ ໃນມື້ນີ້ຂໍພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນອາສົມຂອງພະຣັນຖຸດາບົດນັ້ນຈັກຄືນໜຶ່ງ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ຈົ່ງໄປປູເຄື່ອງປູລາດໄວ້ເທີ້ນ ມະຫານາມ"

ເຈົ້າມະຫານາມສາກະຍະທູນຮັບພຣະຜູ້ມີພຣະພາກເຈົ້າແລ້ວ ເຂົ້າໄປສູ່ອາສົມຂອງພະຣັນຖຸດາບົດກາລາມະໂຄດ ປູເຄື່ອງປູລາດ ຈັດນ້ຳສຳລັບລ້າງພຣະບາດໄວ້ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ແລ້ວໄດ້ຂາບທູນດັ່ງນີ້ວ່າ "ຂ້າພຣະອົງໄດ້ປູເຄື່ອງປູລາດແລ້ວ ໄດ້ຈັດຕັ້ງນ້ຳສຳລັບລ້າງພຣະບາດແລ້ວ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຮູ້ການອັນຄວນເທີ້ນຂ້ານ້ອຍ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປ ສູ່ອາສົມຂອງພະຣັນຖຸດາບົດກາລາມະໂຄດ ປະທັບນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ຊົງລ້າງພຣະບາດທັງສອງ ລຳດັບນັ້ນ ເຈົ້າມະຫານາມສາກະຍະຄິດວ່າ "ມື້ນີ້ບໍ່ແມ່ນເວລາເໝາະທີ່ຈະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າ ຊົງອິດເມື່ອຍ ມື້ອື່ນເຮົາຈັກເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ" ຈຶ່ງຖວາຍອະພິວາດ ກະທຳປະທັກຂິນແລ້ວຫຼີກໄປ

ເມື່ອພໍລ່ວງຣາຕີນັ້ນໄປ ເຈົ້າມະຫານາມສາກະຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເຈົ້າມະຫານາມ ສາກະຍະນັ້ນດັ່ງນີ້ວ່າ ມະຫານາມ ສາດສະດາ ໓ ຈຳພວກນີ້ມີປາກົດຢູ່ໃນໂລກ

ສາດສະດາ ໓ ຈຳພວກ ພວກໃດແດ່ ຄື

໑. ສາດສະດາບາງທ່ານໃນໂລກນີ້ ບັນຍັດການກຳນົດຮູ້ກາມ ບໍ່ບັນຍັດການກຳນົດຮູ້ຮູບ ບໍ່ບັນຍັດການກຳນົດຮູ້ເວທະນາ

໔. ສາດສະດາບາງທ່ານໃນໂລກນີ້ ບັນຍັດການກຳນົດຮູ້ກາມແລະບັນຍັດການກຳນົດຮູ້ຮູບ ບໍ່ບັນຍັດການກຳນົດຮູ້ເວທະນາ
໓. ສາດສະດາບາງທ່ານໃນໂລກນີ້ບັນຍັດການກຳນົດຮູ້ກາມ ບັນຍັດການກຳນົດຮູ້ຮູບ ແລະບັນຍັດການກຳນົດຮູ້ເວທະນາ

ມະຫານາມ ສາດສະດາ ໓ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ຈຸດມຸ້ງໝາຍຂອງສາດສະດາ ໓ ຈຳພວກນີ້ເປັນແນວດຽວກັນຫຼືຕ່າງກັນ ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພະຣັນຖຸດາບົດກາລາມະໂຄດໄດ້ກ່າວກັບເຈົ້າມະຫານາມສາກະຍະວ່າ "ມະຫານາມ ທ່ານຈົ່ງຂາບທູນວ່າ "ຈຸດມຸ້ງໝາຍຂອງສາດສະດາ ໓ ຈຳພວກເປັນແນວດຽວກັນ" ເມື່ອພະຣັນຖຸດາບົດກ່າວແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບເຈົ້າມະຫານາມສາກະຍະ ວ່າ "ມະຫານາມ ທ່ານຈົ່ງກ່າວວ່າ "(ຈຸດມຸ້ງໝາຍຂອງສາດສະດາ ໓ ຈຳພວກ) ຕ່າງກັນ"

ແມ່ນໃນເທື່ອທີ ໔ ພະຣັນຖຸດາບົດກາລາມະໂຄດໄດ້ກ່າວກັບເຈົ້າມະຫານາມສາກະຍະວ່າ "ມະຫານາມ ທ່ານຈົ່ງຂາບທູນວ່າ "ເປັນແນວດຽວກັນ" ແມ່ນໃນເທື່ອທີ ໔ ພຣະຜູ້ມີພຣະພາກເຈົ້າກໍໄດ້ຕັດກັບເຈົ້າມະຫານາມສາກະຍະວ່າ "ມະຫານາມ ທ່ານຈົ່ງກ່າວວ່າ "ຕ່າງກັນ" ແມ່ນໃນເທື່ອທີ ໓ ພະຣັນຖຸດາບົດກາລາມະໂຄດໄດ້ກ່າວກັບເຈົ້າມະຫານາມະສາກະຍະວ່າ "ມະຫານາມ ທ່ານຈົ່ງຂາບທູນວ່າ "ເປັນແນວດຽວກັນ"

ແມ່ນໃນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເຈົ້າມະຫານາມສາກະຍະວ່າ "ມະຫານາມ ທ່ານຈົ່ງກ່າວວ່າ "ຕ່າງກັນ"

ລຳດັບນັ້ນ ພະຣັນຖຸດາບົດກາລາມະໂຄດຄິດວ່າ "ເຮົາຖືກພຣະສະມະນະໂຄດົມຮຸກຮານແລ້ວເຖິງ ໓ ເທື່ອຕໍ່ໜ້າເຈົ້າມະຫານາມສາກະຍະຜູ້ມີສັກໃຫຍ່ ທາງທີ່ດີເຮົາເພິ່ງໜີໄປ ຈາກເມືອງກະບິນລະພັດ" ບັດນັ້ນ ພະຣັນຖຸດາບົດກາລາມະໂຄດໄດ້ໜີໄປຈາກເມືອງກະບິນລະພັດ ໜີຫ່າງຈາກເມືອງກະບິນລະພັດ ບໍ່ຕ່າວມາອີກເລີຍ

**ພະຣັນຖຸກາລາມະສູດ ທີ ໔ ຈົບ**

# ໕. ຫັດຖະກະສູດ

## ວ່າດ້ວຍຫັດຖະກະເທບພະບຸດ

[໑໔໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ຫັດຖະກະເທບພະບຸດເມື່ອປະຖົມມະຍາມຜ່ານໄປ ມີວັນນະງົດງາມຫຼາຍ ເປັ່ງຣັດສະໝີໃຫ້ສະຫວ່າງທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຄິດວ່າຈັກຢືນກົງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ກັບຊຸດລົງນັ່ງກົງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ບໍ່ສາມາດຢືນຢູ່ໄດ້ ປຽບຄື ເນີຍໃສຫຼືນ້ຳມັນທີ່ເຂົາຖອກລົງເທິງຊາຍຍ່ອມຊຶມລົງ ບໍ່ຂັງຢູ່ ຫັດຖະກະເທບພະບຸດຄິດວ່າ ຈັກຢືນກົງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ກັບຊຸດລົງນັ່ງກົງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ບໍ່ສາມາດຢືນຢູ່ໄດ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຫັດຖະກະເທບພະບຸດວ່າ "ຫັດຖະກະ ທ່ານຈົ່ງເນຣະມິດຮ່າງແນວຫຍາບ ໆ" ຫັດຖະກະເທບພະບຸດທູນຮັບສະໜອງພຣະດຳຣັດແລ້ວ ເນຣະມິດຮ່າງແນວຫຍາບ ໆ ຖວາຍອະພິວາດແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ເລື້ອງນີ້ກັບຫັດຖະກະເທບພະບຸດດັ່ງນີ້ວ່າ "ຫັດຖະກະ ທຳປະຈຳໂຕຂອງທ່ານເມື່ອຄັ້ງທີ່ເປັນມະນຸດໃນການກ່ອນ ບັດນີ້ຍັງມີຢູ່ປະຈຳໂຕທ່ານແດ່ບໍ?"

ຫັດຖະກະເທບພະບຸດຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍທຳປະຈຳໂຕຂອງຂ້າພຣະອົງ ເມື່ອຄັ້ງທີ່ເປັນມະນຸດໃນການກ່ອນ ມາບັດນີ້ຍັງມີຢູ່ປະຈຳໂຕຂອງຂ້າພຣະອົງ ແລະທຳທີ່ບໍ່ໄດ້ມີຢູ່ປະຈຳໂຕຂ້າພຣະອົງ ເມື່ອຄັ້ງເປັນມະນຸດໃນການກ່ອນ ມາບັດນີ້ກັບມີຢູ່ປະຈຳໂຕຂ້າພຣະອົງ ຂ້າແດ່ ພຣະອົງຜູ້ຈະເລີນ ໃນປັດຈຸບັນນີ້ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຮ້ອມລ້ອມໄປດ້ວຍເຫຼົ່າພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ພວກເດຍຣະຖີ ສາວົກຂອງເດຍຣະຖີແມ່ນສັນໃດ ຂ້າພຣະອົງກໍສັນນັ້ນຄືກັນ ຮ້ອມລ້ອມໄປດ້ວຍເທບພະບຸດທັງຫຼາຍຢູ່ ພວກເທບພະບຸດພາກັນມາຈາກຖິ່ນໄກດ້ວຍຕັ້ງໃຈວ່າ ຈັກຟັງທຳໃນສຳນັກຂອງຫັດຖະກະເທບພະບຸດ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຍັງບໍ່ອີ່ມ ຍັງບໍ່ເບື່ອທຳ ໓ ປະການກໍຈຸຕິສາກ່ອນ

ທຳ ໓ ປະການ ອັນໃດແດ່ ຄື

໑. ຂ້າພຣະອົງຍັງບໍ່ອີ່ມ ຍັງບໍ່ເບື່ອການເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າກໍຈຸຕິສາແລ້ວ
໒. ຂ້າພຣະອົງຍັງບໍ່ອີ່ມ ຍັງບໍ່ເບື່ອການຟັງພຣະສັດທຳກໍຈຸຕິສາແລ້ວ
໓. ຂ້າພຣະອົງຍັງບໍ່ອີ່ມ ຍັງບໍ່ເບື່ອການບຳລຸງພຣະສົງກໍຈຸຕິສາແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຍັງບໍ່ອີ່ມ ຍັງບໍ່ເບື່ອທຳ ໓ ປະການນີ້ ກໍຈຸຕິສາແລ້ວ

ຫັດຖະກະເທບພະບຸດໄດ້ກ່າວຄາຖາປະພັນຕໍ່ໄປອີກ ວ່າ

ຄວາມອີ່ມໃນການເຝົ້າພຣະຜູ້ມີພຣະພາກເຈົ້າ
(ການຟັງພຣະສັດທຳ) ການບຳລຸງພຣະສົງ
ຈັກມີໃນການໃດ ໆ ຢ່າງແນ່ນອນ
ຫັດຖະກະອຸປາສົກຍັງສຶກສາອະທິສີນຢູ່
ຍິນດີແລ້ວໃນການຟັງພຣະສັດທຳ
ຍັງບໍ່ອີ່ມທຳ ໓ ປະການ
ກໍໄປສູ່ພົມມະໂລກຊັ້ນອະວິຫາສາແລ້ວ

**ຫັດຖະກະສູດ ທີ ໕ ຈົບ**

## ໖. ກະຕະວິຍະສູດ

## ວ່າດ້ວຍຄວາມມັກໃຫຍ່

[໑໘໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດຈີວອນ ສະເດັດເຂົ້າໄປສູ່ນະຄອນພາຣານະສີເພື່ອບິນທະບາດ ພຣະຜູ້ມີພຣະພາກເຈົ້າ ກຳລັງທ່ຽວບິນທະບາດໃນສຳນັກຂອງພວກມີລັກຂະ ທີ່ຊຸມນຸມກັນຢູ່ໃນບ່ອນຊື້ຂາຍງົວ ໄດ້ທອດພຣະເນດເຫັນພິກຂຸອົງໜຶ່ງ ຜູ້ບໍ່ມີຄວາມແຊ່ມຊື່ນ ມີແຕ່ຄວາມແຊ່ມຊື່ນພາຍນອກ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ແລ້ວໄດ້ຕັດກັບພິກຂຸນັ້ນດັ່ງນີ້ ວ່າ

"ພິກຂຸ ທ່ານຢ່າໄດ້ເຮັດຕົນໃຫ້ເປັນຜູ້ມັກໃຫຍ່ ເປັນໄປບໍ່ໄດ້ເລີຍ ທີ່ແມງວັນຈັກບໍ່ຕອມ ບໍ່ກັດຕົນທີ່ມັກໃຫຍ່ ຊຸ່ມຍ້ອນກິ່ນດິບ"

ເມື່ອພິກຂຸນັ້ນ ໄດ້ຮັບພຣະໂອວາດນີ້ ຈາກພຣະຜູ້ມີພຣະພາກເຈົ້າແລ້ວກໍເຖິງຄວາມສັງເວດ[១] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດທ່ຽວບິນທະບາດໃນນະຄອນພາຣານະສີ ໃນເວລາພາຍຫຼັງ ພັດຕາຫານ ສະເດັດກັບຈາກທ່ຽວບິນທະບາດໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ໃນເຊົ້າມື້ນີ້ ເຮົານຸ່ງອັນຕະຣະວາສົກ ຖືບາດຈີວອນເຂົ້າໄປສູ່ນະຄອນພາຣານະສີເພື່ອບິນທະບາດ ເຮົາກຳລັງທ່ຽວບິນທະບາດໃນສຳນັກຂອງພວກມີລັກຂະທີ່ຊຸມນຸມກັນຢູ່ໃນບ່ອນຊື້

ຂາຍງົວ ໄດ້ເຫັນພິກຂຸອົງໜຶ່ງ ຜູ້ບໍ່ມີຄວາມແຊ່ມຊື່ນ ມີແຕ່ຄວາມແຊ່ມຊື່ນພາຍນອກ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ແລ້ວໄດ້ກ່າວກັບພິກຂຸນັ້ນດັ່ງນີ້ວ່າ "ພິກຂຸທ່ານຢ່າໄດ້ເຮັດຕົນໃຫ້ເປັນຜູ້ມັກໃຫຍ່ ເປັນໄປບໍ່ໄດ້ເລີຍ ທີ່ແມງວັນຈັກບໍ່ຕອມ ບໍ່ກັດ ຕົນທີ່ມັກໃຫຍ່ ຊຸ່ມຍ້ອນກິ່ນດິບນັ້ນ" ເມື່ອເຮົາກ່າວສອນດ້ວຍໂອວາດນີ້ແລ້ວ ພິກຂຸນັ້ນກໍເຖິງຄວາມສັງເວດ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມມັກໃຫຍ່ຄືອັນໃດ? ກິ່ນດິບຄືອັນໃດ? ແມງວັນຄືອັນໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຄວາມມັກໃຫຍ່ຄື ອະພິດຊາ ກິ່ນດິບຄືພະຍາບາດ ແມງວັນຄື ບາບອະກຸສົນວິຕົກ ພິກຂຸ ເປັນໄປບໍ່ໄດ້ເລີຍ ທີ່ແມງວັນຈັກບໍ່ຕອມ ບໍ່ກັດຕົນທີ່ມັກໃຫຍ່ ຊຸ່ມຍ້ອນກິ່ນດິບ

ແມງວັນຄືຄວາມດຳລິທີ່ອີງຣາຄະ
ຈັກໄຕ່ຕອມບຸກຄົນທີ່ບໍ່ຄຸ້ມຄອງໃນຈັກຂຸທະວານແລະໂສຕະທະວານ
ບໍ່ສັງລວມໃນອິນຊີທັງຫຼາຍ
ພິກຂຸເຮັດຕົນໃຫ້ເປັນຜູ້ມັກໃຫຍ່ ຊຸ່ມຍ້ອນກິ່ນດິບ
ຍ່ອມຢູ່ຫ່າງໄກຈາກນິບພານ ມີແຕ່ຄວາມຄັບແຄ້ນທໍ່ນັ້ນ
ຄົນພານມີປັນຍາຊາມ ຖືກແມງວັນໄຕ່ຕອມ
ບໍ່ໄດ້ເພື່ອນທີ່ສະເໝີຕົນ ເພິ່ງທ່ຽວໄປໃນບ້ານແດ່ ໃນປ່າແດ່
ສ່ວນພວກທີ່ສົມບູນດ້ວຍສິນ ຍິນດີໃນທຳທີ່ສະງົບດ້ວຍປັນຍາ
ເປັນຜູ້ສະງົບລະງັບຢູ່ເປັນສຸກ ແມງວັນຍ່ອມບໍ່ລົບກວນເຂົາ

**ກະຕະວິຍະສູດທີ ໘ ຈົບ**

# ໗. ປະຖົມອະນຸຣຸດທະສູດ

## ວ່າດ້ວຍພຣະອະນຸຣຸດທະສູດທີ ໑

[໑໓໐] ຄັ້ງນັ້ນ ທ່ານພຣະອະນຸຣຸດທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຂ້າພຣະອົງເຫັນ

ແຕ່ມາຕຸຄາມ(ສະຕີ) ສ່ວນຫຼາຍຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ມາຕຸຄາມປະກອບດ້ວຍທຳທີ່ໃດນໍ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໓ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໓ ປະການ ອັນໃດແດ່ ຄື

ມາຕຸຄາມໃນໂລກນີ້

໑. ໃນເວລາເຊົ້າ ຖືກມົນທິນຄືຄວາມຂີ້ຖີ່ກຸ້ມລຸມຈິດຢູ່ຄອງເຮືອນ
໒. ໃນເວລາທ່ຽງ ຖືກຄວາມຣິດສະຫຍາກຸ້ມລຸມຈິດຢູ່ຄອງເຮືອນ
໓. ໃນເວລາຄ່ຳ ຖືກກາມຣາຄະກຸ້ມລຸມຈິດຢູ່ຄອງເຮືອນ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໓ ປະການນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

**ປະຖົມອະນຸຣຸດທະສູດ ທີ ໆ ຈົບ**

## ໗. ທຸຕິຍະອະນຸຣຸດທະສູດ

## ວ່າດ້ວຍພຣະອະນຸຣຸດທະ ສູດ ທີ ໒

[໑໓໑] ຄັ້ງນັ້ນ ພຣະອະນຸຣຸດທະເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ໄດ້ສົນທະນາປາໄສກັບທ່ານພຣະສາຣີບຸດພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດວ່າ "ທ່ານສາຣີບຸດ ຂໍໂອກາດ ຂ້ານ້ອຍກວດເບິ່ງທົ່ວໂລກ ໑,໐໐໐ ໂລກດ້ວຍຕາທິບອັນບໍລິສຸດເໜືອມະນຸດ ກໍຂ້ານ້ອຍເອງພໍ່າເພັງພຽນບໍ່ທຍ່ອນຍານ ຕັ້ງສະຕິບໍ່ຫຼົງລືມ ກາຍກໍສະງົບລະງັບ ບໍ່ຣະສ່ຳຣະສາຍ ຈິດຕັ້ງໝັ້ນ ມີອາລົມເປັນໜຶ່ງ ແຕ່ຍ້ອນເຫດໃດນໍ ຈິດຂອງຂ້ານ້ອຍຈຶ່ງຍັງບໍ່ພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ"

ທ່ານພຣະສາຣີບຸດຕອບວ່າ "ທ່ານອະນຸຣຸດທະ ການທີ່ທ່ານຄິດເຫັນແນວນີ້ວ່າ "ເຮົາກວດເບິ່ງໂລກ ໑,໐໐໐ ໂລກດ້ວຍຕາທິບອັນບໍລິສຸດເໜືອມະນຸດ" ນີ້ເປັນຍ້ອນມານະ ຂອງທ່ານເອງ ການທີ່ທ່ານຄິດເຫັນແນວນີ້ວ່າ "ກໍເຮົາພໍ່າເພັງພຽນບໍ່ທຍ່ອນຍານ ຕັ້ງສະຕິບໍ່ຫຼົງລືມ ກາຍກໍສະງົບລະງັບ ບໍ່ຣະສ່ຳຣະສາຍ ຈິດຕັ້ງໝັ້ນ ມີອາລົມເປັນໜຶ່ງ" ນີ້ເປັນຍ້ອນ ຄວາມຟຸ້ງຊ່ານຂອງ

ທ່ານເອງ ການທີ່ທ່ານຄິດເຫັນແນວນີ້ວ່າ "ຍ້ອນເຫດໃດນໍ ຈິດຂອງເຮົາ ຈຶ່ງຍັງບໍ່ພົ້ນຈາກອາສະວະ ຍ້ອນບໍ່ຖືໝັ້ນ" ນີ້ເປັນຍ້ອນຄວາມລຳຄານຂອງທ່ານເອງ ທ່ານອະນຸຣຸດທະ ດັ່ງນັ້ນແລ້ວ ທ່ານຈົ່ງລະທຳ ໓ ປະການນີ້ ບໍ່ມະນະສິການເຖິງທຳ ໓ ປະການນີ້ແລ້ວນ້ອມຈິດໄປໃນອະມະຕະທາດ[໑]"

ເມື່ອຕໍ່ມາ ທ່ານພຣະອະນຸຣຸດທະລະທຳ ໓ ປະການນີ້ບໍ່ມະນະສິການເຖິງທຳ ໓ ປະການນີ້ນ້ອມຈິດໄປໃນອະມະຕະທາດ ຫຼີກອອກໄປຢູ່ຄົນດຽວ ບໍ່ປະໝາດ[໒] ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງບ່ອນສຸດເຊິ່ງປະໂຫຍດປະເສີດ[໓] ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ "ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ທ່ານພຣະອະນຸຣຸດທະໄດ້ເປັນພຣະອະຣະຫັນອີກອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ທຸຕິຍະອະນຸຣຸດທະສູດທີ ๙ ຈົບ**

## ໙. ປະຕິດສັນນະສູດ

## ວ່າດ້ວຍສິ່ງທີ່ອັດໄວ້ດີ ເປີດບໍ່ດີ

[໑໓໒] ພິກຂຸທັງຫຼາຍ ສິ່ງ ໓ ຢ່າງນີ້ປິດບັງໄວ້ຈຶ່ງດີ ເປີດເຜີຍບໍ່ດີ

ສິ່ງ ໓ ຢ່າງ ອັນໃດແດ່ ຄື

໑. ກາຍມາຕຸຄາມ (ສະຕີ) ປິດບັງໄວ້ຈຶ່ງງົດງາມ ເປີດເຜີຍບໍ່ງາມ
໒. ມົນຂອງພາມປິດບັງໄວ້ຈຶ່ງຂັງ ເປີດເຜີຍບໍ່ຂັງ
໓. ມິດສາທິດຖິປິດບັງໄວ້ຈຶ່ງດີ ເປີດເຜີຍບໍ່ດີ

ພິກຂຸທັງຫຼາຍ ສິ່ງ ໓ ຢ່າງນີ້ ປິດບັງໄວ້ຈຶ່ງດີ ເປີດເຜີຍບໍ່ດີ

ສິ່ງ ໓ ຢ່າງນີ້ເປີດເຜີຍຈຶ່ງຮຸ່ງເຮືອງ ປິດບັງໄວ້ບໍ່ຮຸ່ງເຮືອງ

ສິ່ງ ໓ ຢ່າງ ອັນໃດແດ່ ຄື

໑. ດວງຈັນເປີດເຜີຍຈຶ່ງຮຸ່ງເຮືອງ ປິດບັງໄວ້ບໍ່ຮຸ່ງເຮືອງ
໒. ດວງອາທິດເປີດເຜີຍຈຶ່ງຮຸ່ງເຮືອງ ປິດບັງໄວ້ບໍ່ຮຸ່ງເຮືອງ

໓. ທຳວິໄນທີ່ຕະຖາຄົດປະກາດໄວ້ເປີດເຜີຍຈຶ່ງຮຸ່ງເຮືອງ ປິດບັງໄວ້ບໍ່ຮຸ່ງເຮືອງ

ພິກຂຸທັງຫຼາຍ ສິ່ງ ໓ ຢ່າງນີ້ແລ ເປີດເຜີຍຈຶ່ງຮຸ່ງເຮືອງ ປິດບັງໄວ້ບໍ່ຮຸ່ງເຮືອງ

**ປະຕິດສັນນະສູດທີ ໗ ຈົບ**

## ໑໐. ເລຂະສູດ

## ວ່າດ້ວຍບຸກຄົນກັບຮອຍຂີດ

[໑໓໓] ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໓ ຈຳພວກໃດແດ່ ຄື

໑. ບຸກຄົນທີ່ປຽບຄືຮອຍຂີດເທິງ ແຜ່ນຫີນ
໒. ບຸກຄົນທີ່ປຽບຄືຮອຍຂີດເທິງ ແຜ່ນດິນ
໓. ບຸກຄົນທີ່ປຽບຄືຮອຍຂີດເທິງ ນ້ຳ

ບຸກຄົນທີ່ປຽບຄືຮອຍຂີດເທິງແຜ່ນຫີນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ໂກດເປັນປະຈຳ ແລະຄວາມໂກດນັ້ນຂອງເຂົາກໍໝັກໝົມຢູ່ດົນ ຮອຍຂີດເທິງແຜ່ນຫີນ ບໍ່ລົບເລືອນໄວຍ້ອນລົມຫຼືນ້ຳ ຍ່ອມຕິດຢູ່ດົນແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ໂກດເປັນປະຈຳ ແລະຄວາມໂກດນັ້ນຂອງເຂົາ ກໍໝັກໝົມຢູ່ດົນ ນີ້ຮຽກວ່າ ບຸກຄົນທີ່ປຽບຄືຮອຍຂີດເທິງແຜ່ນຫີນ

ບຸກຄົນທີ່ປຽບຄືຮອຍຂີດທີ່ແຜ່ນດິນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໂກດເປັນປະຈຳ ແຕ່ຄວາມໂກດນັ້ນຂອງເຂົາບໍ່ໝັກໝົມຢູ່ດົນ ຮອຍຂີດທີ່ແຜ່ນດິນ ຍ່ອມລົບເລືອນໄວຍ້ອນລົມຫຼືນ້ຳ ບໍ່ຜາກົດຢູ່ດົນແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັບສັນນັ້ນ ໂກດເປັນປະຈຳ ແຕ່ຄວາມໂກດນັ້ນ ຂອງເຂົາບໍ່ໝັກໝົມຢູ່ດົນ ນີ້ຮຽກວ່າ ບຸກຄົນທີ່ປຽບຄືຮອຍຂີທີ່ແຜ່ນດິນ

ບຸກຄົນທີ່ປຽບຄືຮອຍຂີດທີ່ນ້ຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ແມ່ນຈະຖືກວ່າດ້ວຍຄຳໜັກ ໆ ແມ່ນຈະຖືກວ່າດ້ວຍຄຳຫຍາບ ແມ່ນຈະຖືກວ່າດ້ວຍຄຳທີ່ບໍ່ໜ້າພໍໃຈ ກໍຍັງສະມານໄມຕີກົມກຽວຢູ່ ປອງດອງກັນຢູ່ ຮອຍ

ຂີດທີ່ນ້ຳຍ່ອມຂາດຫາຍໄປໄວ ບໍ່ຜາກົດຢູ່ດົນແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍຄືກັນສັນນັ້ນ ແມ່ນຈະຖືກວ່າດ້ວຍຄຳໜັກ ໆ ແມ່ນຈະຖືກວ່າດ້ວຍຄຳຫຍາບ ແມ່ນຈະຖືກວ່າ ດ້ວຍຄຳທີ່ບໍ່ໜ້າພໍໃຈກໍຍັງສະມານໄມ ຕີກົນກຽວຢູ່ ປອງດອງກັນຢູ່ໄດ້ ນີ້ຮຽກວ່າ ບຸກຄົນທີ່ປຽບຄືຮອຍຂີດທີ່ນ້ຳ

ພິກຂຸທັງຫຼາຍ ບຸກຄົນ ໓ ຈຳພວກນີ້ ມີຜາກົດຢູ່ໃນໂລກ

**ເລຂະສູດ ທີ ໑໐ ຈົບ**

**ກຸສິນາຣະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

| | |
|---|---|
| ໑. ກຸສິນາຣະສູດ | ໒. ພັນທະນະສູດ |
| ໓. ໂຄຕະມະກະເຈຕິຍະສູດ | ໔. ພະຣັນຖຸກາລາມະສູດ |
| ໕. ຫັດຖະກະສູດ | ໖. ກະຕະວິຍະສູດ |
| ໗. ປະຖົມອະນຸຣຸດທະສູດ | ໘. ທຸຕິຍະອະນຸຣຸດທະສູດ |
| ໙. ປະຕິດສັນນະສູດ | ໑໐. ເລຂະສູດ |

# ໔. ໂຍທາຊີວະວັກ

## ໝວດວ່າດ້ວຍນັກຣົບອາຊີບ

# ໑. ໂຍທາຊີວະສູດ

## ວ່າດ້ວຍອົງປະກອບຂອງນັກຣົບ

[໑໓໔] ນັກຣົບອາຊີບປະກອບດ້ວຍອົງ ໓ ປະການ ຍ່ອມຄູ່ຄວນແກ່ພຣະຣາຊາ ເໝາະແກ່ພຣະຣາຊາ ເຖິງການນັບວ່າ ເປັນຣາດຊະອົງຄະຣັກໂດຍແທ້

ອົງ ໓ ປະການ ອັນໃດແດ່ ຄື

ນັກຣົບອາຊີບໃນໂລກນີ້

๑. ຍິງລູກສອນໄດ້ໄກ
๒. ຍິງບໍ່ພາດ
๓. ທຳລາຍກາຍຂະໜາດໃຫຍ່ໄດ້

ນັກຮົບອາຊີບປະກອບດ້ວຍອົງ ๓ ປະການນີ້ ຍ່ອມຄູ່ຄວນແກ່ພຣະຣາຊາ ເໝາະແກ່ພຣະຣາຊາ ເຖິງການນັບວ່າເປັນຣາດຊະອົງຄະຣັກໂດຍແທ້ ສັນໃດ

ພິກຂຸປະກອບດ້ວຍອົງ ๓ ປະການກໍຄືກັນສັນນັ້ນ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ฯລฯ ເປັນນາບຸນອັນປະເສີດຂອງໂລກ

ອົງ ๓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

๑. ຍິງລູກສອນໄດ້ໄກ
๒. ຍິງບໍ່ພາດ
๓. ທຳລາຍກາຍຂະໜາດໃຫຍ່ໄດ້

ພິກຂຸຍິງລູກສອນໄດ້ໄກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນຮູບແນວໃດແນວໜຶ່ງ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບ ຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນໂຕຕົນຂອງເຮົາ" ພິຈາລະນາເຫັນເວທະນາແນວໃດແນວໜຶ່ງ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນໂຕຕົນຂອງເຮົາ" ພິຈາລະນາເຫັນສັນຍາແນວໃດແນວໜຶ່ງດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນໂຕຕົນຂອງເຮົາ" ພິຈາລະນາເຫັນ ສັງຂານແນວໃດແນວໜຶ່ງດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນໂຕຕົນຂອງເຮົາ" ພິຈາລະນາເຫັນວິນຍານແນວໃດແນວໜຶ່ງດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼື

ລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ໄດ້ເປັນນັ້ນ ນັ້ນບໍ່ແມ່ນໂຕຕົນຂອງເຮົາ" ພິກຂຸຊື່ວ່າ ຍິງລູກສອນໄດ້ໄກ ເປັນແນວນີ້ແລ

ພິກຂຸຍິງລູກສອນບໍ່ພາດ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)" ພິກຂຸຊື່ວ່າ ຍິງລູກສອນບໍ່ພາດ ເປັນແນວນີ້ແລ

ພິກຂຸທໍາລາຍກາຍຂະໜາດໃຫຍ່ໄດ້ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ ທໍາລາຍກອງອະວິດຊາໃຫຍ່ໄດ້ ພິກຂຸຊື່ວ່າ ທໍາລາຍກາຍຂະໜາດໃຫຍ່ໄດ້ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍອົງ ໓ ປະການນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານໍາມາຖວາຍ ฯລฯ ເປັນນາບຸນອັນປະເສີດຂອງໂລກ

**ໂຍທາຊີວະສູດ ທີ ໑ ຈົບ**

## ໒. ປະຣິສາສູດ

## ວ່າດ້ວຍບໍລິສັດ

[໑໓໕] ພິກຂຸທັງຫຼາຍ ບໍລິສັດ ໓ ຈໍາພວກນີ້

ບໍລິສັດ ໓ ຈໍາພວກ ພວກໃດແດ່ ຄື

໑. ບໍລິສັດທີ່ແນະນໍາຍາກ
໒. ບໍລິສັດທີ່ແນະນໍາງ່າຍ
໓. ບໍລິສັດທີ່ແນະນໍາແຕ່ພໍປະມານກໍຮູ້ໄດ້

ພິກຂຸທັງຫຼາຍ ບໍລິສັດ ໓ ຈໍາພວກນີ້ແລ

**ປະຣິສາສູດ ທີ ໒ ຈົບ**

# ໓. ມິດຕະສູດ

## ວ່າດ້ວຍອົງປະກອບຂອງມິດແທ້

[໑໓໖] ພິກຂຸທັງຫຼາຍ ມິດຜູ້ປະກອບດ້ວຍອົງ ໓ ປະການຄວນຄົບຫາໄດ້

ອົງ ໓ ປະການ ອັນໃດແດ່ ຄື

໑. ໃຫ້ສິ່ງທີ່ໃຫ້ໄດ້ຍາກ
໒. ຊ່ອຍເຮັດສິ່ງທີ່ເຮັດໄດ້ຍາກ
໓. ອົດທົນຕໍ່ສິ່ງທີ່ທົນໄດ້ຍາກ

ພິກຂຸທັງຫຼາຍ ມິດຜູ້ປະກອບດ້ວຍອົງ ໓ ປະການນີ້ແລຄວນຄົບຫາໄດ້

**ມິດຕະສູດທີ ໓ ຈົບ**

# ໔. ອຸບປາທາສູດ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງພຣະຕະຖາຄົດ

[໑໓໗] ພິກຂຸທັງຫຼາຍ ຕະຖາຄົດເກີດຂຶ້ນກໍຕາມ ບໍ່ເກີດຂຶ້ນກໍຕາມ ທາດນັ້ນຄືຄວາມຕັ້ງຢູ່ຕາມທຳມະດາ ຄວາມເປັນໄປຕາມທຳມະດາກໍຄົງຕັ້ງຢູ່ແນວນັ້ນ ຕະຖາຄົດຮູ້ ບັນລຸທາດນັ້ນວ່າ "ສັງຂານທັງປວງບໍ່ທ່ຽງ" ເມື່ອຮູ້ ບັນລຸແລ້ວຈຶ່ງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍວ່າ "ສັງຂານທັງປວງບໍ່ທ່ຽງ" ຕະຖາຄົດເກີດຂຶ້ນກໍຕາມ ບໍ່ເກີດຂຶ້ນກໍຕາມ ທາດນັ້ນຄືຄວາມຕັ້ງຢູ່ຕາມທຳມະດາ ຄວາມເປັນໄປຕາມທຳມະດາ ກໍຄົງຕັ້ງຢູ່ແນວນັ້ນ ຕະຖາຄົດຮູ້ ບັນລຸທາດນັ້ນວ່າ "ສັງຂານທັງປວງເປັນທຸກ" ເມື່ອຮູ້ ບັນລຸແລ້ວ ຈຶ່ງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍວ່າ "ສັງຂານທັງປວງເປັນທຸກ" ຕະຖາຄົດເກີດຂຶ້ນກໍຕາມ ບໍ່ເກີດຂຶ້ນກໍຕາມ ທາດນັ້ນຄືຄວາມຕັ້ງຢູ່ຕາມທຳມະດາ ຄວາມເປັນໄປຕາມທຳມະດາກໍຄົງຕັ້ງຢູ່ແນວນັ້ນ ຕະຖາຄົດຮູ້ ບັນລຸທາດນັ້ນວ່າ "ທຳທັງປວງເປັນອະນັດຕາ" ເມື່ອຮູ້ ບັນລຸແລ້ວຈຶ່ງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍວ່າ "ທຳທັງປວງເປັນອະນັດຕາ"

**ອຸບປາທາສູດ ທີ ໔ ຈົບ**

## ໕. ເກສະກຳພົນສູດ

### ວ່າດ້ວຍວາທະຂອງມັກຂະລິປຽບຄືຜ້າກຳພົນທໍດ້ວຍຜົມຄົນ

[໑໓໗] ພິກຂຸທັງຫຼາຍ ຜ້າກຳພົນທໍດ້ວຍຜົມຄົນ ບັນດິດຮຽກວ່າ ຊົ່ວກວ່າຜ້າທີ່ຊ່າງຫູກທໍແລ້ວທຸກຊະນິດ ຜ້າກຳພົນທໍດ້ວຍຜົມຄົນ ໃນລະດູໜາວກໍເຢັນ ໃນລະດູຮ້ອນກໍຮ້ອນ ສີບໍ່ງາມ ມີກິ່ນເໝັນ ເນື້ອຜ້າບໍ່ອ່ອນນຸ່ມ ແມ່ນສັນໃດ ວາທະຂອງເຈົ້າລັດທິຊື່ມັກຂະລິກໍຄືກັນສັນນັ້ນ ບັນດິດກ່າວວ່າຊົ່ວກວ່າວາທະຂອງສະມະນະທຸກຈຳພວກ

ມັກຂະລິເປັນໂມຄະບຸຣຸດ (ຄົນຂາດຄ່າ) ມີວາທະແນວນີ້ມີທິດຖິແນວນີ້ວ່າ "ກຳບໍ່ມີ ກິຣິຍາບໍ່ມີ ຄວາມພຽນບໍ່ມີ" ຕະຫຼອດອະດີດຕະການອັນຍາວນານ ແມ່ນພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າກໍຕັດເລື້ອງກຳ ຕັດເລື້ອງກິຣິຍາ ແລະຕັດເລື້ອງຄວາມພຽນ ໂມຄະບຸຣຸດຊື່ມັກຂະລິກັບຄັດຄ້ານພຣະຜູ້ມີພຣະພາກເຈົ້າແມ່ນເຫຼົ່ານັ້ນວ່າ "ກຳບໍ່ມີ ກິຣິຍາບໍ່ມີ ຄວາມພຽນບໍ່ມີ" ແມ່ນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າທີ່ຈັກມີໃນອະນາຄົດກໍຈັກຕັດເລື້ອງກຳ ຕັດເລື້ອງກິຣິຍາ ແລະຕັດເລື້ອງຄວາມພຽນ ໂມຄະບຸຣຸດຊື່ມັກຂະລິກັບຄັດຄ້ານພຣະຜູ້ມີພຣະພາກເຈົ້າແມ່ນເຫຼົ່ານັ້ນວ່າ "ກຳບໍ່ມີ ກິຣິຍາບໍ່ມີ ຄວາມພຽນບໍ່ມີ"

ແມ່ນເຮົາທີ່ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າໃນປັດຈຸບັນກໍຍັງກ່າວເລື້ອງກຳ ກ່າວເລື້ອງກິຣິຍາ ກ່າວເລື້ອງຄວາມພຽນ ໂມຄະບຸຣຸດຊື່ມັກຂະລິກໍຄັດຄ້ານແມ່ນເຮົາວ່າ "ກຳບໍ່ມີ ກິຣິຍາບໍ່ມີ ຄວາມພຽນບໍ່ມີ"

ພິກຂຸທັງຫຼາຍ ໂມຄະບຸຣຸດຊື່ມັກຂະລິເປັນຄືໄຊດັກມະນຸດ ເກີດຂຶ້ນມາໃນໂລກ ເພື່ອບໍ່ເກື້ອກູນ ເພື່ອທຸກ ເພື່ອຄວາມສູນຫາຍ ເພື່ອຄວາມພິນາດຂອງສັດເປັນຈຳນວນຫຼາຍ ປຽບຄືບຸກຄົນເພິ່ງວາງໄຊດັກປາໄວ້ທີ່ປາກອ່າວ ເພື່ອບໍ່ເກື້ອກູນ ເພື່ອທຸກ ເພື່ອຄວາມສູນຫາຍ ເພື່ອຄວາມພິນາດຂອງປາເປັນຈຳນວນຫຼາຍ

**ເກສະກຳພົນສູດ ທີ ໕ ຈົບ**

## ໖. ສຳປະທາສູດ

### ວ່າດ້ວຍສຳປະທາ

[໑໓໘] ພິກຂຸທັງຫຼາຍ ສຳປະທາ ໓ ປະການນີ້

ສຳປະທາ ໓ ປະການ ອັນໃດແດ່ ຄື

໑. ສັດທາສຳປະທາ (ຄວາມເຖິງພ້ອມດ້ວຍສັດທາ)
໒. ສີລະສຳປະທາ (ຄວາມເຖິງພ້ອມດ້ວຍສີນ)
໓. ປັນຍາສຳປະທາ (ຄວາມເຖິງພ້ອມດ້ວຍປັນຍາ)

ພິກຂຸທັງຫຼາຍ ສຳປະທາ ໓ ປະການນີ້ແລ

**ສຳປະທາສູດທີ ໖ ຈົບ**

## ໗. ວຸດທິສູດ

## ວ່າດ້ວຍວຸດທິ

[໑໔໐] ພິກຂຸທັງຫຼາຍ ວຸດທິ ໓ ປະການນີ້

ວຸດທິ ໓ ປະການ ອັນໃດແດ່ ຄື

໑. ສັດທາວຸດທິ (ຄວາມຈະເລີນດ້ວຍສັດທາ)
໒. ສີລະວຸດທິ (ຄວາມຈະເລີນດ້ວຍສີນ)
໓. ປັນຍາວຸດທິ (ຄວາມຈະເລີນດ້ວຍປັນຍາ)

ພິກຂຸທັງຫຼາຍ ວຸດທິ ໓ ປະການນີ້ແລ

**ວຸດທິສູດ ທີ ໗ ຈົບ**

## ໘. ອັດສະຂະລຸງກະສູດ

## ວ່າດ້ວຍມ້າກະຈອກແລະຄົນກະຈອກ

[໑໔໑] ພິກຂຸທັງຫຼາຍ ເຮົາຈັກສະແດງມ້າກະຈອກ ໓ ຈຳພວກ ແລະຄົນກະຈອກ ໓ ຈຳພວກ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງ ພຣະດຳຣັດແລ້ວພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ມ້າກະຈອກ ໓ ຈຳພວກ ພວກໃດແດ່ ຄື

໑. ມ້າກະຈອກບາງໂຕໃນໂລກນີ້ ສົມບູນດ້ວຍກຳລັງແລ່ນ ແຕ່ບໍ່ສົມບູນດ້ວຍສີ ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່
໒. ມ້າກະຈອກບາງໂຕໃນໂລກນີ້ ສົມບູນດ້ວຍກຳລັງແລ່ນແລະສົມບູນດ້ວຍສີ ແຕ່ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່
໓. ມ້າກະຈອກບາງໂຕໃນໂລກນີ້ ສົມບູນດ້ວຍກຳລັງແລ່ນ ສົມບູນດ້ວຍສີ ແລະ ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

ພິກຂຸທັງຫຼາຍ ມ້າກະຈອກ ໓ ຈຳພວກນີ້ແລ

ຄົນກະຈອກ ໓ ຈຳພວກ ພວກໃດແດ່ ຄື

໑. ຄົນກະຈອກລາງຄົນໃນໂລກນີ້ ສົມບູນດ້ວຍເຊົາ ແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່
໒. ຄົນກະຈອກລາງຄົນໃນໂລກນີ້ ສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່
໓. ຄົນກະຈອກລາງຄົນໃນໂລກນີ້ ສົມບູນດ້ວຍເຊົາສົມບູນດ້ວຍວັນນະ ແລະ ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

ຄົນກະຈອກສົມບູນດ້ວຍເຊົາແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ເຮົາກ່າວວ່ານີ້ເປັນເຊົາຂອງເຂົາ ແຕ່ເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນ ກໍຈົນປັນຍາຕອບບໍ່ໄດ້ ເຮົາກ່າວວ່ານີ້ບໍ່ແມ່ນວັນນະຂອງເຂົາ ແລະເຂົາບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່ານີ້ບໍ່ແມ່ນຄວາມສູງແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນກະຈອກສົມບູນດ້ວຍເຊົາແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວນີ້ແລ

ຄົນກະຈອກສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ເຮົາກ່າວວ່ານີ້ເປັນເຊົາຂອງເຂົາ ແລະເຂົາຖືກຖາມບັນຫາໃນອະພິທຳ ແລະອະພິ

ວິໄນ ກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່ານີ້ເປັນວັນນະຂອງເຂົາ ແຕ່ເຂົາບໍ່ໄດ້ ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່ານີ້ບໍ່ແມ່ນຄວາມສູງແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນກະຈອກສົມບູນດ້ວຍເຊົາແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວນີ້ແລ

ຄົນກະຈອກສົມບູນດ້ວຍເຊົາສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ “ນີ້ທຸກ ໆລໆ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ” ເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນ ກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່າ ນີ້ເປັນເຊົາຂອງເຂົາ ແລະເຂົາໄດ້ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່າ ນີ້ເປັນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນກະຈອກສົມບູນດ້ວຍເຊົາສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຄົນກະຈອກ ໓ ຈຳພວກນີ້ແລ

**ອັດສະຂະລຸງກະສູດທີ ໗ ຈົບ**

## ໘. ອັດສະສະທັດສະສູດ

## ວ່າດ້ວຍມ້າດີແລະຄົນດີ

[໑໔໘] ເຮົາຈັກສະແດງມ້າດີ ໓ ຈຳພວກ ແລະຄົນດີ ໓ ຈຳພວກ ທ່ານທັງຫຼາຍຈົ່ງຟັງຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ມ້າດີ ໓ ຈຳພວກ ພວກໃດແດ່ ຄື

໑. ມ້າດີບາງໂຕໃນໂລກນີ້ສົມບູນດ້ວຍກຳລັງແລ່ນ ແຕ່ບໍ່ສົມບູນດ້ວຍສີ ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

໔. ມ້າດີບາງໂຕໃນໂລກນີ້ສົມບູນດ້ວຍກຳລັງແລ່ນ ແລະສົມບູນດ້ວຍສີ ແຕ່ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່
໓. ມ້າດີບາງໂຕໃນໂລກນີ້ສົມບູນດ້ວຍກຳລັງແລ່ນ ສົມບູນດ້ວຍສີ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

ພິກຂຸທັງຫຼາຍ ມ້າດີ ໓ ຈຳພວກນີ້ແລ

ຄົນດີ ໓ ຈຳພວກ ພວກໃດແດ່ ຄື

໑. ຄົນດີລາງຄົນໃນໂລກນີ້ ສົມບູນດ້ວຍເຊົາ ແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່
໔. ຄົນດີລາງຄົນໃນໂລກນີ້ ສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່
໓. ຄົນດີລາງຄົນໃນໂລກນີ້ ສົມບູນດ້ວຍເຊົາສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

ຄົນດີສົມບູນດ້ວຍເຊົາແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ຈັກເປັນ ໂອປະປາຕິກະ[໑] ປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນແນ່ນອນ ເຮົາກ່າວວ່ານີ້ເປັນເຊົາຂອງເຂົາ ແຕ່ເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນ ກໍຈົນປັນຍາຕອບບໍ່ໄດ້ ເຮົາກ່າວວ່ານີ້ບໍ່ແມ່ນວັນນະຂອງເຂົາ ແລະເຂົາບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່ານີ້ບໍ່ແມ່ນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນດີສົມບູນດ້ວຍເຊົາແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນແນວນີ້ແລ

ຄົນດີສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ຈັກເປັນໂອປະປາຕິກະ ປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນແນ່ນອນ ເຮົາກ່າວວ່ານີ້ເປັນເຊົາຂອງເຂົາແລະເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນ ກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່ານີ້

ເປັນວັນນະຂອງເຂົາ ແຕ່ເຂົາບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່ານີ້ບໍ່ແມ່ນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນດີສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນແນວນີ້ແລ

ຄົນດີສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການໝົດສິ້ນໄປ ຈັກເປັນໂອປະປາຕິກະປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນແນ່ນອນ ເຮົາກ່າວວ່ານີ້ເປັນເຊົາຂອງເຂົາ ເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນ ກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່ານີ້ເປັນວັນນະຂອງເຂົາ ແລະເຂົາໄດ້ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່ານີ້ເປັນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນດີສົມບູນດ້ວຍເຊົາສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຄົນດີ ໓ ຈຳພວກນີ້ແລ

**ອັດສະສະທັດສະສູດທີ ໙ ຈົບ**

## ໑໐. ອັດສາຊານີຍະສູດ

## ວ່າດ້ວຍມ້າອາຊາໄນແລະບຸຣຸດອາຊາໄນ

[໑໔໓] ພິກຂຸທັງຫຼາຍ ເຮົາຈັກສະແດງມ້າອາຊາໄນພັນດີ ໓ ຈຳພວກ ແລະບຸຣຸດອາຊາໄນຜູ້ຈະເລີນ ໓ ຈຳພວກ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ມ້າອາຊາໄນພັນດີ ໓ ຈຳພວກ ພວກໃດແດ່ ຄື

໑. ມ້າອາຊາໄນພັນດີບາງໂຕໃນໂລກນີ້ ຯລຯ
໓. ມ້າອາຊາໄນພັນດີບາງໂຕໃນໂລກນີ້ສົມບູນດ້ວຍກຳລັງແລ່ນ ສົມບູນດ້ວຍສີ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່

ພິກຂຸທັງຫຼາຍ ມ້າອາຊາໄນພັນດີ ໒ ຈຳພວກນີ້ແລ

ບຸຣຸດອາຊາໄນຜູ້ຈະເລີນ ໒ ຈຳພວກ ພວກໃດແດ່ ຄື

໑. ບຸຣຸດອາຊາໄນຜູ້ຈະເລີນລາງຄົນໃນໂລກນີ້ ຯລຯ
໒. ບຸຣຸດອາຊາໄນຜູ້ຈະເລີນລາງຄົນໃນໂລກນີ້ສົມບູນດ້ວຍເຊົາສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ຯລຯ

ບຸຣຸດອາຊາໄນຜູ້ຈະເລີນ ສົມບູນດ້ວຍເຊົາສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນ ອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ເຮົາກ່າວວ່ານີ້ເປັນເຊົາຂອງເຂົາ ເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນ ກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່ານີ້ເປັນວັນນະຂອງເຂົາ ເຂົາໄດ້ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່ານີ້ເປັນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ບຸຣຸດອາຊາໄນຜູ້ຈະເລີນ ສົມບູນດ້ວຍເຊົາສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸຣຸດອາຊາໄນຜູ້ຈະເລີນ ໒ ຈຳພວກນີ້ແລ

**ອັດສາຊານີຍະສູດທີ ໑໐ ຈົບ**

## ໑໑. ປະຖົມໂມຣະນິວາປະສູດ

### ວ່າດ້ວຍອາຣາມປະຣິພາຊົກຊື່ໂມຣະນິວາປະສູດທີ ໑

[໑໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປະນິພາຊະກາຣາມ ຊື່ ໂມຣະນິວາປະ ເຂດນະຄອນຣາດຊະຄຶ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๓ ປະການຍ່ອມມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນລຸລ່ວງເຖິງບ່ອນສຸດ ແລະເຖິງບ່ອນສຸດແຫ່ງບ່ອນສຸດປະເສີດກວ່າເທວະດາ ແລະມະນຸດທັງຫຼາຍ

ທຳ ๓ ປະການ ອັນໃດແດ່ ຄື

໑. ສີນຂັນ (ກອງສີນ) ທີ່ເປັນຂອງພຣະອະເສຂະ
໒. ສະມາທິຂັນ (ກອງສະມາທິ) ທີ່ເປັນຂອງພຣະອະເສຂະ
๓. ປັນຍາຂັນ (ກອງປັນຍາ) ທີ່ເປັນຂອງພຣະອະເສຂະ

ພິກຂຸປະກອບດ້ວຍທຳ ๓ ປະການນີ້ ຍ່ອມມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນລຸລ່ວງເຖິງບ່ອນສຸດ ແລະເຖິງບ່ອນສຸດແຫ່ງບ່ອນສຸດ ປະເສີດກວ່າ ເທວະດາແລະມະນຸດທັງຫຼາຍ

**ປະຖົມໂມຣະນີວາປະສູດ ທີ ໑໑ ຈົບ**

# ໑໒. ທຸຕິຍະໂມຣະນີວາປະສູດ

## ວ່າດ້ວຍອາຮາມປະຣິພາຊົກຊື່ໂມຣະນີວາປະສູດທີ ໒

[໑໔๕] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๓ ປະການຍ່ອມມີຄວາມສຳເລັດສູງສຸດມີຄວາມກະເສມສູງສຸດ ປະພຶດພົມມະຈັນລຸລ່ວງເຖິງບ່ອນສຸດ ແລະເຖິງບ່ອນສຸດແຫ່ງບ່ອນສຸດປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ທຳ ๓ ປະການ ອັນໃດແດ່ ຄື

໑. ອິດທິປາຕິຫານ (ປາຕິຫານຄືລິດ)
໒. ອາເທສະນາປາຕິຫານ (ປາຕິຫານຄືການທາຍໃຈ)
๓. ອະນຸສາສະນີປາຕິຫານ (ປາຕິຫານຄືອະນຸສາສະນີ)

ພິກຂຸປະກອບດ້ວຍທຳ ๓ ປະການນີ້ ຍ່ອມມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນລຸລ່ວງເຖິງບ່ອນສຸດ ແລະເຖິງບ່ອນສຸດແຫ່ງບ່ອນສຸດປະເສີດກວ່າ ເທວະດາແລະມະນຸດທັງຫຼາຍ

**ທຸຕິຍະໂມຣະນີວາປະສູດທີ ໑໒ ຈົບ**

# ໑໓. ຕະຕິຍະໂມຣະນິວາປະສູດ

## ວ່າດ້ວຍອາຣາມປະຣິພາຊົກຊື່ໂມຣະນິວາປະສູດທີ ໓

[໑໔໖] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການຍ່ອມມີຄວາມສຳເລັດສູງສຸດມີຄວາມກະເສມສູງສຸດ ປະພຶດພົມມະຈັນລຸລ່ວງເຖິງບ່ອນສຸດ ແລະເຖິງບ່ອນສຸດແຫ່ງບ່ອນສຸດປະເສີດກວ່າເທວະດາ ແລະມະນຸດທັງຫຼາຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາຍານະ (ຮູ້ຖືກ)
໓. ສຳມາວິມຸດຕິ (ລຸດພົ້ນຖືກ)

ພິກຂຸປະກອບດ້ວຍທຳ ໓ ປະການນີ້ ຍ່ອມມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນລຸລ່ວງເຖິງບ່ອນສຸດ ແລະເຖິງບ່ອນສຸດແຫ່ງບ່ອນສຸດ ປະເສີດກວ່າ ເທວະດາແລະມະນຸດທັງຫຼາຍ

**ຕະຕິຍະໂມຣະນິວາປະສູດທີ ໑໓ ຈົບ**

**ໂຍທາຊີວະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

# ໕. ມັງຄະລະວັກ

## ໝວດວ່າດ້ວຍມຸງຄຸນ

## ໑. ອະກຸສົນລະສູດ

### ວ່າດ້ວຍອະກຸສົນກຳເປັນເຫດໃຫ້ຕົກນະຣົກ

[໑໔໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳ (ການກະທຳທາງກາຍ) ຝ່າຍອະກຸສົນ
໒. ວະຈີກຳ (ການກະທຳທາງວາຈາ) ຝ່າຍອະກຸສົນ
໓. ມະໂນກຳ (ການກະທຳທາງໃຈ) ຝ່າຍອະກຸສົນ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການນີ້ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ບຸກຄົນປະກອບດ້ວຍທຳ ໓ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳຝ່າຍກຸສົນ
໒. ວະຈີກຳຝ່າຍກຸສົນ
໓. ມະໂນກຳຝ່າຍກຸສົນ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອະກຸສົນລະສູດ ທີ ໑ ຈົບ**

## ໒. ສາວັດຊະສູດ

## ວ່າດ້ວຍກຳທີ່ມີໂທດເປັນເຫດໃຫ້ຕົກນະຮົກ

[໑໘໗] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ຯລຯ

໑. ກາຍຍະກຳ ທີ່ມີໂທດ
໒. ວະຈີກຳ ທີ່ມີໂທດ
໓. ມະໂນກຳ ທີ່ມີໂທດ

ຯລຯ

໑. ກາຍຍະກຳ ທີ່ບໍ່ມີໂທດ
໒. ວະຈີກຳ ທີ່ບໍ່ມີໂທດ
໓. ມະໂນກຳ ທີ່ບໍ່ມີໂທດ

ຯລຯ

**ສາວັດຊະສູດ ທີ ໒ ຈົບ**

## ໓. ວິສະມະສູດ

## ວ່າດ້ວຍກຳທີ່ບໍ່ສະໝ່ຳສະເໝີເປັນເຫດໃຫ້ຕົກນະຮົກ

[໑໘໘] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ຯລຯ

໑. ກາຍຍະກຳ ທີ່ບໍ່ສະໝ່ຳສະເໝີ
໒. ວະຈີກຳ ທີ່ບໍ່ສະໝ່ຳສະເໝີ
໓. ມະໂນກຳ ທີ່ບໍ່ສະໝ່ຳສະເໝີ

ຯລຯ

໑. ກາຍຍະກຳ ທີ່ສະໝ່ຳສະເໝີ
໒. ວະຈີກຳ ທີ່ສະໝ່ຳສະເໝີ
໓. ມະໂນກຳ ທີ່ສະໝ່ຳສະເໝີ

ຯລຯ

**ວິສະມະສູດ ທີ ໓ ຈົບ**

## ໔. ອະສຸຈິສູດ

## ວ່າດ້ວຍກຳທີ່ບໍ່ສະອາດເປັນເຫດໃຫ້ຕົກນະຮົກ

[໑໕໐] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ຯລຯ

໑. ກາຍຍະກຳ ທີ່ບໍ່ສະອາດ
໒. ວະຈີກຳ ທີ່ບໍ່ສະອາດ
໓. ມະໂນກຳ ທີ່ບໍ່ສະອາດ

ຯລຯ

໑. ກາຍຍະກຳ ທີ່ສະອາດ
໒. ວະຈີກຳ ທີ່ສະອາດ
໓. ມະໂນກຳ ທີ່ສະອາດ

ບຸກຄົນປະກອບດ້ວຍທຳ ໓ ປະການນີ້ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອະສຸຈິສູດ ທີ ໔ ຈົບ**

## ໕. ປະຖົມຂະຕະສູດ

## ວ່າດ້ວຍເຫດໃຫ້ຕົນຖືກທຳລາຍສູດທີ ໑

[໑໕໑] ພິກຂຸທັງຫຼາຍ ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໓ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳຝ່າຍອະກຸສົນ
໒. ວະຈີກຳຝ່າຍອະກຸສົນ
໓. ມະໂນກຳຝ່າຍອະກຸສົນ

ຄົນພານຜູ້ບໍ່ແຫຼມຄົມ ເປັນອະສັດຕະບຸຣຸດ ປະກອບດ້ວຍທຳ ໓ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ ມີຄວາມເສຍຫາຍ ຖືກຜູ້ຮູ້ຕິຕຽນ ແລະປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ໓ ປະການ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ກາຍຍະກຳ ຝ່າຍກຸສົນ
໒. ວະຈີກຳ ຝ່າຍກຸສົນ
໓. ມະໂນກຳ ຝ່າຍກຸສົນ

ຯລຯ

**ປະຖົມຂະຕະສູດ ທີ ໕ ຈົບ**

## ໖. ທຸຕິຍະຂະຕະສູດ

## ວ່າດ້ວຍເຫດໃຫ້ຕົນຖືກທຳລາຍ ສູດ ທີ ໒

[໑໕໒] ພິກຂຸທັງຫຼາຍ ຜູ້ປະກອບດ້ວຍທຳ ໓ ປະການ ຯລຯ

໑. ກາຍຍະກຳ ທີ່ມີໂທດ
໒. ວະຈີກຳ ທີ່ມີໂທດ
໓. ມະໂນກຳ ທີ່ມີໂທດ

ຯລຯ

໑ ກາຍຍະກຳ ທີ່ບໍ່ມີໂທດ
໒. ວະຈີກຳ ທີ່ບໍ່ມີໂທດ
໓. ມະໂນກຳ ທີ່ບໍ່ມີໂທດ

ຯລຯ

**ທຸຕິຍະຂະຕະສູດທີ ໖ ຈົບ**

# ໗. ຕະຕິຍະຂະຕະສູດ

## ວ່າດ້ວຍເຫດໃຫ້ຕົນຖືກທຳລາຍ ສູດທີ ໓

[໑໕໓] ພິກຂຸທັງຫຼາຍ ຜູ້ປະກອບດ້ວຍທຳ ໓ ປະການ ຯລຯ

໑. ກາຍຍະກຳ ທີ່ບໍ່ສະໝ່ຳສະເໝີ
໒. ວະຈີກຳ ທີ່ບໍ່ສະໝ່ຳສະເໝີ
໓. ມະໂນກຳ ທີ່ບໍ່ສະໝ່ຳສະເໝີ

ຯລຯ

໑. ກາຍຍະກຳ ທີ່ສະໝ່ຳສະເໝີ
໒. ວະຈີກຳ ທີ່ສະໝ່ຳສະເໝີ
໓. ມະໂນກຳ ທີ່ສະໝ່ຳສະເໝີ

ຯລຯ

**ຕະຕິຍະຂະຕະສູດ ທີ ໗ ຈົບ**

# ໘. ຈະຕຸດຖະຂະຕະສູດ

## ວ່າດ້ວຍເຫດໃຫ້ຕົນຖືກທຳລາຍສູດທີ ໔

[໑໕໔] ພິກຂຸທັງຫຼາຍ ຜູ້ປະກອບດ້ວຍທຳ ໓ ປະການ ຯລຯ

໑. ກາຍຍະກຳ ທີ່ບໍ່ສະອາດ
໒. ວະຈີກຳ ທີ່ບໍ່ສະອາດ
໓. ມະໂນກຳ ທີ່ບໍ່ສະອາດ

ຯລຯ

໑. ກາຍຍະກຳ ທີ່ສະອາດ
໒. ວະຈີກຳ ທີ່ສະອາດ
໓. ມະໂນກຳ ທີ່ສະອາດ

ບັນດິດຜູ້ແຫຼມຄົມ ເປັນສັດຕະບຸຣຸດ ປະກອບດ້ວຍທຳ ៣ ປະການນີ້ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ ບໍ່ມີຄວາມເສຍຫາຍ ບໍ່ຖືກຜູ້ຮູ້ຕິຕຽນ ແລະປະສົບບຸນຫຼວງຫຼາຍ

**ຈະຕຸດຖະຂະຕະສູດທີ ៨ ຈົບ**

## ៩. ວັນທະນາສູດ

## ວ່າດ້ວຍການໄຫວ້

[១៥៥] ພິກຂຸທັງຫຼາຍ ການໄຫວ້ ៣ ປະການນີ້

ການໄຫວ້ ៣ ປະການ ອັນໃດແດ່ ຄື

១. ການໄຫວ້ທາງ ກາຍ
២. ການໄຫວ້ທາງ ວາຈາ
៣. ການໄຫວ້ທາງ ໃຈ

ພິກຂຸທັງຫຼາຍ ການໄຫວ້ ៣ ປະການນີ້ແລ

ວັນທະນາສູດທີ ៩ ຈົບ

## ១០. ປຸບພັນຫະສູດ

## ວ່າດ້ວຍເວລາເຊົ້າເປັນເລີກດີເປັນຕົ້ນ

[១៥៦] ພິກຂຸທັງຫຼາຍ ສັດເຫຼົ່າໃດ ປະພຶດກາຍສຸດຈະຣິດ (ຄວາມປະພຶດຖືກດ້ວຍກາຍ) ວະຈີສຸດຈະຣິດ (ຄວາມປະພຶດຖືກດ້ວຍວາຈາ) ແລະມະໂນສຸດຈະຣິດ (ຄວາມປະພຶດຖືກດ້ວຍໃຈ) ໃນເວລາເຊົ້າ ເວລາເຊົ້າກໍເປັນເວລາທີ່ດີຂອງສັດເຫຼົ່ານັ້ນ

ສັດເຫຼົ່າໃດ ປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ໃນເວລາທ່ຽງເວລາ ທ່ຽງກໍເປັນເວລາທີ່ດີຂອງສັດເຫຼົ່ານັ້ນ

ພິກຂຸທັງຫຼາຍ ສັດເຫຼົ່າໃດ ປະພຶດກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ໃນເວລາຄ່ຳ ເວລາຄ່ຳກໍເປັນເວລາທີ່ດີຂອງສັດເຫຼົ່ານັ້ນ

ສັດທັງຫຼາຍ ປະພຶດຖືກໃນເວລາໃດ
ເວລານັ້ນຊື່ວ່າເປັນເລີກດີ ມຸງຄຸນດີ ສະຫວ່າງດີ ຮຸ່ງດີ
ຂະນະດີ ຍາມດີ ແລະບູຊາດີໃນພົມມະຈາຣີບຸກຄົນ
ກາຍຍະກຳເປັນສ່ວນເບື້ອງຂວາ ວະຈີກຳເປັນສ່ວນເບື້ອງຂວາ
ມະໂນກຳເປັນສ່ວນເບື້ອງຂວາ
ຄວາມປາຖະໜາຂອງທ່ານເປັນສ່ວນເບື້ອງຂວາ
ສັດທັງຫຼາຍເຮັດກຳອັນເປັນສ່ວນເບື້ອງຂວາແລ້ວ
ຍ່ອມໄດ້ປະໂຫຍດອັນເປັນສ່ວນເບື້ອງຂວາ

ທ່ານເຫຼົ່ານັ້ນໄດ້ປະໂຫຍດແລ້ວ ຈຶ່ງໄດ້ຮັບຄວາມສຸກ
ງອກງາມໃນພຸດທະສາດສະໜາ ຈົ່ງບໍ່ມີພະຍາດ
ເຖິງຄວາມສຸກພ້ອມດ້ວຍຍາດທັງມວນ

**ປຸບພັນຫະສູດທີ ໑໐ ຈົບ**

**ມັງຄະລະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື



**ຕະຕິຍະປັນນາດ ຈົບບໍລິບູນ**

# ๖. ອະເຈລະກະວັກ

## ໝວດວ່າດ້ວຍຄົນເປືອຍ

## ວ່າດ້ວຍປະຕິປະທາ ໓ ຢ່າງ

[໑໕໗-໑໖໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ປະຕິປະທາ ໓ ປະການ

ປະຕິປະທາ ໓ ປະການ ອັນໃດແດ່ ຄື

໑. ປະຕິປະທາແນວ ຫຍາບ
໒. ປະຕິປະທາແນວ ຫ້ຽມຫານ
໓. ປະຕິປະທາແນວ ປານກາງ

ປະຕິປະທາແນວຫຍາບ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ມີວາທະແນວນີ້ມີທິດຖິແນວນີ້ວ່າ "ໂທດໃນກາມທັງຫຼາຍບໍ່ມີ" ເຂົາຍ່ອມຕົກເປັນເຫຍື່ອໃນກາມທັງຫຼາຍ

ພິກຂຸທັງຫຼາຍ ນີ້ຮຽກວ່າ ປະຕິປະທາແນວຫຍາບ

ປະຕິປະທາແນວຫ້ຽມຫານ ເປັນແນວໃດ?

ຄື ຄົນເປືອຍລາງຄົນໃນໂລກນີ້ຂາດມາຣະຍາດ ເລຍມື ເຂົາເຊີນໃຫ້ມາຮັບພິກສາກໍບໍ່ມາ ເຂົາເຊີນໃຫ້ຢຸດກໍບໍ່ຢຸດ ບໍ່ຮັບພິກສາທີ່ເຂົາແບ່ງໄວ້ກ່ອນ ບໍ່ຮັບພິກສາທີ່ເຂົາເຈາະຈົງເຮັດໄວ້ ບໍ່ຍິນດີກິດນິມົນ ບໍ່ຮັບພິກສາປາກໝໍ້ ບໍ່ຮັບພິກສາຈາກກະເຊົ້າ ບໍ່ຮັບພິກສາກວມທໍຣະນີປະຕູ ບໍ່ຮັບພິກສາກວມຖ່ອນໄມ້ ບໍ່ຮັບພິກສາກວມສາກ ບໍ່ຮັບພິກສາທີ່ຄົນສອງຄົນບໍຣິໂພກຢູ່ ບໍ່ຮັບພິກສາຂອງຍິງຖືພາ ບໍ່ຮັບພິກສາຂອງຍິງທີ່ກຳລັງໃຫ້ລູກດູດນົມ ບໍ່ຮັບພິກສາຂອງຍິງທີ່ກ້ຽວພາຄົນ ບໍ່ຮັບພິກສາທີ່ນັດແນະກັນເຮັດໄວ້ ບໍ່ຮັບພິກສາໃນບ່ອນທີ່ຮັບລ້ຽງໝານ້ອຍ ບໍ່ຮັບພິກສາໃນບ່ອນແມງວັນໄຕ່ຕອມເປັນກຸ່ມ ບໍ່ຮັບປາ ບໍ່ຮັບຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມນ້ຳໝັກດອງ ເຂົາຮັບພິກສາສະເພາະທີ່ເຮືອນຫຼັງດຽວ ຢຽວຢາອັດຕະພາບດ້ວຍເຂົ້າຄຳດຽວ ຮັບພິກສາທີ່ເຮືອນ ໒ ຫຼັງ ບຳລຸງ ອັດຕະພາບດ້ວຍເຂົ້າ ໒ ຄຳ ຯລຯ ຫຼືຮັບພິກສາທີ່ເຮືອນ ໗ ຫຼັງ ບຳລຸງອັດຕະພາບດ້ວຍເຂົ້າ ໗ ຄຳ ບຳລຸງອັດຕະພາບ ດ້ວຍພິກສາໃນຖາດນ້ອຍໃບດຽວແດ່ ບຳລຸງອັດຕະພາບດ້ວຍພິກສາໃນຖາດນ້ອຍ ໒ ໃບແດ່ ຯລຯ ບຳລຸງອັດຕະພາບດ້ວຍພິກສາໃນຖາດນ້ອຍ ໗

ໃບແດ່ ກິນອາຫານທີ່ເກັບຄ້າງໄວ້ມື້ດຽວແດ່ ກິນອາຫານທີ່ເກັບຄ້າງໄວ້ ៨ ມື້ແດ່ ฯລฯ ກິນອາຫານທີ່ເກັບຄ້າງໄວ້ເຈັດມື້ແດ່ ເຂົາໝັ່ນປະກອບໃນການບໍຣິໂພກທີ່ວຽນມາເຄິ່ງເດືອນແນວນີ້ຢູ່

ຄົນເປືອຍນັ້ນ ກິນສົ້ມຜັກເປັນອາຫານແດ່ ກິນເຂົ້າຟ່າງເປັນອາຫານແດ່ ກິນໝາກເດືອຍເປັນອາຫານແດ່ ກິນກາກເຂົ້າເປັນອາຫານແດ່ ກິນຢາງ°ເປັນອາຫານແດ່ ກິນຮໍາເປັນອາຫານແດ່ ກິນເຂົ້າກົ້ນໝໍ້ເປັນອາຫານແດ່ ກິນກໍາຍານເປັນອາຫານແດ່ ກິນຫຍ້າເປັນອາຫານແດ່ ກິນມູນງົວເປັນອາຫານແດ່ ກິນເຫງົ້າແລະໝາກໄມ້ໃນປ່າເປັນອາຫານແດ່ ກິນໝາກໄມ້ທີ່ຫຼົ່ນບໍາລຸງອັດຕະພາບ ເຂົານຸ່ງຫົ່ມຜ້າປ່ານແດ່ ນຸ່ງຫົ່ມຜ້າແກມກັນແດ່ ນຸ່ງຫົ່ມຜ້າຫໍ່ສົບແດ່ ນຸ່ງຫົ່ມຜ້າບັງສຸກຸນແດ່ ນຸ່ງຫົ່ມຜ້າເປືອກໄມ້ແດ່ ນຸ່ງຫົ່ມໜັງເສືອແດ່ ນຸ່ງຫົ່ມໜັງເສືອທີ່ມີເລັບຕິດຢູ່ແດ່ ນຸ່ງຫົ່ມຄາກອງແດ່ ນຸ່ງຫົ່ມຜ້າເປືອກປໍກອງແດ່ ນຸ່ງຫົ່ມຜ້າໝາກກອງແດ່ ນຸ່ງຫົ່ມຜ້າກໍາພົນເຮັດດ້ວຍຜົມຄົນແດ່ ນຸ່ງຫົ່ມຜ້າກໍາພົນເຮັດດ້ວຍຂົນສັດຮ້າຍແດ່ ນຸ່ງຫົ່ມຜ້າເຮັດດ້ວຍຂົນປີກນົກເຄົ້າແດ່ ລົກຜົມແລະໜວດໝັ່ນປະກອບການລົກຜົມແລະໜວດແດ່ ຢືນຢ່າງດຽວປະຕິເສດການນັ່ງແດ່ ນັ່ງຢ່ອງຢໍ້ ປະກອບຄວາມພຽນດ້ວຍການນັ່ງຢ່ອງຢໍ້ແດ່ ນອນເທິງໜາມ ສໍາເລັດການນອນເທິງໜາມແດ່ ອາບນໍ້າມື້ລະ ៣ ເທື່ອ ໝັ່ນປະກອບການລົງນໍ້າແດ່ ເຂົາໝັ່ນປະກອບການເຮັດຮ່າງກາຍ ໃຫ້ເດືອດຮ້ອນຫຼາຍວິທີດັ່ງກ່າວມານີ້ຢູ່

ພິກຂຸທັງຫຼາຍ ນີ້ຮຽກວ່າ ປະຕິປະທາແນວຫ້ຽມຫານ

(໑. ສະຕິປັດຖານສູດ)

ປະຕິປະທາແນວກາງ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ພິຈາລະນາເຫັນກາຍໃນກາຍ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນເວທະນາໃນເວທະນາ ฯລฯ ພິຈາລະນາ ເຫັນຈິດໃນຈິດ ฯລฯ ພິຈາລະນາເຫັນທໍາໃນທໍາ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ

ກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ປະຕິປະທາແນວກາງ

ພິກຂຸທັງຫຼາຍ ປະຕິປະທາ ៣ ປະການນີ້ແລ

## (៨. ສໍາມັບປະທານສູດ)

ພິກຂຸທັງຫຼາຍ ປະຕິປະທາ ៣ ປະການນີ້

ປະຕິປະທາ ໓ ປະການ ອັນໃດແດ່ ຄື

໑. ປະຕິປະທາແນວ ຫຍາບ
໒. ປະຕິປະທາແນວ ຫຸ້ງມຫານ
໓. ປະຕິປະທາແນວ ກາງ

ປະຕິປະທາແນວຫຍາບ ເປັນແນວໃດ?

ຯລຯ ນີ້ຮຽກວ່າ ປະຕິປະທາແນວຫຍາບ

ປະຕິປະທາແນວຫຸ້ງມຫານ ເປັນແນວໃດ?

ຯລຯ ນີ້ຮຽກວ່າ ປະຕິປະທາແນວຫຸ້ງມຫານ

ປະຕິປະທາແນວກາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ໌ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດແລ້ວ ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ສ້າງສັນທະພະຍາຍາມຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

## (໓. ອິດທິປາທະສູດ)

ພິກຂຸນັ້ນ ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກສັນທະແລະຄວາມພຽນສ້າງສັນ) ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິຣິຍະແລະຄວາມພຽນສ້າງສັນ) ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກຈິດຕະແລະຄວາມພຽນສ້າງສັນ) ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາແລະຄວາມພຽນສ້າງສັນ) ຯລຯ

## (໔. ອິນທະຣິຍະສູດ)

ຈະເລີນສັດທິນຊີ ຈະເລີນວິຣິຍິນຊີ ຈະເລີນສະຕິນຊີ ຈະເລີນສະມາທິນຊີ ຈະເລີນປັນຍິນຊີ ຯລຯ

## (៥. ພະລະສູດ)

ຈະເລີນສັດທາພະລະ ຈະເລີນວິຣິຍະພະລະ ຈະເລີນສະຕິພະລະ ຈະເລີນສະມາທິພະລະ ຈະເລີນປັນຍາພະລະ ໆລໆ

## (៧. ສຳໂພດຊັງຄະສູດ)

ຈະເລີນສະຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມຣະນຶກໄດ້) ຈະເລີນທຳມະວິຈະຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມເຟັ້ນທຳ) ຈະເລີນວິຣິຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ) ຈະເລີນປີຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມອີ່ມໃຈ) ຈະເລີນປັດສັດທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມສະງົບກາຍສະງົບໃຈ) ຈະເລີນສະມາທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ) ຈະເລີນອຸເປກຂາສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມວາງໃຈເປັນກາງ) ໆລໆ

## (໗. ມັກຄະສູດ)

ຈະເລີນສຳມາທິດຖິ (ເຫັນຖືກ) ຈະເລີນສຳມາສັງກັບປະ (ຄິດຖືກ) ຈະເລີນສຳມາວາຈາ (ເຈຣະຈາຖືກ) ຈະເລີນສຳມາກຳມັນຕະ (ການງານຖືກ) ຈະເລີນສຳມາອາຊີວະ (ລ້ຽງຊີວິດຖືກ) ຈະເລີນສຳມາວາຍາມະ (ພະຍາຍາມຖືກ) ຈະເລີນສຳມາສະຕິ (ຣະນຶກຖືກ) ຈະເລີນສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

ພິກຂຸທັງຫຼາຍ ນີ້ຮຽກວ່າ ປະຕິປະທາແນວກາງ

ພິກຂຸທັງຫຼາຍ ປະຕິປະທາ ៣ ປະການນີ້ແລ

**ອະເຈລະກະວັກທີ ៧ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ຄື

໑. ສະຕິປັດຖານສູດ
៣. ອິດທິປາທະສູດ
៥. ພະລະສູດ
໗. ມັກຄະສູດ
໔. ສຳມັບປະທານສູດ
໖. ອິນທະຣິຍະສູດ
៧. ສຳໂພດຊັງຄະສູດ

# ໗. ກຳມະປະຖະເປີຍຍາລະ

## ວ່າດ້ວຍທຳ ໓ ປະການມີຫຼາຍໄນ

### (໑. ປານະ - ອະປານະສູດ)

[໑໖໔-໑໗໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ທຳ ໓ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ
໔. ຊັກຊວນຜູ້ອື່ນໃຫ້ຂ້າສັດ
໓. ເປັນຜູ້ພໍໃຈການຂ້າສັດ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການນີ້ ຍ່ອມດຳລົງຢູ່ໃນນະຣົກຄືຖືກນຳໄປຝັງໄວ້

ບຸກຄົນຜູ້ປະກອບດ້ວຍທຳ ໓ ປະການ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໓ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ
໔. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການຂ້າສັດ

ຯລຯ

### (໔. ອະທິນນາທານ - ອະນະທິນນາທານະສູດ)

໑. ຕົນເອງເປັນຜູ້ລັກຊັບ
໔. ຊັກຊວນຜູ້ອື່ນໃຫ້ລັກຊັບ
໓. ເປັນຜູ້ພໍໃຈການລັກຊັບ

ຯລຯ

໑. ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບ

໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການລັກຊັບ

ฯลฯ

## (໓. ມິດສາ - ສໍາມາສູດ)

໑. ຕົນເອງເປັນຜູ້ປະພຶດຜິດໃນກາມ
໒. ຊັກຊວນຜູ້ອື່ນໃຫ້ປະພຶດຜິດໃນກາມ
໓. ເປັນຜູ້ພໍໃຈການປະພຶດຜິດໃນກາມ

ฯลฯ

໑. ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການປະພຶດຜິດໃນກາມ

ฯลฯ

## (໔. ມຸສາວາທີ - ອະມຸສາວາທີສູດ)

໑. ຕົນເອງເປັນຜູ້ເວົ້າຕົວະ
໒. ຊັກຊວນຜູ້ອື່ນໃຫ້ເວົ້າຕົວະ
໓. ເປັນຜູ້ພໍໃຈການເວົ້າຕົວະ

ฯลฯ

໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າຕົວະ

ฯลฯ

## (໕. ປິສຸນາ - ອະປິສຸນາສູດ)

໑. ຕົນເອງເປັນຜູ້ເວົ້າສັບສໍ່
໒. ຊັກຊວນຜູ້ອື່ນໃຫ້ເວົ້າສັບສໍ່
໓. ເປັນຜູ້ພໍໃຈການເວົ້າສັບສໍ່

ຯລຯ

໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າສັບສໍ່
໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າສັບສໍ່

ຯລຯ

## (໖. ຜະຣຸສະ - ອະຜະຣຸສະສູດ)

໑. ຕົນເອງເປັນຜູ້ເວົ້າຄໍາຫຍາບ
໒. ຊັກຊວນຜູ້ອື່ນໃຫ້ເວົ້າຄໍາຫຍາບ
໓. ເປັນຜູ້ພໍໃຈການເວົ້າຄໍາຫຍາບ

ຯລຯ

໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຄໍາຫຍາບ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຄໍາຫຍາບ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າຄໍາຫຍາບ

ຯລຯ

## (໗. ສໍາຜັບປະລາປະ - ອະສໍາຜັບປະລາປະສູດ)

໑. ຕົນເອງເປັນຜູ້ເວົ້າບໍ່ມີສາຣະ
໒. ຊັກຊວນຜູ້ອື່ນໃຫ້ເວົ້າບໍ່ມີສາຣະ
໓. ເປັນຜູ້ພໍໃຈການເວົ້າບໍ່ມີສາຣະ

ຯລຯ

໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າບໍ່ມີສາຣະ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າບໍ່ມີສາຣະ

ຯລຯ

## (໘. ອະພິດຊາ - ອະນະພິດຊາສູດ)

໑. ຕົນເອງເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ

໒. ຊັກຊວນຜູ້ອື່ນໃຫ້ເພ່ງເລັງຍາກໄດ້ຂອງເຂົາ
໓. ເປັນຜູ້ພໍໃຈຄວາມເພ່ງເລັງຍາກໄດ້ຂອງເຂົາ

ຯລຯ

໑. ຕົນເອງເປັນຜູ້ບໍ່ເພ່ງເລັງຍາກໄດ້ຂອງເຂົາ
໒. ຊັກຊວນຜູ້ອື່ນໃຫ້ບໍ່ເພ່ງເລັງຍາກໄດ້ຂອງເຂົາ
໓. ເປັນຜູ້ພໍໃຈຄວາມບໍ່ເພ່ງເລັງຍາກໄດ້ຂອງເຂົາ

ຯລຯ

## (໙. ພະຍາປາທະ - ອັບພະຍາປາທະສູດ)

໑. ຕົນເອງເປັນຜູ້ມີຈິດພະຍາບາດ
໒. ຊັກຊວນຜູ້ອື່ນໃຫ້ມີຈິດພະຍາບາດ
໓. ເປັນຜູ້ພໍໃຈຄວາມມີຈິດພະຍາບາດ

ຯລຯ

໑. ຕົນເອງເປັນຜູ້ມີຈິດບໍ່ພະຍາບາດ
໒. ຊັກຊວນຜູ້ອື່ນໃຫ້ມີຈິດບໍ່ພະຍາບາດ
໓. ເປັນຜູ້ພໍໃຈຄວາມມີຈິດບໍ່ພະຍາບາດ

ຯລຯ

## (໑໐. ມິດສາທິດຖິ - ສໍາມາທິດຖິສູດ)

໑. ຕົນເອງເປັນມິດສາທິດຖິ
໒. ຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ
໓. ເປັນຜູ້ພໍໃຈຄວາມເປັນມິດສາທິດຖິ

ຯລຯ

໑. ຕົນເອງເປັນສໍາມາທິດຖິ
໒. ຊັກຊວນຜູ້ອື່ນໃຫ້ເປັນສໍາມາທິດຖິ
໓. ເປັນຜູ້ພໍໃຈຄວາມເປັນສໍາມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓ ປະການນີ້ ຍ່ອມດຳລົງຢູ່ໃນ

ສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ກຳມະປະຖະເປັຍຍາລະທີ ໗ ຈົບ**

## ລວມພຣະສູດທີ່ມີໃນເປັຍຍາລະນີ້ຄື

໑. ປານະ-ອະປານະສູດ
໒. ອະທິນນາທານ-ອະນະທິນນາທານະສູດ
໓. ມິດສາ-ສຳມາສູດ
໔. ມຸສາວາທີ-ອະມຸສາວາທີສູດ
໕. ປິສຸນາ-ອະປິສຸນາສູດ
໖. ຜະຣຸສະ-ອະຜະຣຸສະສູດ
໗. ສຳຜັບປະລາປະ-ອະສຳຜັບປະລາປະສູດ
໘. ອະພິດຊາ-ອະນະພິດຊາສູດ
໙. ພະຍາປາທະ-ອະພະຍາປາທະສູດ
໑໐. ມິດສາທິດຖິ-ສຳມາທິດຖິສູດ

## ໘. ຣາຄະເປັຍຍາລະ

[໑໘໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໓ ປະການ ເພື່ອຮູ້ຍິ່ງຣາຄະ (ຄວາມກຳໜັດ)

ທຳ ໓ ປະການ ອັນໃດແດ່ ຄື

໑. ສູນຍະຕະສະມາທິ (ສະມາທິພິຈາລະນາເຫັນຄວາມວ່າງ)
໒. ອະນິມິດຕະສະມາທິ (ສະມາທິພິຈາລະນາທຳບໍ່ມີນິມິດ)
໓. ອັບປະນິຫິຕະສະມາທິ (ສະມາທິພິຈາລະນາທຳບໍ່ມີຄວາມຕັ້ງປາຖະໜາ)

ບຸກຄົນຄວນຈະເລີນທຳ ໓ ປະການນີ້ ເພື່ອຮູ້ຍິ່ງຣາຄະ

ບຸກຄົນຄວນຈະເລີນທຳ ໓ ປະການເພື່ອຮູ້ຍິ່ງຣາຄະ

ທຳ ໓ ປະການ ອັນໃດແດ່ ຄື

໑. ສະວິຕັກກະສະວິຈາຣະສະມາທິ (ສະມາທິທີ່ມີວິຕົກວິຈານ)
໒. ອະວິຕັກກະວິຈາຣະມັດຕະສະມາທິ (ສະມາທິທີ່ບໍ່ມີວິຕົກມີພຽງວິຈານ)
໓. ອະວິຕັກກະອະວິຈາຣະສະມາທິ (ສະມາທິທີ່ບໍ່ມີວິຕົກວິຈານ)

ບຸກຄົນຄວນຈະເລີນທຳ ໓ ປະການນີ້ ເພື່ອຮູ້ຍິ່ງຣາຄະ

ເພື່ອກຳນົດຮູ້ຣາຄະ ໆລໆ ເພື່ອຄວາມສິ້ນຣາຄະ ໆລໆ ເພື່ອລະຣາຄະ ໆລໆ ເພື່ອຄວາມສິ້ນໄປແຫ່ງຣາຄະ ໆລໆ ເພື່ອຄວາມເສື່ອມໄປແຫ່ງຣາຄະ ໆລໆ ເພື່ອຄວາມຄາຍອອກແຫ່ງຣາຄະ ໆລໆ ເພື່ອຄວາມດັບໄປແຫ່ງຣາຄະ ໆລໆ ເພື່ອສະລະຣາຄະ ໆລໆ ເພື່ອສະລະຄືນຣາຄະ ບຸກຄົນຄວນຈະເລີນທຳ ໓ ປະການນີ້ ເພື່ອຮູ້ຍິ່ງໂທສະ(ຄວາມຄິດປະທຸດສະຮ້າຍ) ໆລໆ ເພື່ອກຳນົດຮູ້ໂທສະ ໆລໆ ເພື່ອຄວາມສິ້ນໂທສະ ໆລໆ ເພື່ອລະໂທສະ ໆລໆ ເພື່ອຄວາມສິ້ນໄປແຫ່ງໂທສະ ໆລໆ ເພື່ອຄວາມເສື່ອມໄປແຫ່ງໂທສະ ໆລໆ ເພື່ອຄວາມຄາຍອອກແຫ່ງໂທສະ ໆລໆ ເພື່ອຄວາມດັບໄປແຫ່ງໂທສະ ໆລໆ ເພື່ອຄວາມສະລະໂທສະ ໆລໆ ເພື່ອຄວາມສະລະຄືນໂທສະ ໆລໆ ໂມຫະ (ຄວາມຫຼົງ) ໆລໆ ໂກທະ (ຄວາມໂກດ) ໆລໆ ອຸປະນາຫະ (ຄວາມຜູກໂກດ) ໆລໆ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ໆລໆ ປາສະ (ຄວາມຕີສະເໝີ) ໆລໆ ອິດສາ (ຄວາມຣິດສະຫຍາ) ໆລໆ ມັດສະຣິຍະ (ຄວາມຂີ້ຖີ່) ໆລໆ ມາຍາ (ມານຍາ) ໆລໆ ສາເຖີຍຍະ (ຄວາມໂອ້ອວດ) ໆລໆ ຖຳພະ (ຄວາມຫົວດື້) ໆລໆ ສາຣຳພະ (ຄວາມແຂ່ງດີ) ໆລໆ ມານະ (ຄວາມຖືໂຕ) ໆລໆ ອະຕິມານະ (ຄວາມດູໝິ່ນເຂົາ) ໆລໆ ມະທະ (ຄວາມມົວເມົາ) ໆລໆ ປະມາທະ (ຄວາມຜະໝາດ) ໆລໆ

ບຸກຄົນຄວນຈະເລີນທຳ ໓ ປະການນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າ

**ຣາຄະເປີຍຍາລະທີ ໙ ຈົບ**

## ລວມທຳທີ່ມີໃນເປີຍຍາລະນີ້ຄື

| | |
|---|---|
| ໑. ຣາຄະ | ໒. ໂທສະ |
| ໓. ໂມຫະ | ໔. ໂກທະ |
| ໕. ອຸປະນາຫະ | ໖. ມັກຂະ |
| ໗. ປາສະ | ໘. ອິດສາ |
| ໙. ມັດສະຣິຍະ | ໑໐. ມາຍາ |
| ໑໑. ສາເຖີຍຍະ | ໑໒. ຖຳພະ |
| ໑໓. ສາຣຳພະ | ໑໔. ມານະ |
| ໑໕. ອະຕິມານະ | ໑໖. ມະທະ |
| ໑໗. ປະມາທະ | |

ທຳເຫຼົ່ານີ້ ຢູ່ໃນຣາຄະເປີຍຍາລະ ພຣະຜູ້ມີພຣະພາກເຈົ້າຕັດໂດຍຫຽບຄຽງກັບໂອປ້າມະສູດ ຊົງປະສົງທຳ ໑໐ ປະການເຫຼົ່ານີ້ຄື ອະພິນຍາ (ຮູ້ຍິ່ງ) ປະຣິນຍາ (ການກຳນົດຮູ້) ປະຣິກະຂະຍາ (ຄວາມສິ້ນ) ປະຫານະ (ການລະ) ຂະຍະ (ຄວາມສິ້ນໄປ) ວະຍະ (ຄວາມເສື່ອມໄປ) ວິຣາຄະ (ຄວາມຄາຍອອກ) ນິໂຣທະ (ຄວາມດັບໄປ) ຈາຄະ (ຄວາມສະລະ) ປະຕິນິດສັກຄະ (ຄວາມສະລະຄືນ) ແລະຊົງກຳນົດທຳ ໓ ປະການ ຄື (໑) ສູນຍະຕະ (ຄວາມວ່າງ) (໔) ອະນິມິດຕະ (ທຳບໍ່ມີນິມິດ) (໓) ອັບປະນິຫິຕະ (ທຳບໍ່ມີຄວາມຕັ້ງປາຖະໜາ) ມີສະມາທິເປັນມູນແມ່ນໃນເປີຍຍາລະທັງໝົດນີ້ແລ

**ຕິກະນິບາດ ຈົບບໍລິບູນ**